# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໗

# ພຣະວິໄນ

## ເຫຼັ້ມທີ ໗

## ຈູລະວັກ ພາກ ໒



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໗

# ພຣະວິໄນ

## ເຫຼັ້ມທີ ໗

# ຈູລະວັກ ພາກ ໒

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໕. ຂຸດທະກະວັດຖຸຂັນທະກະ

## ຂຸດທະກະວັດຖຸ

### ວ່າດ້ວຍລະບຽບປະຕິບັດເລັກ ໆ ນ້ອຍ ໆ

### ເລື້ອງພຣະສັບພັກຄີອາບນ້ຳຂັດສີກາຍກັບຕົ້ນໄມ້

[໒໔໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ພວກພິກຂຸສັບພັກຄີ໑ອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຕົ້ນໄມ້

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຕົ້ນໄມ້ ຄື ພວກນັກມວຍປ້ຳ ຄືພວກລູກຫຼານຊາວບ້ານນໍ"໒

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງຕຳໜິ ປະນາມ ໂພນທະ

ນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງອາບນ້ຳ ຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຕົ້ນໄມ້ນໍ"

ເມື່ອພິກຂຸທັງຫຼາຍ ຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີອາບນ້ຳຂັດສີກາຍ ຄືຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຕົ້ນໄມ້ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ເອິກແດ່ ຫຼັງແດ່ກັບຕົ້ນໄມ້ນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວລາງພວກກໍຈະກາຍເປັນອື່ນໄປ"

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິພວກພິກຂຸສັບພັກຄີໂດຍປະການຕ່າງ ໆ ແລ້ວໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ມັກຫຼາຍ ບໍ່ສັນໂດດ ຄວາມຄຸກຄີ ຄວາມຂີ້ຄ້ານ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳລຸງງ່າຍ ມັກໜ້ອຍ ສັນໂດດ ຄວາມຂັດເກົາຄວາມກຳຈັດກິເລດ ອາການທີ່ໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຊົງສະແດງທຳມີກະຖາໃຫ້ເໝາະສົມ ໃຫ້ຄ້ອຍຕາມກັບເລື້ອງນັ້ນແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເມື່ອຈະອາບນ້ຳ ບໍ່ເພິ່ງຂັດສີກາຍກັບຕົ້ນໄມ້ ອົງໃດຂັດສີ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີອາບນ້ຳຂັດສີກາຍກັບເສົາ

ສະໄໝນັ້ນ ພວກພິກຂຸສັບພັກຄີອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບເສົາ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະ ເຊື້ອສາຍສາກະຍະບຸດຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບເສົາ ຄືພວກນັກມວຍປ້ຳ ຄືພວກລູກຫຼານຊາວບ້ານນໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ
ບັດແລ້ວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບເສົາ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບເສົານໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເມື່ອຈະອາບນ້ຳ ບໍ່ເພິ່ງຂັດສີກາຍກັບເສົາ ອົງໃດຂັດສີ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີອາບນ້ຳຂັດສີກາຍກັບຝາ

ສະໄໝນັ້ນ ພວກພິກຂຸສັບພັກຄີອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຝາ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະ ເຊື້ອສາຍສາກະຍະບຸດຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຝາ ຄືພວກນັກມວຍປ້ຳ ຄືພວກລູກຫຼານຊາວບ້ານນໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ
ບັດແລ້ວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີອາບນ້ຳ ຂັດ ສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຝາ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງອາບນ້ຳຂັດສີກາຍ ຄື ຂາແດ່ ແຂນແດ່ ເອິກແດ່ ຫຼັງແດ່ກັບຝານໍ ພິກຂຸທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເມື່ອຈະອາບນ້ຳ ບໍ່ເພິ່ງຂັດສີກາຍກັບຝາ ອົງໃດຂັດສີ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີອາບນ້ຳໃນບ່ອນບໍ່ສົມຄວນ

ສະໄໝນັ້ນ ພວກພິກຂຸສັບພັກຄີເມື່ອອາບນ້ຳ ອາບນ້ຳໃນບ່ອນບໍ່ສົມຄວນ[๑] ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກການ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ ບັດແລ້ວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີອາບນ້ຳໃນບ່ອນທີ່ບໍ່ສົມຄວນ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງອາບນ້ຳໃນບ່ອນທີ່ບໍ່ສົມຄວນນໍ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເມື່ອຈະອາບນ້ຳ ບໍ່ເພິ່ງອາບໃນບ່ອນທີ່ບໍ່ສົມຄວນ ອົງໃດອາບ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີໃຊ້ມືທີ່ເຮັດດ້ວຍໄມ້ຫອມຖູກາຍອາບນ້ຳເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີ ໃຊ້ມືທີ່ເຮັດດ້ວຍໄມ້ຫອມຖູກາຍອາບນ້ຳ[๒] ຯລຯ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກການ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ມືທີ່ເຮັດດ້ວຍໄມ້ຫອມຖູກາຍອາບນ້ຳ ອົງໃດໃຊ້ອາບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີອາບນ້ຳໂດຍໃຊ້ເຊືອກຂຸບແປ້ງຜົງສິລາສີຄືພອຍແດງ (ຖູໂຕ) ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງອາບນ້ຳໂດຍໃຊ້ເຊືອກຂຸບແປ້ງຜົງ ສິລາສີຄືພອຍແດງ (ຖູກາຍ) ອົງໃດໃຊ້ອາບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີຕ່າງເຮັດບໍຣິກຳໃຫ້ແກ່ກັນແລະກັນ[๑] ຄົນທັງຫຼາຍຈຶ່ງ ຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຮັດບໍຣິກຳໃຫ້ແກ່ກັນແລະກັນ ອົງໃດເຮັດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ໄມ້ບັງວຽນຈັກເປັນແຂ້ວມັງກອນຖູກາຍອາບນ້ຳ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໄມ້ບັງວຽນຈັກເປັນແຂ້ວມັງກອນຖູກາຍອາບນ້ຳ ອົງໃດຖູ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸເປັນພະຍາດຫິດ

[໔໔໔] ສະໄໝນັ້ນ ພິກຂຸອົງໜຶ່ງເປັນພະຍາດຫິດ ຂາດໄມ້ບັງວຽນຈັກເປັນແຂ້ວມັງກອນຍ່ອມບໍ່ມີຄວາມສະບາຍ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ບັງວຽນທີ່ບໍ່ຈັກເປັນແຂ້ວມັງກອນແກ່ພິກຂຸຜູ້ເປັນໄຂ້"

## ເລື້ອງພິກຂຸທຸບພົນລະພາບຍ້ອນຊະຣາ

ສະໄໝນັ້ນ ພິກຂຸອົງໜຶ່ງທຸບພົນລະພາບຍ້ອນຊະຣາ ເມື່ອອາບນ້ຳ ບໍ່ສາມາດຈະຖູກາຍຕົນໄດ້ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກຽວຜ້າ"

## ຊົງອະນຸຍາດໃຫ້ໃຊ້ມີຖູຫຼັງ

ສະໄໝນັ້ນ ພິກຂຸອົງໜຶ່ງຢ້ຳເກາງທີ່ຈະຖູຫຼັງ ຯລຯ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ມີຖູຫຼັງ"

## ເລື້ອງພຣະສັບພັກຄີໃຊ້ເຄື່ອງປະດັບຊະນິດຕ່າງ ໆ

[໘໕] ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ເຄື່ອງປະດັບຫູ ຯລຯ ໃຊ້ສ້ອຍສັງວານ ຯລຯ ໃຊ້ສ້ອຍຄໍ ຯລຯ ໃຊ້ເຄື່ອງປະດັບແອວ ຯລຯ ໃຊ້ວະໄລ ຯລຯ ໃຊ້ສ້ອຍຕາບ ຯລຯ ໃຊ້ເຄື່ອງປະດັບຂໍ້ມື ຯລຯ ໃຊ້ແຫວນໃສ່ນິ້ວມື ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລິຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ ບັດແລ້ວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີໃຊ້ເຄື່ອງປະດັບຫູ ຯລຯ ໃຊ້ສ້ອຍສັງວານ ຯລຯ ໃຊ້ສ້ອຍຄໍ ຯລຯ ໃຊ້ເຄື່ອງປະດັບແອວ ຯລຯ ໃຊ້ວະໄລ ຯລຯ ໃຊ້ສ້ອຍຕາບ ຯລຯ. ໃຊ້ເຄື່ອງປະດັບຂໍ້ມື ຯລຯ ໃຊ້ແຫວນໃສ່ນິ້ວມື ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"
ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ເຄື່ອງປະດັບຫູ ຯລຯ ບໍ່ເພິ່ງໃຊ້ສ້ອຍສັງວານ ຯລຯ ບໍ່ເພິ່ງໃຊ້ສ້ອຍຄໍ ຯລຯ ບໍ່ເພິ່ງໃຊ້ເຄື່ອງປະດັບແອວ ຯລຯ ບໍ່ເພິ່ງໃຊ້ວະໄລ ຯລຯ ບໍ່ເພິ່ງໃຊ້ສ້ອຍຕາບ ຯລຯ ບໍ່ເພິ່ງໃຊ້ເຄື່ອງປະດັບຂໍ້ມື ຯລຯ ບໍ່ເພິ່ງໃຊ້ແຫວນໃສ່ນິ້ວມື ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີຈິ່ງຜົມຍາວ

[໘໖] ສະໄໝນັ້ນ ພວກພິກຂຸສັບພັກຄີຈິ່ງຜົມຍາວ
ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລິຫັດຜູ້ບໍລິໂພກກາມ" ຯລຯ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຈິ່ງຜົມຍາວ ອົງໃດໄວ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຈິ່ງຜົມຍາວໄດ້ ໒ ເດືອນ ຫຼື ຍາວໄດ້ ໒ ນິ້ວ"

## ເລື້ອງພຣະສັບພັກຄີໃຊ້ແປງຫວີຂ້ານ້ອຍເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ແປງຫວີຜົມ ຯລຯ ໃຊ້ຫວີຫວີຜົມ ຯລຯ ໃຊ້ນິ້ວມື ຕາງຫວີເສີຍຜົມ ຯລຯ ໃຊ້ນ້ຳມັນປະສົມກັບຂີ້ເຜີ້ງເສີຍຜົມ ຯລຯ ໃຊ້ນ້ຳມັນປະສົມກັບນ້ຳ ເສີຍຜົມ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລິຫັດຜູ້ບໍຣິໂພກກາມ" ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ແປງຫວີຜົມ ຯລຯ ບໍ່ເພິ່ງໃຊ້ ຫວີຫວີຜົມ ຯລຯ ບໍ່ເພິ່ງໃຊ້ນິ້ວມືຕາງຫວີເສີຍຜົມ ຯລຯ ບໍ່ເພິ່ງໃຊ້ນ້ຳມັນປະສົມກັບຂີ້ເຜີ້ງເສີຍຜົມ ຯລຯ ບໍ່ເພິ່ງໃຊ້ນ້ຳມັນປະສົມກັບນ້ຳເສີຍຜົມ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີແຍງເບິ່ງເງົາໜ້າ

[໒໔ກ] ສະໄໝນັ້ນ ພວກພິກຂຸສັບພັກຄີແຍງເບິ່ງເງົາໜ້າທີ່ຄັນສ່ອງແດ່ ໃນພາຊະນະໃສ່ນ້ຳແດ່ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລິຫັດຜູ້ບໍຣິໂພກກາມ" ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເບິ່ງເງົາໜ້າທີ່ຄັນສ່ອງຫຼືໃນພາຊະນະໃສ່ນ້ຳ ອົງໃດເບິ່ງ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸເປັນບາດທີ່ໜ້າ

ສະໄໝນັ້ນ ພິກຂຸອົງໜຶ່ງເປັນບາດທີ່ໜ້າ ຖາມພິກຂຸທັງຫຼາຍວ່າ "ບາດຂອງຂ້ານ້ອຍເປັນແນວໃດ? ຂ້ານ້ອຍ" ພິກຂຸທັງຫຼາຍຕອບວ່າ "ເປັນແນວນີ້ ໆ ຂ້ານ້ອຍ" ພິກຂຸນັ້ນບໍ່ເຊື່ອ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍ້ອນອາພາດເປັນປັດໄຈ ເຮົາອະນຸຍາດ ໃຫ້ກວດເບິ່ງຮອຍຕຳໜິເທິງໃບໜ້າທີ່ຄັນສ່ອງຫຼືທີ່ພາຊະນະໃສ່ນ້ຳໄດ້"

## ເລື້ອງພຣະສັບພັກຄີທາໜ້າເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີທາໜ້າ ຯລຯ ຖູໜ້າ ຯລຯ ຜັດໜ້າ ຯລຯ ເຈີມໜ້າດ້ວຍ ມະໂນສິລາ໑ຯລຯ ຍ້ອມໂຕ ຯລຯ ຍ້ອມໜ້າ ຯລຯ ຍ້ອມທັງໂຕແລະໜ້າ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ" ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງທາໜ້າ ຯລຯ ບໍ່ເພິ່ງຖູໜ້າ ຯລຯ ບໍ່ເພິ່ງຜັດໜ້າ ຯລຯ ບໍ່ເພິ່ງເຈີມໜ້າດ້ວຍມະໂນສິລາ ຯລຯ ບໍ່ເພິ່ງຍ້ອມໂຕ ຯລຯ ບໍ່ເພິ່ງຍ້ອມໜ້າ ຯລຯ ບໍ່ເພິ່ງຍ້ອມທັງໂຕແລະໜ້າ ອົງໃດຍ້ອມ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸອາພາດເປັນໂຣກຕາ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນໂຣກຕາ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍ້ອນອາພາດເປັນປັດໄຈ ເຮົາອະນຸຍາດ ໃຫ້ທາໜ້າໄດ້ "

## ເລື້ອງພຣະສັບພັກຄີເບິ່ງມະໂຫລະສົບ

[໔໔໗] ສະໄໝນັ້ນ ມີມະໂຫລະສົບເທິງຈອມພູໃນນະຄອນຣາດຊະຄຶ ພວກພິກຂຸສັບພັກຄີໄປ ທ່ຽວເບິ່ງມະໂຫລະສົບ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການບັນເລງດົນຕີແດ່ ຄືຄະລືຫັດຜູ້ບໍຣິໂພກກາມນໍ" ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໄປເບິ່ງການຟ້ອນລຳ ການຂັບຮ້ອງ ຫຼືການບັນເລງດົນຕີ ອົງໃດໄປເບິ່ງ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີສູດທຳດ້ວຍສຽງຂັບຍາວ

[໔໔໙] ສະໄໝນັ້ນ ພວກພິກຂຸສັບພັກຄີສູດທຳດ້ວຍສຽງຂັບຍາວຄ້າຍເພງຂັບ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງສູດທຳດ້ວຍສຽງຂັບຍາວ ຄືພວກເຮົາຂັບຮ້ອງນໍ" ພິກຂຸທັງຫຼາຍໄດ້ຍິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງສູດທຳດ້ວຍສຽງຂັບຍາວນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີສູດທຳດ້ວຍສຽງຂັບຍາວ ແມ່ນບໍ?" ຯລຯ

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ" ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ສູດທຳດ້ວຍສຽງຂັບຍາວມີໂທດ ໕ ປະການນີ້ ໂທດ ໕ ປະການຄື

໑. ແມ່ນຕົນເອງກໍກຳໜັດໃນສຽງນັ້ນ
໒. ແມ່ນຜູ້ອື່ນກໍກຳໜັດໃນສຽງນັ້ນ
໓. ແມ່ນຄະຫະບໍດີທັງຫຼາຍກໍຕຳໜິ
໔. ເມື່ອພິກຂຸພໍໃຈການເຮັດສຽງ ຄວາມເສື່ອມແຫ່ງສະມາທິຍ່ອມມີ
໕. ພິກຂຸລຸ້ນຫຼັງຈະພາກັນເອົາຢ່າງ

ພິກຂຸທັງຫຼາຍ ພິກຂຸຜູ້ສູດທຳດ້ວຍສຽງຂັບຍາວ ມີໂທດ ໕ ປະການນີ້ແລ◌ໍ
ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກ່າວທຳດ້ວຍສຽງຂັບຍາວ ອົງໃດສູດ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸສູດສໍຣະພັນຍະ

ສະໄໝນັ້ນ ພິກຂຸທັງຫຼາຍຢຳເກງໃນການສູດສໍຣະພັນຍະ

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການສູດເປັນທຳນອງສໍຣະພັນຍະ"

## ເລື້ອງພຣະສັບພັກຄີໃຊ້ຜ້າຫົ່ມຂົນສັດ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ຜ້າຫົ່ມຂົນສັດໃຫ້ດ້ານທີ່ມີຂົນຢູ່ດ້ານນອກ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຜ້າຫົ່ມຂົນສັດໃຫ້ດ້ານທີ່ມີຂົນຢູ່ດ້ານນອກ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີສັນໝາກມ່ວງ

[໔໕໐] ສະໄໝນັ້ນ ໝາກມ່ວງທີ່ພຣະຣາຊະອຸທະຍານຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດ ກຳລັງເປັນໝາກ ພຣະເຈົ້າພິມພິສານຈອມທັບມະຄົດຣັດຊົງອະນຸຍາດວ່າ "ຂໍນິມົນພຣະຜູ້ເປັນເຈົ້າ

ທັງຫຼາຍສັນຜົນໝາກມ່ວງຕາມສະບາຍເທີ້ນ"

ພວກພິກຂຸສັບພັກຄີແໝັ້ນໝາກມ່ວງເລືອກເອົາສະເພາະໜ່ວຍອ່ອນ ໆ ທີ່ນັ້ນມາສັນ

ພຣະເຈົ້າພິມພິສານຈອມທັບມະຄົດຣັດມີພຣະຣາຊະປະສົງຈະສະເຫວີຍໝາກມ່ວງ ລຳດັບນັ້ນພຣະເຈົ້າພິມພິສານຈອມທັບມະຄົດຣັດ ຈຶ່ງຮັບສັ່ງເຈົ້າໜ້າທີ່ທັງຫຼາຍວ່າ "ທ່ານຈົ່ງໄປສວນ ເກັບໝາກມ່ວງມາ"

ເຈົ້າໜ້າທີ່ເຫຼົ່ານັ້ນຮັບພຣະຣາຊະດຳຣັດແລ້ວໄປທີ່ສວນ ບອກຄົນເຝົ້າສວນວ່າ "ນາຍພຣະຣາຊາມີພຣະຣາຊະປະສົງຈະສະເຫວີຍໝາກມ່ວງ ທ່ານຈົ່ງໃຫ້ໝາກມ່ວງ"

ຄົນເຝົ້າສວນຕອບວ່າ "ໝາກມ່ວງບໍ່ມີ ພິກຂຸແໝັ້ນໝາກອ່ອນ ໆ ໄປສັນໝົດແລ້ວ"

ຄັ້ງນັ້ນ ເຈົ້າໜ້າທີ່ເຫຼົ່ານັ້ນນຳເລື້ອງນີ້ໄປຂາບທູນພຣະເຈົ້າພິມພິສານຈອມທັບມະຄົດຣັດໃຫ້ຊົງຮັບຮູ້

ພຣະອົງຕັດວ່າ "ພິກຂຸສັນໝາກມ່ວງໝົດກໍດີແລ້ວ ແຕ່ພຣະຜູ້ມີພຣະພາກເຈົ້າຊົງສັນເສີນການຮູ້ຈັກປະມານ"

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ່ຮູ້ຈັກປະມານ ສັນໝາກມ່ວງຂອງພຣະຣາຊາໝົດນໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ฯລฯ

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນໝາກມ່ວງ ອົງໃດສັນຕ້ອງ ອາບັດທຸກກົດ"

## ເລື້ອງສະມາຄົມຖວາຍຕ່ອນໝາກມ່ວງ

ສະໄໝນັ້ນ ສະມາຄົມໜຶ່ງຖວາຍສັງຄະພັດ ໃສ່ຕ່ອນໝາກມ່ວງໃນກັບເຂົ້າ ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຮັບປະເຄນສັນເທີ້ນ ພິກຂຸທັງຫຼາຍ ເຮົາອະນຸຍາດໝາກມ່ວງເປັນຕ່ອນ ໆ"

## ເລື້ອງໝາກໄມ້ທີ່ສົມຄວນແກ່ສະມະນະ

ສະໄໝນັ້ນ ສະມາຄົມໜຶ່ງຖວາຍສັງຄະພັດ ພວກເຂົາບໍ່ຮູ້ຈັກເຮັດໝາກມ່ວງເປັນຕ່ອນ ໆ ຈຶ່ງນຳ ເຂົ້າໄປໃນໂຮງອາຫານທັງໜ່ວຍ ພິກຂຸທັງຫຼາຍ ຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຮັບປະເຄນສັນໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນໝາກໄມ້ທີ່ສົມຄວນແກ່ສະມະນະ ໕ ຢ່າງ ຄື

໑. ໝາກໄມ້ທີ່ລົນໄຟ
໒. ໝາກໄມ້ທີ່ຂີດດ້ວຍອາວຸດ
໓. ໝາກໄມ້ທີ່ຈິກດ້ວຍເລັບ
໔. ໝາກໄມ້ທີ່ບໍ່ມີເມັດ
໕. ໝາກໄມ້ທີ່ປ້ອນເອົາເມັດອອກແລ້ວ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນໝາກໄມ້ທີ່ສົມຄວນແກ່ສະມະນະ ໕ ຢ່າງນີ້ແລ"

## ເລື້ອງພິກຂຸຖືກງູກັດ

[໒໕໑] ສະໄໝນັ້ນ ພິກຂຸອົງໜຶ່ງຖືກງູກັດເຖິງແກ່ມໍຣະນະພາບ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນັ້ນຄົງຈະບໍ່ໄດ້ແຜ່ເມດຕາຈິດໃຫ້ຕະກູນພະຍາງູ ໔ ຕະກູນ ຍ້ອນຖ້າພິກຂຸນັ້ນແຜ່ເມດຕາຈິດໃຫ້ຕະກູນພະຍາງູ ໔ ຕະກູນນີ້ ພິກຂຸນັ້ນກໍຈະບໍ່ຖືກງູກັດເຖິງແກ່ມໍຣະນະພາບ

### ຕະກູນພະຍາງູທັງ ໔

#### ຕະກູນພະຍາງູ ໔ ຕະກູນ ຄື

໑. ຕະກູນພະຍາງູຊື່ວິຣູປັກ

໔. ຕະກູນພະຍາງູຊື່ເອຣາປະຖະ
໓. ຕະກູນພະຍາງູຊື່ສັບພະຍາບຸດ
໔. ຕະກູນພະຍາງູຊື່ກັນຫາໂຄຕະມະກະ

ພິກຂຸທັງຫຼາຍ ພິກຂຸອົງນັ້ນຄົງຈະບໍ່ໄດ້ແຜ່ເມດຕາຈິດໃຫ້ຕະກູນພະຍາງູ ໔ ຕະກູນນີ້ ຍ້ອນຖ້າພິກຂຸນັ້ນແຜ່ເມດຕາຈິດໃຫ້ຕະກູນພະຍາງູ ໔ ຕະກູນນີ້ ພິກຂຸນັ້ນຈະບໍ່ຖືກງູກັດ ເຖິງແກ່ມໍຣະນະພາບ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸແຜ່ເມດຕາຈິດໃຫ້ຕະກູນພະຍາງູ ໔ ຕະກູນນີ້ເພື່ອຄຸ້ມຄອງຕົນ ເພື່ອຮັກສາຕົນ ເພື່ອປ້ອງກັນຕົນ

## ວິທີແຜ່ເມດຕາແກ່ສັບພະສັດ

### ພິກຂຸທັງຫຼາຍ ພິກຂຸເພິ່ງແຜ່ເມດຕາແນວນີ້

ເຮົາຂໍມີເມດຕາຕໍ່ຕະກູນພະຍາງູວິຣູປັກ
ເຮົາຂໍມີເມດຕາຕໍ່ຕະກູນພະຍາງູເອຣາປະຖະ
ເຮົາຂໍມີເມດຕາຕໍ່ຕະກູນພະຍາງູສັບພະຍາບຸດ
ເຮົາຂໍມີເມດຕາຕໍ່ຕະກູນພະຍາງູກັນຫາໂຄຕະມະກະ

ເຮົາຂໍມີເມດຕາຕໍ່ເຫຼົ່າສັດທີ່ບໍ່ມີຕີນ
ເຮົາຂໍມີເມດຕາຕໍ່ເຫຼົ່າສັດສອງຕີນ
ເຮົາຂໍມີເມດຕາຕໍ່ເຫຼົ່າສັດສີ່ຕີນ
ເຮົາຂໍມີເມດຕາຕໍ່ເຫຼົ່າສັດຫຼາຍຕີນ

ສັດບໍ່ມີຕີນຢ່າໄດ້ບຽດບຽນເຮົາ
ສັດສອງຕີນຢ່າໄດ້ບຽດບຽນເຮົາ
ສັດສີ່ຕີນຢ່າໄດ້ບຽດບຽນເຮົາ
ສັດຫຼາຍຕີນຢ່າໄດ້ບຽດບຽນເຮົາ

ຂໍສັບພະສັດທີ່ມີລົມຫັນໃຈ
ຂໍສັບພະສັດທີ່ຍັງມີຊີວິດທັງມວນ ຈົ່ງປະສົບກັບຄວາມຈະເລີນ
ຄວາມຊົ່ວຮ້າຍຢ່າໄດ້ມາບຽດບຽນສັດໃດ ໆ ເລີຍ

ພຣະພຸດທະເຈົ້າມີພຣະຄຸນຫາປະມານບໍ່ໄດ້ ພຣະທຳມີພຣະຄຸນຫາປະມານບໍ່ໄດ້ ພຣະສົງມີພຣະຄຸນຫາປະມານບໍ່ໄດ້ ສັດເລືອຄານທັງຫຼາຍ ຄື ງູ ແມງງອດ ຂີ້ເຂັບ ແມງມຸມ ກັບແກ້ ໜູ ມີຄຸນພໍປະມານ

ເຮົາກະທຳການຮັກສາແລ້ວ ກະທຳການປ້ອງກັນແລ້ວ ຂໍໝູ່ສັດຜູ້ມີຊີວິດຈົ່ງຫຼີກໄປເຮົານັ້ນ ຂໍນອບນ້ອມແດ່ພຣະຜູ້ມີພຣະພາກເຈົ້າ ຂໍນອບນ້ອມແດ່ພຣະສຳມາສຳພຸດທະເຈົ້າທັງ ໗ ພຣະອົງ"[໑]

## ເລື້ອງພິກຂຸຕັດອົງຄະຊາດ

ສະໄໝນັ້ນ ພິກຂຸອົງໜຶ່ງຖືກຄວາມບໍ່ຍິນດີບີບຄັ້ນ ໄດ້ຕັດອົງຄະຊາດຂອງຕົນ ໗ລ໗

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໂມຄະບຸຣຸດນັ້ນ ເມື່ອສິ່ງອື່ນທີ່ຄວນຕັດມີຢູ່ ກັບໄປຕັດອີກສິ່ງໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຕັດອົງຄະຊາດຂອງຕົນ ອົງໃດຕັດ ຕ້ອງອາບັດຖຸນລັດໄຈ"

## ເລື້ອງບາດໄມ້ຈັນ

[໒໕໒] ສະໄໝນັ້ນ ເສດຖີຊາວນະຄອນຣາດຊະຄືມີປຸ່ມແກ່ນຈັນມີຄ່າຫຼາຍ ຄັ້ງນັ້ນແລທ່ານເສດຖີຊາວນະຄອນຣາດຊະຄືໄດ້ມີຄວາມຄິດດັ່ງນີ້ວ່າ "ຖ້າຈັ່ງໃດ ເຮົາຈະໃຫ້ຊ່ຽນປຸ່ມໄມ້ຈັນນີ້ເປັນບາດ ຜົງໄມ້ຈັນທີ່ເຫຼືອຈະມ້ຽນໄວ້ໃຊ້ແລ້ວໃຫ້ບາດເປັນທານ"

ລຳດັບນັ້ນ ເສດຖີຊາວນະຄອນຣາດຊະຄືໃຫ້ຊ່ຽນປຸ່ມໄມ້ຈັນນັ້ນເປັນບາດ ໃສ່ສາແຫຼກແຂວນໄວ້ທີ່ປາຍໄມ້ໄຜ່ໂດຍມັດຕໍ່ ໆ ກັນຂຶ້ນໄປແລ້ວປະກາດແນວນີ້ວ່າ "ສະມະນະຫຼືພາມ ອົງໃດທີ່ເປັນພຣະອະຣະຫັນແລະມີລິດ ຈົ່ງເຫາະຂຶ້ນໄປປົດບາດທີ່ເຮົາໃຫ້ແລ້ວນຳໄປເທີ້ນ"

ຄັ້ງນັ້ນ ເຈົ້າລັດທິປູຣະນະກັດສະປະເຂົ້າໄປຫາເສດຖີຊາວນະຄອນຣາດຊະຄືຮອດບ່ອນຢູ່ບັດແລ້ວ ໄດ້ກ່າວກັບເສດຖີຊາວນະຄອນຣາດຊະຄືດັ່ງນີ້ວ່າ "ຄະຫະບໍດີ ອາດຕະມານີ້ແລ້ວເປັນພຣະອະຣະຫັນ ແລະມີລິດ ທ່ານໂຜດໃຫ້ບາດແກ່ອາດຕະມາເທີ້ນ"

ເສດຖີຕອບວ່າ "ຖ້າທ່ານເປັນພຣະອະຣະຫັນມີລິດກໍຈົ່ງເຫາະຂຶ້ນໄປປົດບາດທີ່ເຮົາໃຫ້ແລ້ວເອງເທີ້ນ"

ຄັ້ງນັ້ນ ເຈົ້າລັດທິມັກຂະລິໂຄສານ ຯລຯ ເຈົ້າລັດທິອະຊິຕະເກສະກໍາພົນ ຯລຯ ເຈົ້າລັດທິປະກຸທະກັດຈາຍະນະ ຯລຯ ເຈົ້າລັດທິສັນໄຊເວລັດຖະບຸດ ຯລຯ ເຈົ້າລັດທິນິຄົນນາຕະບຸດ ເຂົ້າໄປຫາເສດຖີ ຮອດບ່ອນຢູ່ ແລ້ວໄດ້ກ່າວກັບເສດຖີຊາວນະຄອນຣາດຊະຄຶດັ່ງນີ້ວ່າ "ຄະຫະບໍດີ ອາດຕະມານີ້ແລ້ວ ເປັນພຣະອະຣະຫັນແລະມີລິດ ທ່ານໂຜດໃຫ້ບາດແກ່ອາດຕະມາເທີ້ນ"

ເສດຖີຕອບວ່າ "ຖ້າທ່ານເປັນພຣະອະຣະຫັນມີລິດກໍຈົ່ງເຫາະຂຶ້ນໄປປົດບາດທີ່ເຮົາໃຫ້ແລ້ວເອງເທີ້ນ"

ເມື່ອເຊົ້າມື້ໜຶ່ງ ທ່ານພຣະມະຫາໂມກຄັນລານະກັບທ່ານພຣະປິນໂທລະພາຣະທະວາຊະຄອງ ອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນນະຄອນຣາດຊະຄຶ

ແມ່ນທ່ານພຣະປິນໂທລະພາຣະທະວາຊະເປັນພຣະອະຣະຫັນຜູ້ມີລິດ ແມ່ນທ່ານພຣະມະຫາໂມກຄັນລານະກໍເປັນພຣະອະຣະຫັນຜູ້ມີລິດເຊັ່ນກັນ

ຄັ້ງນັ້ນ ທ່ານພຣະປິນໂທລະພາຣະທະວາຊະກ່າວກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ "ທ່ານໂມກຄັນລານະ ທ່ານເປັນພຣະອະຣະຫັນແລະມີລິດ ທ່ານຈົ່ງໄປປົດບາດໜ່ວຍນັ້ນລົງມາເທີ້ນ ນັ້ນຄືບາດຂອງທ່ານ"

ທ່ານພຣະມະຫາໂມກຄັນລານະກ່າວວ່າ "ທ່ານປິນໂທລະພາຣະທະວາຊະ ທ່ານເປັນພຣະອະຣະຫັນ ແລະເປັນຜູ້ມີລິດ ທ່ານຈົ່ງໄປປົດບາດໜ່ວຍນັ້ນລົງມາເທີ້ນ ນັ້ນບາດຂອງທ່ານ"

ລໍາດັບນັ້ນ ທ່ານພຣະປິນໂທລະພາຣະທະວາຊະໄດ້ເຫາະຂຶ້ນສູ່ທ້ອງຟ້າຖືບາດນັ້ນລອຍວຽນໄປຮອບນະຄອນຣາດຊະຄຶ ໓ ຮອບ ຂະນະນັ້ນ ເສດຖີພ້ອມກັບບຸດພັນລະຍາຢືນຢູ່ໃນເຮືອນ ຂອງຕົນປະນົມມືໄຫວ້ພ້ອມນິມົນວ່າ "ທ່ານພາຣະທະວາຊະ ທ່ານໂຜດແວ່ຢຸດໃນເຮືອນຂອງພວກເຮົາເທີ້ນ"

ທ່ານພຣະປິນໂທລະພາຣະທະວາຊະແວ່ຢຸດໃນເຮືອນຂອງທ່ານເສດຖີຊາວນະຄອນຣາດຊະຄຶ ລໍາດັບນັ້ນ ເສດຖີຊາວນະຄອນຣາດຊະຄຶຮັບບາດຈາກມືທ່ານພຣະປິນໂທລະພາຣະທະວາຊະແລ້ວ

ບັນຈຸໃສ່ຂອງຫຍໍ້າມີຄ່າຫຼາຍຈົນເຕັມບາດແລ້ວໄດ້ຖວາຍທ່ານ ຄັ້ງນັ້ນ ທ່ານພຣະປິໜະໂທລະພາຣະທະວາຊະຮັບບາດແລ້ວກັບໄປອາຣາມ

ຄົນທັງຫຼາຍໄດ້ຂ່າວວ່າ "ພຣະຜູ້ເປັນເຈົ້າປິນໂທລະພາຣະທະວາຊະປົດບາດຂອງທ່ານເສດຖີ ຊາວນະຄອນຣາດຊະຄຶລົງມາແລ້ວ" ຈຶ່ງພາກັນສົ່ງສຽງອຶກກະທຶກກຶກກ້ອງພາກັນຕິດຕາມທ່ານພຣະປິນໂທລະພາຣະທະວາຊະໄປ

ພຣະຜູ້ມີພຣະພາກເຈົ້າຊົງສະດັບສຽງອຶກກະທຶກກຶກກ້ອງນັ້ນ ຈຶ່ງຕັດຮຽກທ່ານພຣະອານົນມາຮັບສັ່ງຖາມວ່າ "ອານົນ ນັ້ນສຽງອຶກກະທຶກກຶກກ້ອງອັນໃດ"

ທ່ານພຣະອານົນຂາບທູນວ່າ "ທ່ານພຣະປິນໂທລະພາຣະທະວາຊະເຫາະຂຶ້ນໄປປົດບາດຂອງເສດຖີຊາວນະຄອນຣາດຊະຄຶ ຄົນທັງຫຼາຍໄດ້ຮູ້ຂ່າວວ່າ ພຣະຜູ້ເປັນເຈົ້າປິໜະໂທລະພາຣະທະວາຊະປົດບາດຂອງເສດຖີຊາວນະຄອນຣາດຊະຄຶລົງມາແລ້ວ ຈຶ່ງພາກັນສົ່ງສຽງອຶກກະທຶກກຶກກ້ອງ ພາກັນຕິດຕາມທ່ານພຣະປິນໂທລະພາຣະທະວາຊະໄປ ນີ້ຄືສຽງອຶກກະທຶກກຶກກ້ອງນັ້ນຂ້ານ້ອຍ"

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຕັດຖາມທ່ານພຣະປິນໂທລະພາຣະທະວາຊະວ່າ "ພາຣະທະວາຊະ ໄດ້ຂ່າວວ່າທ່ານປົດບາດຂອງເສດຖີ ຊາວນະຄອນຣາດຊະຄຶລົງມາ ແມ່ນບໍ?"

ພຣະປິນໂທລະພາຣະທະວາຊະທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

## ຊົງຫ້າມໃຊ້ບາດໄມ້

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພາຣະທະວາຊະ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ພາຣະທະວາຊະ ເປັນຫຍັງທ່ານຈຶ່ງສະແດງອິດທິປາຕິຫານອັນເປັນອຸດຕະຣິມະນຸດສະທຳ[๑]ແກ່ຄົນທັງຫຼາຍຍ້ອນເຫດແຫ່ງບາດໄມ້ບໍ່ມີຄ່ານໍ ການທີ່ທ່ານສະແດງປາຕິຫານຍ້ອນເຫດແຫ່ງບາດໄມ້ທີ່ບໍ່ມີຄ່າ ປຽບຄືກັບມາຕຸຄາມສະແດງຂອງທີ່ຄວນປົກປິດຍ້ອນເຫັນແກ່ເງິນຕາເລັກໜ້ອຍສັນນັ້ນ ພາຣະທະວາຊະ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສະແດງອິດທິປາຕິຫານອັນເປັນອຸດຕະຣິມະນຸດສະທຳແກ່ຄະລຶຫັດທັງຫຼາຍ ອົງໃດສະແດງຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ພວກທ່ານຈົ່ງທຳລາຍບາດ ໜ່ວຍນັ້ນ ບົດໃຫ້ລະອຽດແລ້ວໃຊ້ເປັນຢາຍອດຕາຂອງພິກຂຸ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ບາດໄມ້ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພຣະສັບພັກຄີໃຊ້ບາດຊະນິດຕ່າງ ໆ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ບາດຊະນິດຕ່າງ ໆ ຄື ບາດຄຳ ບາດເງິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ບາດຄຳ ຯລຯ ບໍ່ເພິ່ງໃຊ້ ບາດເງິນ ຯລຯ ບໍ່ເພິ່ງໃຊ້ບາດແກ້ວມະນີ ຯລຯ ບໍ່ເພິ່ງໃຊ້ບາດແກ້ວໄພທູນ ຯລຯ ບໍ່ເພິ່ງໃຊ້ບາດແກ້ວຜຼຶກ ຯລຯ ບໍ່ເພິ່ງໃຊ້ບາດສຳລິດ ຯລຯ ບໍ່ເພິ່ງໃຊ້ບາດແກ້ວ ຯລຯ ບໍ່ເພິ່ງໃຊ້ບາດດີບຸກ ຯລຯ ບໍ່ເພິ່ງໃຊ້ບາດຊືນ ຯລຯ ບໍ່ເພິ່ງໃຊ້ ບາດທອງແດງ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດບາດ ໒ ຊະນິດ ຄື ບາດເຫລັກ ບາດດິນ"

## ເລື້ອງພຣະສັບພັກຄີໃຊ້ຕີນບາດຊະນິດຕ່າງ ໆ

[໒໕໓] ສະໄໝນັ້ນ ກົ້ນບາດຊຳລຸດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະ ຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕີນບາດ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ຕີນບາດຊະນິດຕ່າງ ໆ ຄື ເຮັດດ້ວຍຄຳ ເຮັດດ້ວຍເງິນ ຄົນທັງຫຼາຍ ຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຕີນບາດຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດຕີນບາດ ໒ ຊະນິດ ຄື ເຮັດດ້ວຍດີບຸກ ເຮັດດ້ວຍຊືນ"

ຕີນບາດໜາບໍ່ເໝາະກັບກົ້ນບາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຂຸ່ງນຕີນຮອງບາດ"

ຕີນຮອງບາດຂຸ່ງນແລ້ວກໍຍັງບໍ່ພຽງ ຯລຯ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຈັກເປັນແຂ້ວມັງກອນ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ຕີນຮອງບາດສວຍງາມຕະການຕາ ມີລວດລາຍເປັນຮູບພາບ ທ່ຽວຍ່າງອວດໄປຕາມຖະໜົນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຕີນຮອງບາດສວຍງາມຕະການຕາ ມີລວດລາຍເປັນຮູບພາບ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດຕີນຮອງບາດຊະນິດທຳມະດາ"

## ເລື້ອງການເກັບຮັກສາບາດ

[໔໕໔] ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນບາດໄວ້ທັງທີ່ຍັງບໍ່ແຫ້ງ ບາດເໝັນອັບ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງມ້ຽນບາດໄວ້ທັງທີ່ຍັງບໍ່ແຫ້ງ ອົງໃດມ້ຽນໄວ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເອົາບາດຕາກແດດກ່ອນແລ້ວຈຶ່ງຄ່ອຍເກັບ"

ສະໄໝນັ້ນ ພິກຂຸທັງຫຼາຍເອົາບາດຕາກແດດໄວ້ທັງທີ່ຍັງມີນ້ຳ ບາດມີກິ່ນເໝັນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເອົາບາດຕາກແດດທັງທີ່ຍັງມີນ້ຳ ອົງໃດເອົາຕາກ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຊັດບາດກ່ອນແລ້ວຈຶ່ງຄ່ອຍຕາກແດດມ້ຽນໄວ້"

ສະໄໝນັ້ນ ພິກຂຸທັງຫຼາຍວາງບາດໄວ້ໃນບ່ອນຮ້ອນ ຜິວບາດເສຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງວາງບາດໄວ້ໃນບ່ອນຮ້ອນ ອົງ ໃດວາງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເອົາບາດຕາກແດດໄວ້ໃນບ່ອນຮ້ອນ ຈັກບຶດແລ້ວຈຶ່ງຄ່ອຍເກັບ"

ສະໄໝນັ້ນ ພິກຂຸທັງຫຼາຍວາງບາດຈຳນວນຫຼາຍທີ່ບໍ່ມີຕີນຮອງໄວ້ໃນກາງແຈ້ງ ບາດຖືກລົມພະຍຸພັດກິ້ງຕົກແຕກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທີ່ວາງບາດ"

ສະໄໝນັ້ນ ພິກຂຸທັງຫຼາຍວາງບາດໄວ້ທີ່ຮິມຕັ່ງໄມ້[໑] ບາດກິ້ງຕົກແຕກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງວາງບາດໄວ້ທີ່ຮິມຕັ່ງໄມ້ ອົງໃດ ວາງໄວ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍວາງບາດໄວ້ທີ່ຮີມຕັ່ງໄມ້ນ້ອຍນອກຝາ ບາດກິ້ງຕົກແຕກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງວາງບາດໄວ້ທີ່ຮີມຕັ່ງໄມ້ນ້ອຍ ນອກຝາ ອົງໃດວາງ ຕ້ອງອາບັດທຸກກົດ”

ສະໄໝນັ້ນ ພິກຂຸທັງຫຼາຍຂວ້ຳບາດໄວ້ທີ່ພື້ນດິນ ຂອບບາດເສຍຫາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຫຍ້າຮອງ”

ຫຍ້າທີ່ຮອງຖືກປວກກັດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ປ່ຽງຜ້າຮອງ”

ປ່ຽງຜ້າຖືກປວກກັດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຊັ້ນວາງບາດ”

ບາດກິ້ງຕົກຈາກຊັ້ນວາງແຕກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ໝໍ້ປາກກວ້າງເກັບບາດ”

ບາດຄູດສີກັບໝໍ້ປາກກວ້າງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ໂສບບາດ”

ສາຍພາຍບໍ່ມີ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດສາຍພາຍເປັນດ້າຍຖັກ”

ສະໄໝນັ້ນ ພິກຂຸທັງຫຼາຍແຂວນບາດໄວ້ທີ່ໄມ້ເດືອຍຂ້າງຝາແດ່ ທີ່ງາຊ້າງແດ່ ບາດພາດຕົກແຕກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງແຂວນບາດໄວ້ ອົງໃດແຂວນໄວ້ ຕ້ອງອາບັດທຸກກົດ”

ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນບາດໄວ້ເທິງຕຽງ ເຜີສະຕິນັ່ງເຕັງບາດແຕກ

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງມ້ຽນບາດໄວ້ເທິງຕຽງອົງໃດມ້ຽນໄວ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນບາດໄວ້ເທິງຕັ່ງ ເຜີສະຕິນັ່ງເຕັງບາດແຕກ

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງມ້ຽນບາດໄວ້ເທິງຕັ່ງອົງໃດມ້ຽນໄວ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນບາດໄວ້ເທິງຕັກ ເຜີສະຕິລຸກຂຶ້ນ ບາດຕົກແຕກ ພິກຂຸ

ທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ຮັບສັ່ງວ່າ "ພິກຂຸ ທັງຫຼາຍ ພິກຂຸບໍ່ເພິ່ງວາງບາດໄວ້ເທິງຕັກ ອົງໃດວາງໄວ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນບາດໄວ້ເທິງກົດ ກົດຖືກລົມພະຍຸພັດ ບາດຕົກແຕກ ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງມ້ຽນບາດໄວ້ເທິງກົດ ອົງໃດມ້ຽນໄວ້ ຕ້ອງອາບັດທຸກກົດ"

[໒໕໕] ສະໄໝນັ້ນ ພິກຂຸທັງຫຼາຍຖືບາດຢູ່ຍູ້ບານປະຕູເຂົ້າໄປ ບາດກະທົບບານປະຕູແຕກ ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຖືບາດຍູ້ບານປະຕູເຂົ້າໄປ ອົງໃດຍູ້ ຕ້ອງອາບັດທຸກກົດ"

## ເລື່ອງການໃຊ້ວັດຖຸອື່ນແທນບາດ

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ກະໂຫຼກນ້ຳເຕົ້າທ່ຽວບິນທະບາດ ຄົນທັງຫຼາຍຕຳໜິປະນາມ ໂພນທະນາວ່າ "ຯລຯ ຄືພວກເດຍຣະຖີ" ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ ກະໂຫຼກນ້ຳເຕົ້າທ່ຽວບິນທະບາດ ອົງໃດໃຊ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ໝໍ້ກະເບື້ອງທ່ຽວບິນທະບາດ ຄົນທັງຫຼາຍຕຳໜິ ປະນາມໂພນທະນາວ່າ "ຯລຯ ຄືພວກເດຍຣະຖີ" ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ ໝໍ້ກະເບື້ອງທ່ຽວບິນທະບາດ ອົງໃດໃຊ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງຖືຂອງທຸກຢ່າງເປັນຂອງບັງສຸກຸນ[๑] ທ່ານໃຊ້ບາດກະໂຫຼກຜີ ສະຕີຜູ້ ໜຶ່ງເຫັນແລ້ວຢ້ານສົ່ງສຽງຮ້ອງວ່າ "ຜູ້ນີ້ເປັນຜີສາດແນ່" ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໃຊ້ບາດກະໂຫຼກຜີ ຄື ພວກຜີສາດບໍ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ບາດກະໂຫຼກຜີ ອົງໃດໃຊ້ ຕ້ອງ ອາບັດທຸກກົດ ພິກຂຸທັງຫຼາຍ ພິກຂຸບໍ່ຄວນມີຂອງໃຊ້ທຸກຢ່າງເປັນຂອງບັງສຸກຸນ ອົງໃດມີ ຕ້ອງ ອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ບາດຮອງຮັບເສດອາຫານແດ່ ກ້າງແດ່ ນ້ຳບ້ວນປາກແດ່ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ພວກພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ສັບໃນພາຊະນະທີ່ໂຕເອງໃຊ້ເປັນງ່ງງ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາ ກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ບາດຮອງຮັບເສດ ອາຫານ ກ້າງຫຼືນ້ຳບ້ວນປາກ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ ງ່ງງ"

## ເລື້ອງພິກຂຸໃຊ້ມີຈິກຜ້າຫຍິບຈີວອນເປັນຕົ້ນ

[໔໕໖] ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ມືຈີກຜ້າຫຍິບຈີວອນ ຈີວອນມີແນວບໍ່ສະເໝີກັນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມີດມີຜ້າພັນ"

ສະໄໝນັ້ນ ມີດມີດ້າມເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີ ພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ມີດມີດ້າມ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ດ້າມມີດຊະນິດຕ່າງ ໆ ຄື ເຮັດດ້ວຍຄຳ ເຮັດດ້ວຍ ເງິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ດ້າມມີດຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ດ້າມມີດເຮັດດ້ວຍກະດູກ ງາ ເຂົາ ສັດ ໄມ້ອໍ້ ໄມ້ໄຜ່ ໄມ້ທຳມະດາ ຄັ່ງ ເມັດໝາກໄມ້ ໂລຫະ ກາບຫອຍສັງ"

ສະໄໝນັ້ນ ພິກຂຸທັງຫຼາຍ ໃຊ້ຂີ້ນໄກ່ແດ່ ໄມ້ຂັດແດ່ ຫຍິບຈີວອນ ຈີວອນທີ່ຫຍິບແລ້ວບໍ່ຮຽບຮ້ອຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ເຂັມ"

ເຂັມຂຶ້ນຂີ້ມ້ຽງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ກ່ອງເຂັມ"

ແມ່ນໃນກ່ອງເຂັມກໍຍັງຂຶ້ນຂີ້ມ້ຽງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເອົາແປ້ງເຂົ້າໝາກໂຮຍ"

ແມ່ນໃນແປ້ງເຂົ້າໝາກເຂັມກໍຍັງຂຶ້ນຂີ້ມ້ຽງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເອົາແປ້ງໃສ່ຂີ້ມິ້ນຜົງໂຮຍ"

ແມ່ນໃນແປ້ງໃສ່ຂີ້ມິ້ນຜົງ ເຂັມກໍຍັງຂຶ້ນຂີ້ມ້ຽງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຝຸ່ນສີລາ"

ແມ່ນໃນຝຸ່ນສີລາ ເຂັມກໍຍັງຂຶ້ນຂີ້ມ້ຽງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ທາດ້ວຍຂີ້ເຜີ້ງ"

ຝຸ່ນສີລາແຕກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າມັດຂີ້ເຜີ້ງພອກຝຸ່ນສີລາ"

## ເລື້ອງໄມ້ສະດຶງເປັນຕົ້ນ

ສະໄໝນັ້ນ ພິກຂຸທັງຫຼາຍຕອກຫຼັກລົງໃນບ່ອນນັ້ນ ໆ ແລ້ວມັດຊົງຫຍິບຈີວອນ ແຈຈີວອນເສຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ສະດຶງ ເຊືອກມັດໄມ້ສະດຶງ ໃຫ້ມັດລົງໃນບ່ອນນັ້ນ ໆ ຫຍິບຈີວອນ"

ພິກຂຸທັງຫຼາຍຂຶງໄມ້ສະດຶງໃນບ່ອນບໍ່ພຽງ ໄມ້ສະດຶງຫັກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຂຶງໄມ້ສະດຶງໃນບ່ອນບໍ່ພຽງ ອົງໃດຂຶງ ຕ້ອງອາບັດທຸກກົດ"

ພິກຂຸທັງຫຼາຍຂຶງໄມ້ສະດຶງເທິງພື້ນດິນ ໄມ້ສະດຶງເປື້ອນຝຸ່ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຫຍ້າຮອງ"

ຂອບໄມ້ສະດຶງເປ່ເພ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດາມຂອບຄືຜ້າອະນຸວາດ"

ໄມ້ສະດຶງບໍ່ພໍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ສະດຶງນ້ອຍ ໄມ້ປະກົບ ດິ້ວໄມ້ສຳລັບສອດເຂົ້າລະຫວ່າງຈີວອນ ໔ ຊັ້ນ ເຊືອກຮັດສະດຶງໃນກັບສະດຶງນອກ ດ້າຍມັດຈີວອນ ກັບສະດຶງໃນ ເມື່ອຂຶງແລ້ວຈຶ່ງຫຍິບຈີວອນ"

ໄລຍະແນວດ້າຍ (ທີ່ຫຍິບ) ບໍ່ສະເໝີ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດໝາຍໄລຍະໄວ້"

ແນວດ້າຍຄົດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເສັ້ນບັນທັດ"

ສະໄໝນັ້ນ ພິກຂຸທັງຫຼາຍບໍ່ໄດ້ລ້າງຕີນຢຽບໄມ້ສະດຶງ ໄມ້ສະດຶງເສຍຫາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຕີນເປື້ອນຢຽບໄມ້ສະດຶງ ອົງໃດຢຽບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຕີນປຽກຢຽບໄມ້ສະດຶງ ໄມ້ສະດຶງເສຍຫາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຕີນປຽກຢຽບໄມ້ສະດຶງ ອົງໃດຢຽບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃສ່ເກີບຢຽບໄມ້ສະດຶງ ໄມ້ສະດຶງເສຍຫາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບຢຽບໄມ້ສະດຶງ ອົງໃດຢຽບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຫຍິບຈີວອນໃຊ້ນິ້ວມືຮັບເຂັມ ນິ້ວມືເຈັບ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ປອກໃສ່ນິ້ວມື"

[໔໕໗] ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ປອກໃສ່ນິ້ວມືຊະນິດຕ່າງ ໆ ຄື ເຮັດດ້ວຍຄຳ ເຮັດດ້ວຍເງິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ປອກໃສ່ນິ້ວມືຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ປອກໃສ່ນິ້ວມື ເຮັດດ້ວຍກະດູກ ຯລຯ ກາບຫອຍສັງ"

ສະໄໝນັ້ນ ເຂັມ ມີດ ປອກໃສ່ນິ້ວມືເສຍຫາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບ ທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກ່ອງເກັບເຄື່ອງຫຍິບຜ້າ"

ພິກຂຸທັງຫຼາຍມົວພະວົງຢູ່ແຕ່ໃນກ່ອງເກັບເຄື່ອງຫຍິບຜ້າ ພິກຂຸທັງຫຼາຍຈຶ່ງນຳເລື້ອງ ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງເກັບປອກໃສ່ນິ້ວມື"

ສາຍພາຍບໍ່ມີ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາຍພາຍເປັນດ້າຍຖັກ"

## ເລື້ອງໂຮງສະດຶງເປັນຕົ້ນ

ສະໄໝນັ້ນ ພິກຂຸທັງຫຼາຍຫຍິບຈີວອນຢູ່ໃນກາງແຈ້ງ ລຳບາກຍ້ອນຄວາມໜາວແດ່ ຍ້ອນ ຄວາມຮ້ອນແດ່

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໂຮງສະດົງ ຜາມສະດົງ"

ໂຮງສະດົງມີພື້ນຕ່ຳ ນ້ຳຖ້ວມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນທີ່ໃຫ້ສູງ"

ດິນທີ່ຖົມພັງທະລາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສີລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດ ດິນຈີ່ ຂັ້ນໄດສີລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຍຶດ"

ສະໄໝນັ້ນ ຜົງຫຍ້າຕົກທົ່ວໃນໂຮງສະດົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນສາຍໜຽກ"

ສະໄໝນັ້ນ ພິກຂຸທັງຫຼາຍຫຍິບຈີວອນສຳເລັດແລ້ວ ຖິ້ມໄມ້ສະດົງໄວ້ບ່ອນນັ້ນແລ້ວຈາກໄປ ໜູແດ່ ປວກແດ່ກັດກິນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມ້ວນໄມ້ສະດົງມັ້ຽນໄວ້"

ໄມ້ສະດົງຫັກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອດໄມ້ຄ້ອນມ້ອນ ໄມ້ສະດືງ ເຂົ້າໄປ"

ໄມ້ສະດືງມາຍອອກ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຊືອກມັດ"

ສະໄໝນັ້ນ ພິກຂຸທັງຫຼາຍຍົກໄມ້ສະດືງມັ່ງນໄວ້ທີ່ຝາແດ່ ທີ່ເສົາແດ່ແລ້ວຈາກໄປ ໄມ້ສະດືງຕົກເສຍຫາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຂວນໄວ້ທີ່ເດືອຍຂ້າງຝາ ຫຼືທີ່ໄມ້ເຮັດເປັນຮູບງາຊ້າງ"

[໘໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນຣາດຊະຄຶ ຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນເວສາລີ ຄັ້ງນັ້ນ ພິກຂຸທັງຫຼາຍໃຊ້ບາດໃສ່ເຂັມແດ່ ມີດແດ່ ເຄື່ອງຢາແດ່ ເດີນທາງໄປ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງເກັບເຄື່ອງຢາ"

ສາຍພາຍບໍ່ມີ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາຍພາຍເປັນດ້າຍຖັກ"

ສະໄໝນັ້ນ ພິກຂຸອົງໜຶ່ງມັດເກີບໄວ້ກັບສາຍແອວເຂົ້າໄປບິນທະບາດໃນບ້ານ ອຸປາສົກຄົນໜຶ່ງໄຫວ້ພິກຂຸນັ້ນ ຫົວກະທົບເກີບ ພິກຂຸນັ້ນເກີ້ເຂີນ ເມື່ອກັບໄປວັດຈຶ່ງເລົ່າເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງເກັບເກີບ"

ສາຍພາຍບໍ່ມີ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາຍພາຍເປັນດ້າຍຖັກ"

## ເລື້ອງຜ້າຕອງນ້ຳ

ສະໄໝນັ້ນ ນ້ຳໃນລະຫວ່າງທາງເປັນອະກັບປິຍະ ຜ້າກອງກໍບໍ່ມີ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຕອງນ້ຳ”
ປ່ຽງຜ້າບໍ່ພໍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຕອງມີຮູບຄ້າຍຈອງ”
ຜ້າບໍ່ພໍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດກະບອກຕອງນ້ຳ”

[໘໕໗] ສະໄໝນັ້ນ ພິກຂຸ ໒ ອົງເດີນທາງໄປແຄວ້ນໂກສົນ ອົງໜຶ່ງປະພຶດບໍ່ສົມຄວນ ພິກຂຸອົງທີ ໒ ຈຶ່ງໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ “ທ່ານຢ່າເຮັດແນວນັ້ນ ນັ້ນບໍ່ສົມຄວນ” ພິກຂຸນັ້ນກັບໂກດ

ຄັ້ງນັ້ນ ພິກຂຸ (ອົງທີກ່າວເຕືອນ) ນັ້ນຫິວນ້ຳ ອ້ອນວອນອົງທີໂກດດັ່ງນີ້ວ່າ “ທ່ານ ໂຜດໃຫ້ຜ້າຕອງນ້ຳແດ່ ຂ້ານ້ອຍຈັກດື່ມນ້ຳ” ພິກຂຸອົງທີໂກດບໍ່ຍອມໃຫ້ ພິກຂຸອົງ (ທີ່ກ່າວເຕືອນ) ນັ້ນຫິວນ້ຳຈົນເຖິງແກ່ມໍຣະນະພາບ ເມື່ອພິກຂຸໄປເຖິງວັດໄດ້ເລົ່າເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້
ພິກຂຸທັງຫຼາຍຖາມວ່າ “ເພື່ອນອ້ອນວອນຂໍຜ້າຕອງນ້ຳ ທ່ານບໍ່ໃຫ້ບໍ”
ພິກຂຸຜູ້ໂກດນັ້ນຕອບວ່າ “ເປັນແນວນັ້ນ ທ່ານທັງຫຼາຍ”

ພິກຂຸຜູ້ມັກໜ້ອຍສັນໂດດຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພິກຂຸຖືກຂໍຜ້າຕອງນ້ຳຈຶ່ງບໍ່ໃຫ້ນໍ” ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸນັ້ນວ່າ “ພິກຂຸ ຮູ້ວ່າທ່ານຖືກອ້ອນວອນຂໍຜ້າຕອງນ້ຳກໍບໍ່ໃຫ້ ແມ່ນບໍ?”
ພິກຂຸອົງນັ້ນທູນຮັບວ່າ “ເປັນຄວາມຈິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ໂມຄະບຸຣຸດ ເປັນຫຍັງທ່ານເມື່ອຖືກອ້ອນວອນຂໍຜ້າຕອງນ້ຳຈຶ່ງບໍ່ໃຫ້ນໍ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ພິກຂຸຜູ້ເດີນທາງໄກເມື່ອຖືກເຂົາອ້ອນວອນ ຂໍຜ້າຕອງນ້ຳຈະບໍ່ໃຫ້ບໍ່ໄດ້ ອົງໃດບໍ່ໃຫ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ພິກຂຸບໍ່ມີຜ້າຕອງນ້ຳ ບໍ່ເພິ່ງເດີນທາງໄກ ອົງໃດເດີນທາງ ຕ້ອງອາບັດທຸກກົດ ຖ້າບໍ່ມີຜ້າຕອງນ້ຳຫຼື ກະບອກຕອງນ້ຳ ແມ່ນແຈສັງຄາຕິກໍຄວນອະທິຖານໃຊ້ກອງດື່ມໄດ້”
ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນເວສາລີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄາຣະສາລາ ປ່າມະຫາວັນ ໃນນະຄອນເວສາລີນັ້ນ

ສະໄໝນັ້ນ ພິກຂຸເຮັດນະວະກຳ (ການກໍ່ສ້າງ) ຜ້າຕອງນ້ຳບໍ່ພໍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຕອງນ້ຳມີຂອບ"
ຜ້ານັ້ນກໍບໍ່ພໍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລາດຜ້າລົງເທິງນ້ຳ"

## ເລື້ອງຊົງອະນຸຍາດກຸດຕິກັນຍຸງ

ສະໄໝນັ້ນ ພິກຂຸທັງຫຼາຍຖືກຍຸງລົບກວນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກຸດຕິກັນຍຸງ"[໑]

## ເລື້ອງຊົງອະນຸຍາດທີ່ຈົງກົມແລະເຮືອນໄຟ

[໔໖໐] ສະໄໝນັ້ນ ທາຍົກທາຍິກາໃນນະຄອນເວສາລີຈັດຕັ້ງພັດຕາຫານປະນີດໄວ້ຕາມ

ລຳດັບ ພິກຂຸສັນພັດຕາຫານປະນີດ ຈົນຮ່າງກາຍອ້ວນຈຶ່ງມີອາພາດຫຼາຍ

ຄັ້ງນັ້ນ ໝໍຊີວົກໂກມາຣະພັດມີທຸລະຕ້ອງເດີນທາງໄປນະຄອນເວສາລີ ເຫັນພິກຂຸທັງຫຼາຍ ມີຮ່າງກາຍອ້ວນ ມີອາພາດຫຼາຍ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຢູ່ທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເວລານີ້ພິກຂຸມີຮ່າງກາຍອ້ວນ ມີອາພາດຫຼາຍ ຂໍປະທານພຣະວະໂຣກາດ ພຣະອົງໂຜດອະນຸຍາດທີ່ຈົງກົມແລະເຮືອນໄຟ ດ້ວຍວິທີການແບບນີ້ ພິກຂຸທັງຫຼາຍຈັກໄດ້ມີອາພາດ ໜ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ໝໍຊີວົກໂກມາຣະພັດເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ໝໍຊີວົກໂກມາຣະພັດຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວ ທູນລາກັບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທີ່ຈົງກົມແລະເຮືອນໄຟ"

ສະໄໝນັ້ນ ພິກຂຸທັງຫຼາຍຈົງກົມໃນບ່ອນຂຸຂະ ຕີນເຈັບ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດທີ່ຈົງກົມໃຫ້ພຽງ"

ສະໄໝນັ້ນ ທີ່ຈົງກົມມີພື້ນທີ່ຕ່ຳ ນ້ຳຖ້ວມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນທີ່ໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຍຶດ"

ສະໄໝນັ້ນ ພິກຂຸທັງຫຼາຍຈົງກົມຢູ່ໃນທີ່ຈົງກົມພາດຕົກລົງມາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮົ້ວຮອບທີ່ຈົງກົມ"

ສະໄໝນັ້ນ ພິກຂຸທັງຫຼາຍຈົງກົມຢູ່ກາງແຈ້ງ ຍ່ອມລຳບາກຍ້ອນອາກາດໜາວແດ່ອາກາດຮ້ອນແດ່

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາລາຈົງກົມ"

ຝຸ່ນຫຍ້າຕົກທົ່ວໃນສາລາຈົງກົມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳໃຫ້ມີສີຍາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ຂຽນລວດລາຍດອກຈອກ ຮາວຈີວອນ ສາຍຜຽກ"

ສະໄໝນັ້ນ ເຮືອນໄຟມີພື້ນທີ່ຕ່ຳ ນ້ຳຖ້ວມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

ເຮືອນໄຟບໍ່ມີບານປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລິງ ກອນ ຫຼີ້ມ ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ"

ຕີນຝາເຮືອນໄຟເປ່ເພ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສາບຮອບ ໆ"

ເຮືອນໄຟບໍ່ມີປ່ອງລະບາຍຄວັນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດປ່ອງລະບາຍຄວັນ"

ສະໄໝນັ້ນ ພິກຂຸທັງຫຼາຍເຮັດທີ່ຕັ້ງເຕົາໄວ້ກາງເຮືອນໄຟຂະໜາດນ້ອຍ ບໍ່ມີບໍລິເວນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດທີ່ຕັ້ງເຕົາໄຟໄວ້ດ້ານໜຶ່ງໃນເຮືອນໄຟຂະໜາດນ້ອຍ ໃນເຮືອນໄຟຂະໜາດໃຫຍ່ຕັ້ງໄວ້ສູນກາງໄດ້"

ໄຟໃນເຮືອນໄຟລວກໜ້າ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດດິນສຳລັບທາໜ້າ"

ພິກຂຸໃຊ້ມືລະລາຍດິນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ຮາງລະລາຍດິນ"

ດິນມີກິ່ນເໝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອົບກິ່ນ"

ສະໄໝນັ້ນ ໄຟໃນເຮືອນໄຟລວກກາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນຳນ້ຳເຂົ້າໄປ"

ພິກຂຸທັງຫຼາຍໃຊ້ຖາດແດ່ ບາດແດ່ນຳນ້ຳເຂົ້າໄປ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທີ່ໃສ່ນ້ຳ ໂອນ້ຳ"

ເຮືອນໄຟທີ່ມຸງບັງດ້ວຍຫຍ້າບໍ່ອົບເຫື່ອ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ"

ເຮືອນໄຟມີພື້ນມື່ນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປູເຄື່ອງປູລາດ ໓ ຊະນິດ ຄື ເຄື່ອງປູລາດດິນຈີ່ ເຄື່ອງປູລາດສິລາ ເຄື່ອງປູລາດໄມ້"

ເຮືອນໄຟກໍຍັງມື່ນຢູ່ແນວນັ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ຊຳຣະລ້າງ"

ນ້ຳຂັງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທໍ່ລະບາຍນ້ຳ"

ສະໄໝນັ້ນ ພິກຂຸທັງຫຼາຍນັ່ງເທິງພື້ນດິນໃນເຮືອນໄຟ ຄັນຕາມເນື້ອໂຕ ຯລຯ ພຣະຜູ້ມີພຣະພາກຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງໃນເຮືອນໄຟ"

ສະໄໝນັ້ນ ເຮືອນໄຟຍັງບໍ່ໄດ້ລ້ອມຮົ້ວ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລ້ອມຮົ້ວ ໓ ຊະນິດ ຄື ຮົ້ວດິນຈີ່ ຮົ້ວສິລາ ຮົ້ວໄມ້"

ເຮືອນໄຟບໍ່ມີຊຸ້ມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຊຸ້ມ"

ຊຸ້ມມີພື້ນທີ່ຕ່ຳ ນ້ຳຖ້ວມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຍຶດ"

ຊຸ້ມຍັງບໍ່ມີປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລິງ ກອນ ຫຼີ້ມ ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ"

ສະໄໝນັ້ນ ຜົງຫຍ້າຕົກທົ່ວທີ່ຊຸ້ມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຍາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ຊຽນລວດ ລາຍດອກຈອກ"

ບໍລິເວນມື່ນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຮຍຫີນແຮ່"

ຫີນແຮ່ຍັງບໍ່ພໍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ວາງສິລາພຽງ"

ນ້ຳຂັງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທໍ່ລະບາຍນ້ຳ"

## ເລື້ອງພິກຂຸເປືອຍກາຍ

[໔໖໑] ສະໄໝນັ້ນ ພວກພິກຂຸເປືອຍກາຍໄຫວ້ພິກຂຸເປືອຍກາຍ[໑] ພວກພິກຂຸເປືອຍກາຍໄຫວ້ພິກຂຸບໍ່ເປືອຍກາຍ ພວກພິກຂຸເປືອຍກາຍໃຫ້ພິກຂຸເປືອຍກາຍໄຫວ້ຕົນ ພວກພິກຂຸເປືອຍກາຍໃຫ້ພິກຂຸບໍ່ເປືອຍກາຍໄຫວ້ຕົນ ພວກພິກຂຸເປືອຍກາຍບີບນວດພິກຂຸເປືອຍກາຍ ພວກພິກຂຸເປືອຍກາຍໃຊ້ພິກຂຸເປືອຍກາຍບີບນວດ ພວກພິກຂຸເປືອຍກາຍໃຫ້ຂອງແກ່ພິກຂຸເປືອຍກາຍ ພວກພິກຂຸເປືອຍກາຍຮັບປະເຄນ ພວກພິກຂຸເປືອຍກາຍຫຍ້ຳ ພວກພິກຂຸເປືອຍກາຍສັນ ພວກພິກຂຸເປືອຍກາຍຊີມຣົດ ພວກພິກຂຸເປືອຍກາຍດື່ມ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸເປືອຍກາຍບໍ່ເພິ່ງໄຫວ້ພິກຂຸເປືອຍກາຍ ບໍ່ເພິ່ງເປືອຍກາຍໄຫວ້ກັນ ອົງໃດໄຫວ້ ຕ້ອງອາບັດທຸກກົດ ພິກຂຸເປືອຍກາຍ ບໍ່ເພິ່ງໃຫ້ພິກຂຸເປືອຍກາຍໄຫວ້ ຯລຯ ພິກຂຸເປືອຍກາຍບໍ່ເພິ່ງເຮັດບໍຣິກຳໃຫ້ແກ່ພິກຂຸເປືອຍກາຍ ຯລຯ ພິກຂຸເປືອຍກາຍ ບໍ່ເພິ່ງໃຊ້ພິກຂຸເປືອຍກາຍເຮັດບໍຣິກຳ ຯລຯ ພິກຂຸເປືອຍກາຍບໍ່ເພິ່ງໃຫ້ຂອງແກ່ພິກຂຸເປືອຍກາຍ ຯລຯ ພິກຂຸບໍ່ເພິ່ງເປືອຍກາຍຮັບປະເຄນ ຯລຯ ພິກຂຸບໍ່ເພິ່ງເປືອຍກາຍຫຍ້ຳ ຯລຯ

ພິກຂຸບໍ່ເພິ່ງເປືອຍກາຍສັນ ຯລຯ. ພິກຂຸບໍ່ເພິ່ງເປືອຍກາຍຊິມຣົດ ຯລຯ ພິກຂຸບໍ່ເພິ່ງເປືອຍກາຍດື່ມ ອົງໃດດື່ມ ຕ້ອງອາບັດທຸກກົດ"

## ເລື້ອງສາລາເຮືອນໄຟແລະນ້ຳສ້າງ

ສະໄໝນັ້ນ ພິກຂຸທັງຫຼາຍວາງຈີວອນໄວ້ເທິງພື້ນດິນທີ່ໃກ້ເຮືອນໄຟ ຈີວອນເປື້ອນຝຸ່ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວຈີວອນ ສາຍຫຍຽກໃນບ່ອນ ໃກ້ເຮືອນໄຟ"

ເມື່ອຝົນຕົກຈີວອນປຽກຝົນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາລາເຮືອນໄຟ"

ສາລາເຮືອນໄຟມີພື້ນທີ່ຕ່ຳ ນ້ຳຖ້ວມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

ສະໄໝນັ້ນ ຜົງຫຍ້າຕົກທົ່ວເທິງສາລາເຮືອນໄຟ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ" ຯລຯ ພິກຂຸທັງຫຼາຍ ເຮົາອະນຸຍາດຮາວຈີວອນ ສາຍຫຍຽກ"

ສະໄໝນັ້ນ ພິກຂຸຢຳເກງທີ່ຈະເຮັດບໍຣິກຳໃນເຮືອນໄຟແດ່ ໃນນ້ຳແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງກຳບັງ ๓ ຊະນິດ ຄື ທີ່ກຳບັງເຮືອນໄຟ ທີ່ກຳບັງນ້ຳ ທີ່ກຳບັງຜ້າ"

ສະໄໝນັ້ນ ໃນເຮືອນໄຟບໍ່ມີນ້ຳ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີ ພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳສ້າງ"

ຂອບນ້ຳສ້າງຊຸດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ນ້ຳສ້າງມີພື້ນທີ່ຕ່ຳ ນ້ຳຖ້ວມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນທີ່ໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

[໔໙໔] ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ເຄືອເຂົາແດ່ ສາຍແອວແດ່ມັດພາຊະນະຕັກນ້ຳ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຊືອກສຳລັບມັດພາຊະນະຕັກນ້ຳ"

ມືທັງ ໔ ເຈັບ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຄັນໂພງຄ້າຍຄັນຊັ່ງ ຣະຫັດມື ຣະຫັດຈັກ"

ພາຊະນະທັງຫຼາຍແຕກຈຳນວນຫຼາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖັງຕັກນ້ຳ ໓ ຊະນິດ ຄື ຖັງໂລຫະ ຖັງໄມ້ ຖັງໜັງ"

ສະໄໝນັ້ນ ພິກຂຸທັງຫຼາຍຕັກນ້ຳໃນກາງແຈ້ງ ຍ່ອມລຳບາກຍ້ອນຄວາມໜາວແດ່ ຍ້ອນຄວາມຮ້ອນແດ່

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາລານ້ຳສ້າງ"

ຜົງຫຍ້າຕົກທົ່ວໃນສາລານ້ຳສ້າງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ

ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ຊຽນລວດ ລາຍດອກຈອກ ຮາວຈີວອນ ສາຍຫຍຽກ"

ສະໄໝນັ້ນ ນ້ຳສ້າງທີ່ບໍ່ອັດຝາ ຫຍ້າແຫ້ງ ຝຸ່ນແດ່ປິວລົງໄປ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

ສະໄໝນັ້ນ ບໍ່ມີພາຊະນະໃສ່ນ້ຳ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາງນ້ຳ ອ່າງນ້ຳ"

ສະໄໝນັ້ນ ພິກຂຸທັງຫຼາຍອາບນ້ຳໃນບ່ອນນັ້ນ ໆ ໃນອາຮາມ ອາຮາມມື່ນ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະອົງຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດຮາງລະບາຍນ້ຳ"

ຮາງລະບາຍນ້ຳໂລ່ງແຈ້ງໄປ ພິກຂຸທັງຫຼາຍອາຍບໍ່ກ້າອາບນ້ຳ ຯລຯ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກັ້ນກຳແພງ ໓ ຊະນິດ ຄື ກຳແພງດິນຈີ່ ກຳແພງ ສີລາ ກຳແພງໄມ້"

ນ້ຳສ້າງມື່ນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງປູລາດ ໓ ຊະນິດ ຄື ເຄື່ອງປູລາດດິນຈີ່ ເຄື່ອງປູລາດສີລາ ເຄື່ອງປູລາດໄມ້"

ນ້ຳຂັງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທໍ່ລະບາຍນ້ຳ"

ສະໄໝນັ້ນ ພິກຂຸທັງຫຼາຍມີເນື້ອໂຕປຽກຊຸ່ມເຢັນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າເຊັດໂຕ"

## ເລື້ອງສະໂບກຂະຣະນີ

[໔໓໓] ສະໄໝນັ້ນ ອຸປາສິກຄົນໜຶ່ງປະສົງຈະສ້າງສະໂບກຂະຣະນີຖວາຍສົງ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສະໂບກຂະຣະນີ"

ຂອບສະໂບກຂະຣະນີຊຸດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກໍ່ຄັນກັ້ນຂອບສະໂບກຂະຣະນີໄດ້ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍ ສີລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຢ່າງ ຄື ຂັ້ນໄດດິນຈີ່ ຂັ້ນໄດສີລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

ນ້ຳໃນສະໂບກຂະຣະນີເກົ່າ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ຮາງລະບາຍນ້ຳ ທໍ່ລະບາຍນ້ຳ"

ສະໄໝນັ້ນ ພິກຂຸອົງໜຶ່ງປະສົງຈະສ້າງເຮືອນໄຟມີປັ້ນລົມຖວາຍສົງ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຮືອນໄຟມີປັ້ນລົມ"
ສະໄໝນັ້ນ ພວກພິກຂຸສັບພັກຄີຢູ່ປາສະຈາກຜ້າປູນັ່ງເຖິງ ໔ ເດືອນ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຢູ່ປາສະຈາກຜ້າປູນັ່ງເຖິງ ໔ ເດືອນ ອົງໃດຢູ່ປາສະຈາກ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມນອນເທິງບ່ອນນອນໂຮຍດອກໄມ້

[໔໙໔] ສະໄໝນັ້ນ ພວກພິກຂຸສັບພັກຄີນອນເທິງບ່ອນນອນໂຮຍດ້ວຍດອກໄມ້
ຄົນທັງຫຼາຍຍ່າງທ່ຽວຊົມວິຫານເຫັນເຂົ້າຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນອນເທິງບ່ອນນອນໂຮຍດ້ວຍດອກໄມ້ ອົງໃດນອນ ຕ້ອງອາບັດທຸກກົດ"

## ເລື້ອງຊົງອະນຸຍາດຮັບຂອງຫອມ

ສະໄໝນັ້ນ ຄົນທັງຫຼາຍຖືຂອງຫອມແດ່ ດອກໄມ້ແດ່ມາວັດ ພິກຂຸທັງຫຼາຍຢຳເກງ ຢູ່ຈຶ່ງບໍ່ຍອມຮັບປະເຄນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບຂອງຫອມແລ້ວເຈີມໄວ້ທີ່ບານປະຕູປ່ອງຢ້ຽມ ຮັບດອກໄມ້ແລ້ວວາງໄວ້ດ້ານໜຶ່ງໃນວິຫານ"

ສະໄໝນັ້ນ ສັນຖັດຂົນຈຽມ¹ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສັນຖັດຂົນຈຽມ"

ຕໍ່ມາ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ສັນຖັດຂົນຈຽມຕ້ອງອະທິຖານຫຼືຕ້ອງວິກັບ" ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ສັນຖັດຂົນຈຽມບໍ່ຕ້ອງອະທິຖານ ບໍ່ຕ້ອງວິກັບ"

ສະໄໝນັ້ນ ພວກພິກຂຸສັບພັກຄີສັນອາຫານໂຕກ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ໆລໆ ຄືຄະລິຫັດຜູ້ບໍຣິໂພກການ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸບໍ່ເພິ່ງສັນອາຫານໂຕກ ອົງໃດສັນ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ເມື່ອຈະສັນອາຫານບໍ່ສາມາດຈະໃຊ້ມືປະຄອງບາດໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕີນບາດ"

## ເລື້ອງຫ້າມສັນໃນພາຊະນະດຽວກັນເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີສັນອາຫານໃນພາຊະນະດຽວກັນແດ່ ໆລໆ ດື່ມນ້ຳໃນໂອດຽວກັນແດ່ ໆລໆ ນອນເທິງຕຽງດຽວກັນແດ່ ໆລໆ ນອນເທິງຕຽງມີເຄື່ອງປູລາດດຽວກັນແດ່ ໆລໆ ນອນເທິງຕຽງມີຜ້າຫົ່ມຜືນດຽວແດ່ ໆລໆ ນອນເທິງຕຽງມີຜ້າຜືນດຽວເປັນທັງຜ້າປູແລະຜ້າຫົ່ມແດ່

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ໆລໆ ຄືຄະລິຫັດຜູ້ບໍຣິໂພກການ" ໆລໆ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນອາຫານໃນພາຊະນະດຽວກັນ

ໆລໆ ບໍ່ເພິ່ງດື່ມນ້ຳໃນໂອດຽວກັນ ໆລໆ ບໍ່ເພິ່ງນອນເທິງຕຽງດຽວກັນ ໆລໆ ບໍ່ເພິ່ງນອນເທິງຕຽງ ມີເຄື່ອງປູລາດດຽວກັນ ໆລໆ ບໍ່ເພິ່ງນອນເທິງຕຽງມີຜ້າຫົ່ມຜືນດຽວກັນ ໆລໆ ບໍ່ເພິ່ງນອນເທິງຕຽງ ມີຜ້າຜືນດຽວເປັນທັງຜ້າປູແລະຜ້າຫົ່ມ ອົງໃດນອນ ຕ້ອງອາບັດທຸກກົດ"

# ເລື້ອງເຈົ້າວັດທະລິດສະຫວີ

[໔໖໕] ສະໄໝນັ້ນ ເຈົ້າວັດທະລິດສະຫວີເປັນສະຫາຍຂອງພຣະເມດຕິຍະແລະພຣະພຸມມະຊະກະ[໑] ຄັ້ງນັ້ນ ເຈົ້າວັດທະລິດສະຫວີໄດ້ເຂົ້າໄປຫາພຣະເມດຕິຍະແລະພຣະພຸມມະຊະກະເຖິງທີ່ພັກ ເມື່ອເຖິງແລ້ວ ໄດ້ກ່າວກັບພຣະເມດຕິຍະແລະພຣະພຸມມະຊະກະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍໄຫວ້ຂ້ານ້ອຍ" ເມື່ອເຈົ້າວັດທະລິດສະຫວີກ່າວແບບນີ້ ພຣະເມດຕິຍະແລະພຣະພຸມມະຊະກະກໍບໍ່ຍອມເວົ້ານໍາ

ແມ່ນເທື່ອທີ ໒ ເຈົ້າວັດທະລິດສະຫວີກໍກ່າວກັບພຣະເມດຕິຍະ ແລະພຣະພຸມມະຊະກະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍໄຫວ້"

ແມ່ນເທື່ອທີ ໒ ພຣະເມດຕິຍະແລະພຣະພຸມມະຊະກະກໍບໍ່ຍອມເວົ້ານໍາ

ແມ່ນເທື່ອທີ ໓ ເຈົ້າວັດທະລິດສະຫວີກໍກ່າວກັບພຣະເມດຕິຍະ ແລະພຣະພຸມມະຊະກະວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍໄຫວ້"

ແມ່ນເທື່ອທີ ໓ ພຣະເມດຕິຍະແລະພຣະພຸມມະຊະກະກໍບໍ່ຍອມເວົ້ານໍາ

ເຈົ້າວັດທະລິດສະຫວີກ່າວຕໍ່ໄປວ່າ "ຂ້ານ້ອຍມີຄວາມຜິດອັນໃດຕໍ່ພຣະຜູ້ເປັນເຈົ້າ ເປັນຫຍັງ ພຣະຜູ້ເປັນເຈົ້າຈຶ່ງບໍ່ຍອມເວົ້າກັບຂ້ານ້ອຍ"

ພິກຂຸທັງສອງຕອບວ່າ "ຈິງແນວນັ້ນແລ ວັດທະ ພວກເຮົາຖືກພຣະທັບພະມັນລະບຸດບຽດບຽນ ທ່ານກໍຍັງເຮັດເພີກເສີຍຢູ່ໄດ້"

ເຈົ້າວັດທະລິດສະຫວີຖາມວ່າ "ຂ້ານ້ອຍຈະຊ່ອຍໄດ້ແນວໃດ ທ່ານຜູ້ຈະເລີນ"

ພິກຂຸທັງສອງຕອບວ່າ "ວັດທະ ຖ້າທ່ານເຕັມໃຈຊ່ອຍ ມື້ນີ້ແລ ພຣະຜູ້ມີພຣະພາກເຈົ້າຕ້ອງໃຫ້ພຣະທັບພະມັນລະບຸດສິກ"

ເຈົ້າວັດທະລິດສະຫວີຖາມວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຈະເຮັດແນວໃດ ຈະຊ່ອຍໄດ້ດ້ວຍວິທີໃດ"

ພິກຂຸທັງສອງຕອບວ່າ "ມາເທີ້ນ ວັດທະ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຈົ່ງຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ພຣະອົງຜູ້ຈະເລີນເລື້ອງນີ້ ບໍ່ສົມຄວນ ບໍ່ເໝາະສົມ ທິດທີ່ເຄີຍປອດໄພກໍກັບມີໄພ ທິດທີ່ບໍ່ເຄີຍມີສະໜຽດຈັງໄຮກໍກັບມີສະຫນຽດ ຈັງໄຮ ທິດທີ່ບໍ່ມີອຸປັດທະວະກໍກັບມີອຸປັດທະວະ ໃນທິດທີ່ບໍ່ເຄີຍມີລົມກໍກັບມີລົມແຮງ ນ້ຳກໍເບິ່ງ ເປັນຄືນ້ຳຮ້ອນຂຶ້ນມາ ປະຊາບໍດີຂອງຂ້ານ້ອຍຖືກພຣະທັບພະມັນລະບຸດເຮັດບໍ່ດີບໍ່ຮ້າຍ"

ເຈົ້າວັດທະລິດສະຫວີຮັບຄຳຂອງພຣະເມດຕິຍະແລະພຣະພຸມມະຊະກະແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນເລື້ອງນີ້ບໍ່ສົມຄວນບໍ່ເໝາະສົມ ທິດທີ່ເຄີຍປອດໄພກໍກັບມີໄພ ທິດທີ່ບໍ່ເຄີຍມີສະໜຽດຈັງໄຮກໍກັບມີສະໜຽດ ຈັງໄຮ ທິດທີ່ບໍ່ມີອຸປັດທະວະກໍກັບມີອຸປັດທະວະ ໃນທິດທີ່ບໍ່ເຄີຍມີລົມກໍກັບມີລົມແຮງນ້ຳກໍເບິ່ງ ເປັນຄືນ້ຳຮ້ອນຂຶ້ນມາ ປະຊາບໍດີຂອງຂ້ານ້ອຍຖືກພຣະທັບພະມັນລະບຸດເຮັດບໍ່ດີບໍ່ຮ້າຍ"

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບ ຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈື່ໄດ້ບໍວ່າໄດ້ເຮັດຕາມທີ່ເຈົ້າວັດທະນີ້ກ່າວຫາ"

ທ່ານພຣະທັບພະມັນລະບຸດຂາບທູນວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ວ່າ ຂ້າພຣະອົງເປັນແນວໃດ?"

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະທັບພະມັນລະບຸດ ຯລຯ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະທ່ານ ຈື່ໄດ້ບໍວ່າໄດ້ເຮັດຕາມທີ່ເຈົ້າວັດທະນີ້ກ່າວຫາ"

ພຣະທັບພະມັນລະບຸດກໍຂາບທູນວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ວ່າ ຂ້າພຣະອົງເປັນແນວໃດ?"

"ທັບພະ ບັນດິດຍ່ອມບໍ່ແກ້ຄຳກ່າວຫາແນວນີ້ ຖ້າທ່ານເຮັດກໍຈົ່ງບອກວ່າເຮັດ ຖ້າທ່ານບໍ່ໄດ້ເຮັດກໍຈົ່ງບອກວ່າບໍ່ໄດ້ເຮັດ"

"ພຣະອົງຜູ້ຈະເລີນ ຕັ້ງແຕ່ເກີດມາ ຂ້າພຣະອົງບໍ່ຮູ້ຈັກການເສບເມຖຸນທຳແມ່ນໃນຄວາມຝັນ ບໍ່ຈຳຕ້ອງກ່າວເຖິງເມື່ອຕອນຕື່ນຢູ່"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງຂວ້ຳບາດ[๑]ເຈົ້າວັດທະລິດສະຫວີ ຄື ຫ້າມສົມໂພກກັບສົງ"

## ເຫດແຫ່ງການຂວ້ຳບາດ

ສົງເພິ່ງຂວ້ຳບາດອຸປາສົກຜູ້ປະກອບດ້ວຍອົງ ໘ ປະການ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ
໔. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ
໓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ແຫ່ງພິກຂຸທັງຫຼາຍ
໔. ດ່າກ່າວໂທດພິກຂຸທັງຫຼາຍ
໕. ຍຸຍົງພິກຂຸທັງຫຼາຍໃຫ້ແຕກກັນ
໖. ກ່າວຕິຕຽນພຣະພຸດທະເຈົ້າ
໗. ກ່າວຕິຕຽນພຣະທຳ
໘. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຂວ່ຳບາດອຸປາສົກຜູ້ປະກອບດ້ວຍອົງ ໘ ປະການນີ້

## ວິທີຂວ່ຳບາດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງຂວ່ຳບາດແບບນີ້ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໖໖] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເຈົ້າວັດທະລິດສະຫວີໃສ່ຄວາມທ່ານພຣະທັບພະ ມັນລະບຸດ ດ້ວຍສີລະວິບັດທີ່ບໍ່ມີມູນ ຖ້າສົງພ້ອມກັນແລ້ວເພິ່ງຂວ່ຳບາດເຈົ້າວັດທະລິດສະຫວີ ຫ້າມສົມໂພກກັບສົງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເຈົ້າວັດທະລິດສະຫວີໃສ່ຄວາມທ່ານພຣະທັບພະມັນລະບຸດ ດ້ວຍສີລະວິບັດທີ່ບໍ່ມີມູນ ສົງຂວ່ຳບາດເຈົ້າວັດທະລິດສະຫວີ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການຂວ່ຳບາດເຈົ້າວັດທະລິດສະຫວີ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ເຈົ້າວັດທະລິດສະຫວີຖືກສົງຂວ່ຳບາດ ຫ້າມສົມໂພກກັບສົງແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ພຣະອານົນໄປແຈ້ງຂ່າວເຈົ້າວັດທະລິດສະຫວີ

ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ນິເວດ ຂອງເຈົ້າວັດທະລິດສະຫວີ ໄດ້ກ່າວກັບເຈົ້າວັດທະລິດສະຫວີດັ່ງນີ້ວ່າ “ວັດທະ ສົງຂວ່ຳບາດທ່ານ ຫ້າມສົມໂພກກັບສົງ” ເມື່ອເຈົ້າວັດທະລິດສະຫວີຮູ້ຂ່າວວ່າ ສົງຂວ່ຳບາດ ຫ້າມສົມໂພກກັບສົງ ຈຶ່ງສະຫຼົບລົ້ມລົງບ່ອນນັ້ນເອງ

ຂະນະນັ້ນ ມິດອຳໝາດຍາດສາໂລຫິດຂອງເຈົ້າວັດທະລິດສະຫວີ ໄດ້ກ່າວກັບເຈົ້າວັດທະລິດສະຫວີ ດັ່ງນີ້ວ່າ "ທ່ານຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ພວກເຮົາຈະຂໍໃຫ້ພຣະຜູ້ມີພຣະພາກເຈົ້າແລະ ພິກຂຸສົງຍົກໂທດໃຫ້"

ຄັ້ງນັ້ນແລ ເຈົ້າວັດທະລິດສະຫວີພ້ອມກັບໂອຣົດແລະຊາຍາ ມິດອຳໝາດຍາດສາໂລຫິດມີຜ້າປຽກຜົມປຽກ⁹ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຊົບຫົວລົງແທບພຣະບາດທັງສອງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນຂ້າພຣະອົງໄດ້ກະທຳຄວາມຜິດ ຍ້ອນຄວາມໂງ່ຈ້າເບົາປັນຍາທີ່ໄດ້ໃສ່ຄວາມພຣະທັບພະມັນລະບຸດ ດ້ວຍສີລະວິບັດທີ່ບໍ່ມີມູນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງໃຫ້ອະໄພໂທດແກ່ຂ້ານ້ອຍ ເພື່ອຄວາມສັງລວມ ຕໍ່ໄປເທີ້ນ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ຖ້າຈັ່ງຊັ້ນ ການທີ່ທ່ານໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າ ເບົາປັນຍາທີ່ໄດ້ໃສ່ຄວາມພຣະທັບພະມັນລະບຸດດ້ວຍສີລະວິບັດທີ່ບໍ່ມີມູນ ຍ້ອນເຫດທີ່ເຫັນຄວາມຜິດເປັນຄວາມຜິດແລ້ວແກ້ໄຂໃຫ້ຖືກຕ້ອງ ຂໍ້ນັ້ນເຮົາຮັບ ຍ້ອນການທີ່ບຸກຄົນເຫັນຄວາມຜິດເປັນຄວາມຜິດແລ້ວ ແກ້ໄຂໃຫ້ຖືກຕ້ອງແລະສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນວິໄນຂອງພຣະອະຣິຍະ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງຫງາຍບາດເຈົ້າວັດທະລິດສະຫວີ ໃຫ້ສົມໂພກກັບສົງໄດ້

## ເຫດແຫ່ງການຫງາຍບາດ

ພິກຂຸທັງຫຼາຍ ສົງເພິ່ງຫງາຍບາດອຸປາສົກຜູ້ປະກອບດ້ວຍອົງ ໘ ປະການ ຄື

໑. ບໍ່ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ
໒. ບໍ່ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ
໓. ບໍ່ຂົນຂວາຍເພື່ອຢູ່ບໍ່ໄດ້ແຫ່ງພິກຂຸທັງຫຼາຍ
໔. ບໍ່ດ່າກ່າວໂທດພິກຂຸທັງຫຼາຍ
໕. ບໍ່ຍຸຍົງພິກຂຸທັງຫຼາຍໃຫ້ແຕກກັນ
໖. ບໍ່ກ່າວຕິຕຽນພຣະພຸດທະເຈົ້າ
໗. ບໍ່ກ່າວຕິຕຽນພຣະທຳ
໘. ບໍ່ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫງາຍບາດອຸປາສົກຜູ້ປະກອບດ້ວຍອົງ ໘ ປະການນີ້

## ວິທີຫງາຍບາດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງຫງາຍບາດແບບນີ້ ເຈົ້າວັດທະລິດສະຫວີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸທັງຫຼາຍ ແລ້ວນັ່ງຢ່ອງຍໍ້ ປະນົມມື ກ່າວແບບນີ້ວ່າ “ທ່ານຜູ້ຈະເລີນ ສົງຂວ້ຳບາດຂ້າພະເຈົ້າ ຫ້າມສົມໂພກກັບສົງ ຂ້າພະເຈົ້າ ນັ້ນກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ແລ້ວ ຂໍການຫງາຍບາດກັບສົງ”

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໙] “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງຂວ້ຳບາດເຈົ້າວັດທະລິດສະຫວີ ຫ້າມສົມໂພກກັບສົງ ເຈົ້າວັດທະລິດສະຫວີນັ້ນກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍການຫງາຍບາດຕໍ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຫງາຍບາດເຈົ້າວັດທະລິດສະຫວີ ໃຫ້ສົມໂພກກັບສົງໄດ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງຂວ້ຳບາດເຈົ້າວັດທະລິດສະຫວີ ຫ້າມສົມໂພກກັບສົງ ເຈົ້າວັດທະລິດສະຫວີນັ້ນກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍການຫງາຍບາດ ສົງຫງາຍບາດເຈົ້າວັດທະລິດສະຫວີ ໃຫ້ສົມໂພກກັບສົງໄດ້ ທ່ານອົງໃດເຫັນດ້ວຍກັບການຫງາຍບາດເຈົ້າວັດທະລິດສະຫວີ ໃຫ້ສົມໂພກກັບສົງໄດ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ເຈົ້າວັດທະລິດສະຫວີ ສົງຫງາຍບາດ ໃຫ້ສົມໂພກກັບສົງໄດ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້”

[໔໙] ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນເວສາລີຕາມພຣະອັດທະຍາໄສແລ້ວ ສະເດັດ ຈາຣິກໄປທາງພັກຄະຊົນນະບົດ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງພັກຄະຊົນນະບົດ ໄດ້ຂ່າວວ່າພຣະຜູ້ມີພຣະພາກປະທັບຢູ່ ເພສະກະລາມະຣິຄະທາຍະວັນ ເມືອງສຸງສຸມາຣະຄິຣະໃນພັກຄະຊົນນະບົດນັ້ນ

## ເລື້ອງໂພທິຣາດຊະກຸມານ

ສະໄໝນັ້ນ ໂພທິຣາດຊະກຸມານສ້າງຜາສາດໂກກະນຸດສຳເລັດໄດ້ບໍ່ດົນ ຍັງບໍ່ໄດ້ນິມົນສະມະນະພາມຫຼືເຊີນມະນຸດຄົນໃດມາ ດັ່ງນັ້ນ ໂພທິຣາດຊະກຸມານສັ່ງມານົບສັນຊິກາບຸດວ່າ

“ມາເທີ້ນ ສະຫາຍສັນຊິກາບຸດ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຈົ່ງຖວາຍອະພິວາດແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ແລ້ວທູນຖາມເຖິງການມີພຣະປະຊວນ ເບົາບາງ ຄວາມມີພຣະໂຣຄາພາດໜ້ອຍ ຊົງມີຄວາມເບົາຕົນໂຕ ພຣະພະລານາໄມ ຊົງພຣະກະເສມສຸກສະບາຍ ແລ້ວທູນນິມົນວ່າ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງ ຈົ່ງຊົງຮັບພັດຕາຫານຂອງໂພທິຣາດຊະກຸມານເພື່ອຈະເລີນກຸສົນໃນມື້ອື່ນນີ້ ຂ້ານ້ອຍ”

ມານົບສັນຊິກາບຸດຮັບຄຳສັ່ງໂພທິຣາດຊະກຸມານແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ ປະທັບ ຂາບທູນສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ “ໂພທິຣາດຊະກຸມານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະໂຄດົມຜູ້ຈະເລີນດ້ວຍຂະໜ່ອມ ທູນຖາມພຣະປະຊວນເບົາບາງ ມີພຣະໂຣຄາພາດໜ້ອຍ ຊົງເບົາຕົນໂຕ ພຣະພະລານາໄມ ຊົງພຣະກະເສມສຸກສະບາຍ ແລະຂາບທູນນິມົນແນວນີ້ວ່າ ຂໍພຣະໂຄດົມຜູ້ຈະເລີນພ້ອມດ້ວຍພິກຂຸສົງ ຈົ່ງຮັບພັດຕາຫານຂອງໂພທິຣາດຊະກຸມານ ເພື່ອຈະເລີນກຸສົນໃນມື້ອື່ນນີ້” ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ເມື່ອມານົບສັນຊິກາບຸດຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະ ເຂົ້າໄປເຝົ້າໂພທິຣາດຊະກຸມານ ເຖິງທີ່ປະທັບ ໄດ້ທູນດັ່ງນີ້ວ່າ “ຂ້າພຣະອົງ ໄດ້ຂາບທູນພຣະໂຄດົມນັ້ນຕາມຮັບສັ່ງຂອງພຣະອົງແລ້ວວ່າ ໂພທິຣາດຊະກຸມານ ຂໍຖວາຍອະພິວາດ ພຣະບາດທັງສອງຂອງທ່ານພຣະໂຄດົມຜູ້ຈະເລີນດ້ວຍຂະໜ່ອມ ທູນຖາມພຣະປະຊວນເບົາບາງ ມີພຣະໂຣຄາພາດໜ້ອຍ ຊົງເບົາຕົນໂຕ ພຣະພະລານາໄມ ຊົງພຣະກະເສມສຸກສະບາຍແລະຂາບທູນນິມົນແນວນີ້ວ່າ ຂໍພຣະໂຄດົມຜູ້ຈະເລີນພ້ອມດ້ວຍພິກຂຸສົງ ຈົ່ງຮັບພັດຕາຫານ ຂອງໂພທິຣາດຊະກຸມານ ເພື່ອຈະເລີນກຸສົນໃນມື້ອື່ນນີ້ ກໍພຣະສະມະນະໂຄດົມຊົງຮັບນິມົນແລ້ວ”

ເມື່ອຜ່ານຣາຕີນັ້ນ ໂພທິຣາດຊະກຸມານຮັບສັ່ງໃຫ້ກຽມຂອງຫຍໍ້າຂອງສັນທີ່ປະນີດ ຮັບສັ່ງໃຫ້ໃຊ້ຜ້າຂາວປູລາດໂກກະນຸດຜາສາດ ຈົນເຖິງຂັ້ນໄດຂັ້ນສຸດທ້າຍ ຮັບສັ່ງມານົບສັນຊິກາບຸດວ່າ “ທ່ານຈົ່ງໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຂາບທູນພັດຕະການວ່າ ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ”

ມານົບສັນຊິກາບຸດຮັບຄຳສັ່ງໂພທິຣາດຊະກຸມານແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຂາບທູນພັດຕະການໃຫ້ຊົງຮັບຮູ້

ພໍເຖິງເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດ ໄປນິເວດຂອງໂພທິຣາດຊະກຸມານ ເວລານັ້ນໂພທິຣາດຊະກຸມານປະທັບຖ້າພຣະຜູ້ມີພຣະພາກເຈົ້າຢູ່ທີ່ຊຸ້ມປະຕູຊັ້ນນອກ ທອດພຣະເນດເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດ

ມາແຕ່ໄກ ຈຶ່ງສະເດັດໄປ ຕ້ອນຮັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວທູນພຣະອົງສະເດັດໄປທາງໜ້າ ເຂົ້າໂກກະນຸດຜາສາດ ພຣະຜູ້ມີພຣະພາກເຈົ້າປະທັບຢືນໃກ້ຂັ້ນໄດຂັ້ນຕ່ຳສຸດ

ໂພທິຣາດຊະກຸມານໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຢຽບຜ້າ ຂ້ານ້ອຍ ຂໍພຣະສຸດຄົດເຈົ້າໂຜດຊົງຢຽບຜ້າອັນຈະເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນ"

ເມື່ອພຣະຣາດຊະກຸມານຂາບທູນແນວນີ້ ພຣະຜູ້ມີພຣະພາກເຈົ້າຊົງດຸດສະນີພາບ

ແມ່ນເທື່ອທີ ໒ ໗ລ໗

ແມ່ນເທື່ອທີ ໓ ໂພທິຣາດຊະກຸມານກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຢຽບຜ້າ ຂ້ານ້ອຍ ຂໍພຣະສຸດຄົດເຈົ້າໂຜດຊົງຢຽບຜ້າອັນຈະເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນ"

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼຽວເບິ່ງທ່ານພຣະອານົນ ຄັ້ງນັ້ນ ທ່ານພຣະອານົນໄດ້ຖວາຍພຣະພອນໂພທິຣາດຊະກຸມານດັ່ງນີ້ວ່າ "ຣາດຊະກຸມານ ໂຜດມ້ວນຜ້າເທີ້ນ ພຣະຜູ້ມີພຣະພາກເຈົ້າຈະບໍ່ຊົງຢຽບຜ້າຂາວ ພຣະຕະຖາຄົດເຈົ້າຊົງອະນຸເຄາະຄົນລຸ້ນຫຼັງ"[๑]

ໂພທິຣາດຊະກຸມານຮັບສັ່ງໃຫ້ມ້ວນຜ້າແລ້ວໃຫ້ປູອາສະນະເທິງໂກກະນຸດຜາສາດຊັ້ນເທິງ ພຣະຜູ້ມີພຣະພາກເຈົ້າສະເດັດຂຶ້ນໂກກະນຸດຜາສາດ ປະທັບນັ່ງເທິງອາສະນະທີ່ເຂົາປູຖວາຍພ້ອມດ້ວຍພິກຂຸສົງ ພຣະຣາດຊະກຸມານຊົງນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍພຣະອົງເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ໄດ້ປະທັບນັ່ງທີ່ສົມຄວນ ລຳດັບນັ້ນພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ໂພທິຣາດຊະກຸມານເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວສະເດັດກັບ

## ເລື້ອງຊົງຫ້າມຢຽບຜືນຜ້າຂາວ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຢຽບຜືນຜ້າທີ່ປູໄວ້ ອົງໃດຢຽບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ສະຕີຜູ້ໜຶ່ງບໍ່ມີລູກ ນິມົນພິກຂຸທັງຫຼາຍແລ້ວປູຜ້າກ່າວວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ນິມົນຢຽບຜ້າເທີ້ນ"

ພິກຂຸທັງຫຼາຍຢໍາເກງຢູ່ຈຶ່ງບໍ່ຍອມຢຽບ ນາງກ່າວວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ນິມົນຢຽບຜ້າເພື່ອເປັນສິຣິມຸງຄຸນ" ພິກຂຸທັງຫຼາຍຢໍາເກງຢູ່ຈຶ່ງບໍ່ຍອມຢຽບ

ລໍາດັບນັ້ນ ສະຕີນັ້ນຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະຜູ້ເປັນເຈົ້າທັງຫຼາຍ ຖືກຂໍເພື່ອເປັນສິຣິມຸງຄຸນກໍບໍ່ຍອມຢຽບຜ້ານໍ"

ພິກຂຸທັງຫຼາຍໄດ້ຍິນສະຕີນັ້ນຕໍາໜິ ປະນາມ ໂພນທະນາ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຄະລິຫັດຕ້ອງການສິຣິມຸງຄຸນ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທີ່ຖືກຂໍເພື່ອເປັນສິຣິມຸງຄຸນຢຽບພືນຜ້າໄດ້"

ສະໄໝນັ້ນ ພິກຂຸທັງຫຼາຍຢໍາເກງທີ່ຈະຢຽບຜ້າເຊັດຕີນສະອາດ
ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຢຽບຜ້າເຊັດຕີນສະອາດໄດ້"

**ພານະວານທີ ໔ ຈົບ**

## ເລື້ອງນາງວິສາຂາມິຄາຣະມາຕາ

[໔໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພັກຄະຊົນນະບົດ ຕາມພຣະອັດທະຍາໄສ ແລ້ວສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລໍາດັບ ຈົນເຖິງນະຄອນສາວັດຖີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະຄະຫະບໍດີ ໃນນະຄອນສາວັດຖີນັ້ນ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຖືໝໍ້ນໍ້າ ປຸ່ມໄມ້ທີ່ເຊັດຕີນແລະໄມ້ກວາດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ຂາບທູນວ່າ "ພຣະອົງໂຜດຮັບໝໍ້ນໍ້າ ປຸ່ມໄມ້ທີ່ເຊັດຕີນແລະໄມ້ກວາດ ອັນຈະເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບໝໍ້ນໍ້າແລະໄມ້ກວາດ ແຕ່ບໍ່ຊົງຮັບປຸ່ມໄມ້ທີ່ເຊັດຕີນ ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ນາງວິສາຂາມິຄາຣະມາຕາເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທໍາມີກະຖາ

ລຳດັບນັ້ນ ນາງວິສາຂາມິຄາຣະມາຕາເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທັມມີກະຖາແລ້ວ ລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳ ປະທັກຂິນແລ້ວກັບໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໝົ້ນ້ຳແລະໄມ້ກວາດ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ປຸ່ມໄມ້ທີ່ເຊັດຕີນ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດ ທີ່ຖູຕີນ ໓ ຊະນິດ ຄື ສິລາ ແຮ່ ສິລາຟອງນ້ຳ"

## ເລື້ອງພັດວີ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາ ຖືພັດວີກັບພັດໃບຕານເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດ ຊົງຮັບພັດວີແລະພັດໃບຕານ ອັນຈະເປັນໄປເພື່ອເກື້ອກູນ ເພື່ອຄວາມສຸກແກ່ຂ້ານ້ອຍພຣະອົງ ຕະຫລອດການນານເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບພັດວີແລະພັດໃບຕານ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ ແຈ່ງໃຫ້ນາງວິສາຂາມິຄາຣະມາຕາເຫັນແຈ້ງ ຯລຯ ກະທຳປະທັກຂິນແລ້ວຈາກໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດພັດວີແລະພັດໃບຕານ"

ສະໄໝນັ້ນ ແສ້ປັດຍຸງເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ ມີພຣະ ພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດແສ້ປັດຍຸງ"

ແສ້ຂົນຈາມະຣີເກີດຂຶ້ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ແສ້ຂົນຈາມະຣີ ອົງໃດ ໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດແສ້ ໓ ຊະນິດ ຄື ແສ້ປໍ ແສ້ແຝກ ແສ້ຂົນ ນົກຍູງ"

# ເລື່ອງຄັນຮົ່ມ

[໔໗໐] ສະໄໝນັ້ນ ຄັນຮົ່ມເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຄັນຮົ່ມ"

ສະໄໝນັ້ນ ພວກພິກຂຸສັບພັກຄີກັ້ງຄັນຮົ່ມຍ່າງທ່ຽວ ຄັ້ງນັ້ນ ອຸປາສົກຄົນໜຶ່ງໄປທ່ຽວອຸທະຍານກັບສາວົກຂອງອາຊີວົກຫຼາຍຄົນ ພວກສາວົກອາຊີວົກເຫັນພວກພິກຂຸສັບພັກຄີຍ່າງກັ້ງຄັນຮົ່ມມາແຕ່ໄກ ຈຶ່ງໄດ້ກ່າວກັບອຸປາສົກນັ້ນດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນເຫຼົ່ານີ້ຂອງທ່ານຍ່າງກັ້ງຄັນຮົ່ມມາຄ້າຍໂຫລາຈານແລະມະຫາອຳໝາດ"

ອຸປາສົກກ່າວວ່າ "ທ່ານເຫຼົ່ານີ້ບໍ່ແມ່ນພິກຂຸ ແຕ່ເປັນປະຣິພາຊົກຂ້ານ້ອຍ"

ພວກເຂົາພະນັນກັນວ່າ "ເປັນພິກຂຸບໍເປັນພິກຂຸ"

ລຳດັບນັ້ນ ອຸປາສົກຈຳພວກພິກຂຸທີ່ເຂົ້າມາໃກ້ໄດ້ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະຜູ້ເປັນເຈົ້າຜູ້ຈະເລີນທັງຫຼາຍຈຶ່ງກັ້ງຄັນຮົ່ມຍ່າງທ່ຽວນໍ"

ພິກຂຸທັງຫຼາຍໄດ້ຍິນອຸປາສົກຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຯລຯ ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກັ້ງຄັນຮົ່ມ ອົງໃດກັ້ງ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ຂາດຄັນຮົ່ມບໍ່ມີຄວາມຜາສຸກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ກັ້ງຄັນຮົ່ມໄດ້"

ສະໄໝນັ້ນ ພິກຂຸທັງຫຼາຍຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຄັນຮົ່ມແກ່ພິກຂຸໄຂ້ທໍ່ນັ້ນ ບໍ່ຊົງອະນຸຍາດແກ່ຜູ້ບໍ່ເປັນໄຂ້" ຈຶ່ງຢຳເກງທີ່ຈະກັ້ງຄັນຮົ່ມໃນວັດ ໃນເຂດວັດ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຖິງຈະບໍ່ເປັນໄຂ້ກໍກັ້ງຄັນຮົ່ມໃນວັດ ໃນເຂດວັດໄດ້"

## ເລື້ອງໄມ້ການເທົ້າ

ສະໄໝນັ້ນ ພິກຂຸອົງໜຶ່ງເອົາບາດໃສ່ສາແຫຼກ ໃຊ້ໄມ້ການເທົ້າຄອນຍ່າງກາຍໄປທາງປະຕູ ເຂົ້າໝູ່ບ້ານແຫ່ງໜຶ່ງໃນເວລາວິການ ຄົນທັງຫຼາຍບອກກັນວ່າ "ເບິ່ງນັ້ນໂຈນກຳລັງຍ່າງໄປດາບສ່ອງແສງວາວວັບ" ແລ້ວພາກັນແລ່ນໄລ່ຈັບ ຈື່ໄດ້ຈຶ່ງປ່ອຍໄປ ເມື່ອພິກຂຸນັ້ນໄປເຖິງວັດຈຶ່ງເລົ່າເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຖາມວ່າ "ທ່ານໃຊ້ໄມ້ການເທົ້າກັບສາແຫຼກບໍ"

ພິກຂຸນັ້ນຮັບວ່າ "ແນວນັ້ນ ທ່ານທັງຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຈຶ່ງໃຊ້ໄມ້ການເທົ້າກັບສາແຫຼກນໍ"

ຕໍ່ມາ ພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໄມ້ການເທົ້າກັບສາແຫຼກ ອົງໃດໃຊ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ຂາດໄມ້ການເທົ້າ ທ່ານບໍ່ສາມາດຈະຍ່າງໄປໄສໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງໃຫ້ທັນທະສົມມຸດແກ່ ພິກຂຸຜູ້ເປັນໄຂ້"

### ຄຳຂໍທັນທະສົມມຸດ[១] ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ທັນທະສົມມຸດແນວນີ້ ພິກຂຸໄຂ້ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍແລ້ວນັ່ງຍ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍເປັນໄຂ້ຂາດໄມ້ການເທົ້າແລ້ວບໍ່ສາມາດຈະຍ່າງໄປໄສໄດ້ ຂ້ານ້ອຍຈຶ່ງຂໍທັນທະສົມມຸດຕໍ່ສົງ"

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດໄມ້ການເທົ້າແລ້ວບໍ່ສາມາດ ຈະຍ່າງໄປໄສໄດ້ ທ່ານຂໍທັນທະສົມມຸດຕໍ່ສົງ ສົງພ້ອມກັນແລ້ວ ເພິ່ງໃຫ້ທັນທະສົມມຸດແກ່ພິກຂຸນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດໄມ້ການເທົ້າແລ້ວບໍ່ສາມາດຈະຍ່າງໄປໄສໄດ້ ທ່ານຂໍທັນທະສົມມຸດຕໍ່ສົງ ສົງໃຫ້ທັນທະສົມມຸດ ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ທັນທະສົມມຸດແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ທັນທະສົມມຸດ ສົງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

[໔໗໑] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ຂາດສາແຫຼກແລ້ວບໍ່ສາມາດນຳບາດໄປໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງໃຫ້ສິກກາສົມມຸດແກ່ ພິກຂຸໄຂ້"

## ຄຳຂໍສິກກາສົມມຸດ[១]ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສິກກາສົມມຸດແນວນີ້ ພິກຂຸເປັນໄຂ້ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍແລ້ວນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍເປັນໄຂ້ ຂາດສາແຫຼກແລ້ວບໍ່ສາມາດນຳບາດໄປໄດ້ ຂ້ານອຍຈຶ່ງຂໍສິກກາສົມມຸດຕໍ່ສົງ"

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດສາແຫຼກແລ້ວບໍ່ສາມາດນຳບາດໄປໄດ້ ທ່ານຂໍສິກກາສົມມຸດຕໍ່ສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ສິກກາ ສົມມຸດແກ່ພິກຂຸນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດສາແຫຼກແລ້ວບໍ່ສາມາດຈະນຳບາດໄປໄດ້ ທ່ານຂໍສິກກາສົມມຸດຕໍ່ສົງ ສົງໃຫ້ສິກກາສົມມຸດແກ່ພິກຂຸຊື່ນີ້ ທ່ານອົງ

ໃດເຫັນດ້ວຍກັບການໃຫ້ສິກກາສົມມຸດແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສິກກາສົມມຸດ ສົງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໔໗໔] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ຂາດໄມ້ການເທົ້າບໍ່ສາມາດຈະຍ່າງໄປໄສໄດ້ ຂາດສາແຫຼກກໍບໍ່ສາມາດຈະນຳບາດໄປໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງໃຫ້ທັນທະສິກກາສົມມຸດ ແກ່ພິກຂຸຜູ້ເປັນໄຂ້"

## ຄຳຂໍທັນທະສິກກາສົມມຸດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ທັນທະສິກກາສົມມຸດແນວນີ້ ພິກຂຸເປັນໄຂ້ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍແລ້ວນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍເປັນໄຂ້ ຂາດໄມ້ການເທົ້າບໍ່ສາມາດ ຈະໄປໄສໄດ້ ຂາດສາແຫຼກບໍ່ສາມາດຈະນຳບາດໄປໄດ້ ຂ້ານ້ອຍຂໍທັນທະສິກກາສົມມຸດຕໍ່ສົງ"

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ
ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດໄມ້ການເທົ້າບໍ່ສາມາດ ຈະຍ່າງໄປໄສໄດ້ ຂາດສາແຫຼກບໍ່ສາມາດຈະນຳບາດໄປໄດ້ ທ່ານຂໍທັນທະສິກກາສົມມຸດຕໍ່ສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ທັນທະສິກກາສົມມຸດແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນໄຂ້ ຂາດໄມ້ການເທົ້າບໍ່ສາມາດ ຈະຍ່າງໄປໄສໄດ້ ຂາດສາແຫຼກບໍ່ສາມາດຈະນຳບາດໄປໄດ້ ທ່ານຂໍທັນທະສິກກາສົມມຸດຕໍ່ສົງ ສົງໃຫ້ທັນທະສິກກາສົມມຸດແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ທັນທະສິກກາສົມມຸດແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ທັນທະສິກກາສົມມຸດ ສົງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພິກຂຸຄາຍອາຫານ

[໔໗໓] ສະໄໝນັ້ນ ພິກຂຸອົງໜຶ່ງມີນິໄສຄ້ຽວເອື້ອງ ທ່ານຄາຍອາຫານອອກມາຫຍໍ້າ ແລ້ວກືນເຂົ້າໄປອີກ ພິກຂຸທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ພິກຂຸນີ້ສັນອາຫານ ໃນເວລາວິການ" ແລ້ວນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີ້ເພິ່ງຈຸຕິມາຈາກກໍາເນີດງົວ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ມີນິໄສຄ້ຽວເອື້ອງ ຄ້ຽວເອື້ອງໄດ້ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກືນອາຫານທີ່ອອກມານອກປາກ ແລ້ວເຂົ້າໄປອີກ ອົງໃດກືນ ເພິ່ງປັບອາບັດຕາມທໍາ"

ສະໄໝນັ້ນ ສະມາຄົມໜຶ່ງໄດ້ຈັດສັງຄະພັດ ມີເມັດເຂົ້າຕົກເຮ່ຍທົ່ວໃນໂຮງອາຫານຫຼວງຫຼາຍ ຄົນທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດ ເມື່ອເຂົາຖວາຍເຂົ້າສຸກ ຈຶ່ງບໍ່ຮັບໂດຍເອື້ອເຟື້ອນໍ ເຂົ້າແຕ່ລະເມັດກວ່າຈະສໍາເລັດໄດ້ຕ້ອງໃຊ້ກໍາວິທີນັບຮ້ອຍ"

ພິກຂຸທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕໍາໜິ ປະນາມ ໂພນທະນາ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຈັບອາຫານທີ່ເຂົາຖວາຍ ເຊິ່ງຕົກລົງໄປຂຶ້ນມາສັນໄດ້ເອງ ອາຫານນັ້ນພວກທາຍົກເຂົາບໍລິຈາກແລ້ວ"

## ເລື້ອງການຈິ່ງເລັບແລະຕັດເລັບ

[໔໗໔] ສະໄໝນັ້ນ ພິກຂຸອົງໜຶ່ງຈິ່ງເລັບຍາວທ່ຽວບິນທະບາດ ຍິງຄົນໜຶ່ງເຫັນຈຶ່ງ ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ເຊີນທ່ານມາເສບເມຖຸນທໍາກັບເທີ້ນຂ້ານ້ອຍ"

ພິກຂຸຕອບວ່າ "ຢ່າເລີຍນາງ ເລື້ອງນີ້ບໍ່ສົມຄວນ"

ຍິງນັ້ນກ່າວວ່າ "ຖ້າທ່ານບໍ່ເສບ ເຮົາຈັກໃຊ້ເລັບຢິກຂ່ວນເນື້ອໂຕເອງແລ້ວສົ່ງສຽງ ເອະອະດ່ຽວນີ້ວ່າ ພິກຂຸອົງນີ້ກະທໍາບໍ່ດີບໍ່ຮ້າຍເຮົາ"

ພິກຂຸຕອບວ່າ "ຈົ່ງຮູ້ເອງເທີ້ນ ນາງ"

ລໍາດັບນັ້ນ ຍິງນັ້ນໃຊ້ເລັບຢິກຂ່ວນເນື້ອໂຕເອງ ສົ່ງສຽງເອະອະວ່າ "ພິກຂຸນີ້ກະທໍາ ບໍ່ດີບໍ່ຮ້າຍເຮົາ"

ຄົນທັງຫຼາຍແລ່ນເຂົ້າໄປຈັບກຸມພິກຂຸນັ້ນ ໄດ້ເຫັນຜິວໜັງແດ່ ເລືອດແດ່ທີ່ເລັບມືຂອງຍິງນັ້ນຈຶ່ງກ່າວກັນວ່າ "ນີ້ເປັນການກະທຳຂອງຍິງນີ້ເອງ ພິກຂຸນີ້ບໍ່ໄດ້ເປັນໂຕການ" ແລ້ວປ່ອຍພິກຂຸນັ້ນໄປ ເມື່ອພິກຂຸນັ້ນໄປເຖິງວັດໄດ້ບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຖາມວ່າ "ທ່ານຈົ່ງເລັບຍາວບໍ"
ພິກຂຸນັ້ນຕອບວ່າ "ຈິງແນວນັ້ນ ທ່ານທັງຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງຈົ່ງເລັບຍາວນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຈົ່ງເລັບຍາວ ອົງໃດຈົ່ງຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ເລັບມືຕັດເລັບມືແດ່ ໃຊ້ປາກກັດເລັບແດ່ ໃຊ້ເລັບມື ຂູດທີ່ຝາແດ່ ນິ້ວມືເຈັບ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມີດຕັດເລັບ"

ພິກຂຸທັງຫຼາຍຕັດເລັບຈົນເລືອດອອກ ນິ້ວມືເຈັບ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕັດເລັບສະເໝີເນື້ອ"

## ເລື້ອງຂັດເລັບ

ສະໄໝນັ້ນ ພວກພິກຂຸສັບພັກຄິຊ່ອຍກັນຂັດເລັບທັງ ໒໐ ເລັບ ຄົນທັງຫຼາຍຕຳໜິປະນາມ ໂພນທະນາວ່າ "ເຮັດຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຂັດເລັບທັງ ໒໐ ເລັບ ອົງໃດຂັດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຄະຂີ້ເລັບໄດ້ທໍ່ນັ້ນ"

## ເລື້ອງມີດແຖ

[໒໗໕] ສະໄໝນັ້ນ ພິກຂຸທັງຫຼາຍຈົ່ງຜົມຍາວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງຖາມວ່າ "ພິກຂຸທັງຫຼາຍ ພິກຂຸສາມາດແຖຜົມໃຫ້ແກ່ກັນໄດ້ບໍ"

ພິກຂຸທັງຫຼາຍທູນຕອບວ່າ "ສາມາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຯລຯ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມີດແຖ ຫີນລັບມີດ ຝັກມີດ ຜ້າພັນມີດ ເຄື່ອງໃຊ້ແຖທຸກຊະນິດ"

## ເລື້ອງແຕ່ງໜວດ

ສະໄໝນັ້ນ ພວກພິກຂຸສັບພັກຄີຊ່ອຍກັນແຕ່ງໜວດ ຯລຯ ປ່ອຍໜວດໄວ້ຍາວ ຯລຯ ຈົ່ງເຄົາຍາວ(ຄືໜວດແບ້) ຯລຯ ຊ່ອຍກັນແຕ່ງໜວດເປັນຮູບສີ່ຫຼ່ຽມ ຯລຯ ຊ່ອຍກັນແຕ່ງຂົນ ໜ້າເອິກ ຯລຯ ຊ່ອຍກັນແຕ່ງຂົນໜ້າທ້ອງ ຯລຯ ຊ່ອຍກັນແຕ່ງໜວດເປັນເຂົາໂຄ້ງ ຯລຯ ຊ່ອຍກັນແຖຂົນໃນບ່ອນແຄບ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຊ່ອຍກັນຕັດໜວດ ຯລຯ ບໍ່ເພິ່ງ ປ່ອຍໜວດໄວ້ຍາວ ຯລຯ ບໍ່ເພິ່ງໄວ້ເຄົາຍາວ (ຄືໜວດແບ້) ຯລຯ ບໍ່ເພິ່ງຊ່ອຍກັນແຕ່ງໜວດ ເປັນຮູບສີ່ຫຼ່ຽມ ຯລຯ ບໍ່ເພິ່ງຊ່ອຍກັນແຕ່ງຂົນໜ້າເອິກ ຯລຯ ບໍ່ເພິ່ງຊ່ອຍກັນແຕ່ງຂົນໜ້າທ້ອງ ຯລຯ ບໍ່ເພິ່ງຊ່ອຍກັນແຕ່ງໜວດເປັນເຂົາໂຄ້ງ ຯລຯ ບໍ່ເພິ່ງຊ່ອຍກັນແຖຂົນໃນບ່ອນແຄບ ອົງໃດຊ່ອຍກັນແຖ ຕ້ອງອາບັດທຸກກົດ"

## ເລື້ອງຊົງອະນຸຍາດໃຫ້ແຖຂົນໃນບ່ອນລັບ

ສະໄໝນັ້ນ ພິກຂຸອົງໜຶ່ງເປັນບາດໃນບ່ອນແຄບ ທາຢາບໍ່ຕິດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຖຂົນໃນບ່ອນແຄບໄດ້ ຍ້ອນອາພາດເປັນປັດໄຈ"

## ເລື້ອງກັນໄກ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ກັນໄກຕັດຜົມ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ກັນໄກຕັດຜົມ ອົງໃດໃຊ້ຕັດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນບາດທີ່ຫົວ ບໍ່ອາດຈະໃຊ້ມີດແຖແຖຜົມໄດ້

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ກັນໄກຕັດຜົມໄດ້ຍ້ອນອາພາດເປັນປັດໄຈ"

## ເລື້ອງຈົ່ງຂົນດັງ

ສະໄໝນັ້ນ ພິກຂຸທັງຫຼາຍ ປ່ອຍຂົນດັງໄວ້ຍາວ ຄົນທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ຄືພີສາດ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຈົ່ງຂົນດັງຍາວ ອົງໃດຈົ່ງຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ກ້ອນຫີນແດ່ ຂີ້ເຜີ້ງແດ່ລົກຂົນດັງ ດັງເຈັບ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ແໜບ"

## ເລື້ອງພຣະສັບພັກຄີລົກຜົມຫງອກ

ສະໄໝນັ້ນ ພວກພິກຂຸສັບພັກຄີຊ່ອຍກັນລົກຜົມຫງອກ ພວກຄົນທັງຫຼາຍພາກັນຕໍາໜິປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຊ່ອຍກັນລົກຜົມຫງອກ ອົງໃດຊ່ອຍກັນລົກ ຕ້ອງອາບັດທຸກກົດ"

## ເລື້ອງໄມ້ແຄະຂີ້ຫູ

[໘໗໖] ສະໄໝນັ້ນ ພິກຂຸອົງໜຶ່ງມີຂີ້ຫູຈຸກຮູຫູທັງ ໒ ຂ້າງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ໄມ້ແຄະຂີ້ຫູ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ໄມ້ແຄະຂີ້ຫູຊະນິດຕ່າງ ໆ ຄື ເຮັດດ້ວຍຄໍາ ເຮັດດ້ວຍເງິນ

ຄົນທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລິຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໄມ້ແຄະຂີ້ຫູຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ໄມ້ແຄະຂີ້ຫູເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍເຂົາສັດ ເຮັດດ້ວຍໄມ້ອໍ້ ເຮັດດ້ວຍໄມ້ໄຜ່ ເຮັດດ້ວຍໄມ້ທໍາມະດາ ເຮັດດ້ວຍຄັ່ງ ເຮັດດ້ວຍເມັດໝາກໄມ້ ເຮັດດ້ວຍໂລຫະ ເຮັດດ້ວຍກາບຫອຍສັງ"

## ເລື້ອງພຣະສັບພັກຄີສະສົມໂລຫະແລະທອງສໍາລິດ

[໔໗໗] ສະໄໝນັ້ນ ພວກພິກຂຸສັບພັກຄີສະສົມໂລຫະ ທອງສໍາລິດໄວ້ເປັນຈໍານວນຫຼາຍ ຄົນທັງຫຼາຍໄປທ່ຽວຊົມວິຫານພົບເຫັນຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງສະສົມໂລຫະ ທອງສໍາລິດ ໄວ້ເປັນຈໍານວນຫຼາຍ ຄືພໍ່ຄ້າຂາຍເຄື່ອງຄໍາສໍາລິດນໍ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສະສົມໂລຫະທອງສໍາລິດໄວ້ເປັນຈໍານວນຫຼາຍ ອົງໃດສະສົມ ຕ້ອງອາບັດທຸກກົດ"

## ເລື້ອງກ່ອງຢາຕາ

ສະໄໝນັ້ນ ພິກຂຸທັງຫຼາຍລັງກຽດກ່ອງຢາຕາແດ່ ໄມ້ທາຢາຕາແດ່ ໄມ້ແຄະຂີ້ຫູແດ່ ຂອງທີ່ໃຊ້ຫໍ່ແດ່

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກ່ອງຢາຕາ ໄມ້ທາຢາຕາ ໄມ້ແຄະຂີ້ຫູ ຂອງທີ່ໃຊ້ຫໍ່"

## ເລື້ອງຜ້າຮັດເຂົ່າ

ສະໄໝນັ້ນ ພວກພິກຂຸສັບພັກຄີນັ່ງໃຊ້ສັງຄາຕິຮັດເຂົ່າ ແຜ່ນສັງຄາຕິລຸດ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນັ່ງຮັດເຂົ່າດ້ວຍສັງຄາຕິ ອົງໃດນັ່ງຮັດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ທ່ານຂາດຜ້າຮັດເຂົ່າຍ່ອມບໍ່ມີຄວາມຜາສຸກ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຮັດເຂົ່າ"

ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ຈະເຮັດຜ້າຮັດເຂົ່າແນວໃດ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ສະດືງ ທີ່ແຜ່ດ້າຍ ຟືມ ດ້າຍພັນ ໄມ້ສະລັກທໍ ເຄື່ອງທູກທຸກຢ່າງ"

## ເລື້ອງສາຍແອວ

[໔໗໘] ສະໄໝນັ້ນ ພິກຂຸອົງໜຶ່ງບໍ່ໄດ້ຮັດສາຍແອວເຂົ້າໄປບິນທະບາດ ອັນຕະຣະວາສົກ (ສະບົງ)ຂອງທ່ານລຸດທີ່ຖະໜົນ ຄົນທັງຫຼາຍເຫັນແລ້ວພາກັນໂຫ່ຮ້ອງ ພິກຂຸນັ້ນເຂີນອາຍ ເມື່ອ ພິກຂຸນັ້ນໄປເຖິງວັດຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ໄດ້ຮັດສາຍແອວບໍ່ເພິ່ງເຂົ້າໝູ່ບ້ານ ອົງໃດເຂົ້າ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດສາຍແອວ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ສາຍແອວຊະນິດຕ່າງ ໆ ຄື ປະຄົດຖັກເຊືອກ ຖັກເປັນຫົວງູນ້ຳ ກົມຄ້າຍກຽວເຊືອກ ຄ້າຍສັງວານ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ສາຍແອວຊະນິດຕ່າງ ໆ ຄື ປະຄົດຖັກເຊືອກ ຖັກເປັນຫົວງູນ້ຳ ກົມຄ້າຍກຽວເຊືອກ ຄ້າຍສັງວານ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດສາຍແອວ ໒ ຊະນິດ ຄື ປະຄົດແຜ່ນຜ້າ ປະຄົດໄສ້ໝູ"

ຊາຍສາຍແອວລຸ່ຍ ໗ລ໗ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ຖັກຄ້າຍກຽວເຊືອກ ຫຼື ຄ້າຍສັງວານ"

ປາຍສາຍແອວລຸ່ຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດ ໃຫ້ຫຍິບທົບເຂົ້າມາແລ້ວຖັກເປັນບ້ວງ"

ປາຍບ້ວງສາຍແອວລຸ່ຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດລູກຖະວິນ"[໑]

## ເລື້ອງພຣະສັບພັກຄີໃຊ້ລູກຖະວິນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ລູກຖະວິນຊະນິດຕ່າງ ໆ ເຮັດດ້ວຍຄຳ ເຮັດດ້ວຍເງິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ລູກຖະວິນຊະນິດຕ່າງ ໆ ຮູບ ໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດລູກຖະວິນເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍເຂົາສັດ ເຮັດດ້ວຍໄມ້ອໍ້ ເຮັດດ້ວຍໄມ້ໄຜ່ ຯລຯ ເຮັດດ້ວຍກາບຫອຍສັງ ເຮັດດ້ວຍເສັ້ນດ້າຍ"

## ເລື້ອງລູກດຸມ

[໔໗໙] ສະໄໝນັ້ນ ທ່ານພຣະອານົນທົ່ມສັງຄາຕິເນື້ອບາງເຂົ້າໄປບິນທະບາດໃນໝູ່ບ້ານ ສັງຄາຕິຖືກລົມບ້າໝູພັດຈ້ອນຂຶ້ນ ເມື່ອທ່ານພຣະອານົນກັບໄປເຖິງອາຣາມຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດລູກດຸມ ຮັງດຸມ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ລູກດຸມຊະນິດຕ່າງ ໆ ເຮັດດ້ວຍຄຳ ເຮັດດ້ວຍເງິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ລູກດຸມຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດລູກດຸມເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍ ເຂົາສັດ ເຮັດດ້ວຍໄມ້ອໍ້ ເຮັດດ້ວຍໄມ້ໄຜ່ ເຮັດດ້ວຍໄມ້ຈິງ ເຮັດດ້ວຍຢາງໄມ້ ເຮັດດ້ວຍໝາກໄມ້ ເຮັດດ້ວຍໂລຫະ ເຮັດດ້ວຍກາບຫອຍສັງ ເຮັດດ້ວຍເສັ້ນດ້າຍ"

ສະໄໝນັ້ນ ພິກຂຸທັງຫຼາຍຫຍິບຕິດລູກດຸມແດ່ ຮັງດຸມແດ່ທີ່ຈີວອນ ຈີວອນຂາດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດແຜ່ນຜ້າຮອງລູກດຸມ ຜ້າຮອງຮັງດຸມ"

ພິກຂຸທັງຫຼາຍຫຍິບແຜ່ນຜ້າຮອງລູກດຸມ ຜ້າຮອງຮັງດຸມທີ່ຊາຍຈີວອນ ແຈຜ້າເປີດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕິດແຜ່ນຜ້າຮອງລູກດຸມ ຜ້າຮອງຮັງດຸມທີ່ຊາຍຜ້າເລີກເຂົ້າໄປ ໗-໘ ອົງຄຸລີ"໑

## ເລື້ອງການນຸ່ງຫົ່ມແບບຄະລຶຫັດ

[໔໗໐] ສະໄໝນັ້ນ ພວກພິກຂຸສັບພັກຄີນຸ່ງຜ້າແບບຄະລຶຫັດ ຄື ນຸ່ງປ່ອຍຊາຍ ຄືງວງຊ້າງ ຄືຫາງປາ ປ່ອຍຊາຍສີ່ແຊກ ປ່ອຍຊາຍຄ້າຍກ້ານຕານຍົກກີບ ຕັ້ງຮ້ອຍ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເຮັດຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນຸ່ງຜ້າແບບຄະລຶຫັດ ຄື ນຸ່ງປ່ອຍຊາຍຄືງວງຊ້າງ ຄືຫາງປາ ປ່ອຍຊາຍສີ່ແຊກ ປ່ອຍຊາຍຄ້າຍກ້ານຕານຍົກກີບຕັ້ງຮ້ອຍ ອົງໃດນຸ່ງ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີຫົ່ມຜ້າແບບຄະລຶຫັດ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເຮັດຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຫົ່ມຜ້າແບບຄະລຶຫັດອົງໃດຫົ່ມ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີນຸ່ງຜ້າໂຈງກະເບນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເຮັດຄືຄົນຫາບຂອງຫຼວງ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນຸ່ງຜ້າໂຈງກະເບນ ອົງໃດນຸ່ງ ຕ້ອງອາບັດທຸກກົດ"

## ເລື່ອງຫາບຂອງ

[໔໗໑] ສະໄໝນັ້ນ ພວກພິກຂຸສັບພັກຄີຫາບຂອງ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເຮັດຄືຄົນຫາບຂອງຫຼວງ"

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຫາບຂອງ ອົງໃດຫາບ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຄອນ ຫາມ ເທີນ ແບກ ຕັ້ງແອວ ຫິ້ວ"

## ເລື່ອງໄມ້ຖູແຂ້ວ[1]

[໔໗໔] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ຫຍ້ຳໄມ້ຖູແຂ້ວ ປາກມີກິ່ນເໝັນ

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ການບໍ່ຫຍ້ຳໄມ້ຖູແຂ້ວມີໂທດ ໕ ປະການນີ້ ໂທດ ໕ ປະການຄື

໑. ຕາຝ້າຟາງ
໒. ປາກມີກິ່ນເໝັນ
໓. ປະສາດລີ້ນຮັບຣົດໄດ້ບໍ່ດີ
໔. ນ້ຳບີແລະເສມຫະຫຸ້ມຫໍ່ອາຫານ
໕. ເບື່ອອາຫານ

ພິກຂຸທັງຫຼາຍ ການບໍ່ຫຍ້ຳໄມ້ຖູແຂ້ວມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ການຫຍ້ຳໄມ້ຖູແຂ້ວມີປະໂຫຍດ ໕ ປະການ ຄື

໑. ຕາສະຫວ່າງ
໒. ປາກບໍ່ມີກິ່ນເໝັນ
໓. ປະສາດລີ້ນຮັບຣົດໄດ້ດີ
໔. ນ້ຳບີແລະເສມຫະບໍ່ຫຸ້ມຫໍ່ອາຫານ
໕. ຈະເລີນອາຫານ

ພິກຂຸທັງຫຼາຍ ການຫຍ້ຳໄມ້ຖູແຂ້ວມີປະໂຫຍດ ໕ ປະການນີ້ແລ ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ຖູແຂ້ວ

ສະໄໝນັ້ນ ພວກພິກຂຸສັບພັກຄີຫຍ້ຳໄມ້ຖູແຂ້ວຂະໜາດຍາວ ໃຊ້ໄມ້ເຫຼົ່ານັ້ນຕີສາມະເນນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຫຍ້ຳໄມ້ຖູແຂ້ວຂະໜາດຍາວ ອົງໃດຫຍ້ຳ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ຖູແຂ້ວຍາວ ໘ ນີ້ວເປັນຢ່າງຫຼາຍ ແລະພິກຂຸບໍ່ເພິ່ງໃຊ້ໄມ້ຖູແຂ້ວນັ້ນຕີສາມະເນນ ອົງໃດຕີ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງຫຍ້ຳໄມ້ຖູແຂ້ວສັ້ນເກີນໄປ ຈຶ່ງລຸດເຂົ້າໄປຕິດໃນລຳຄໍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຫຍ້ຳໄມ້ຖູແຂ້ວສັ້ນເກີນໄປ ອົງໃດຫຍ້ຳ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ຖູແຂ້ວສັ້ນ ໔ ອົງຄຸລີເປັນຢ່າງຕ່ຳ"

## ເລື້ອງພຣະສັບພັກຄີຈູດກອງຫຍ້າ

[໔໘໓] ສະໄໝນັ້ນ ພວກພິກຂຸສັບພັກຄີຈູດກອງຫຍ້າ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄົນເຜົາປ່າ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຈູດກອງຫຍ້າ ອົງໃດ ຈູດເຜົາ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ຫຍ້າຂຶ້ນຮົກວິຫານ ເມື່ອໄຟປ່າໄໝ້ລາມມາເຖິງ ວິຫານຈຶ່ງຖືກໄຟໄໝ້ ພິກຂຸຢຳເກງຢູ່ທີ່ຈະໃຊ້ໄຟຈູດກັນໄຟປ່າເພື່ອປ້ອງກັນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ໄຟຈູດກັນໄຟປ່າທີ່ກຳລັງ ໄໝ້"

## ເລື້ອງພຣະສັບພັກຄີຂຶ້ນຕົ້ນໄມ້

[໔໘໔] ສະໄໝນັ້ນ ພວກພິກຂຸສັບພັກຄີຂຶ້ນຕົ້ນໄມ້ ໄຕ່ຈາກຕົ້ນໜຶ່ງໄປອີກຕົ້ນໜຶ່ງ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືລິງ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຂຶ້ນຕົ້ນໄມ້ ອົງໃດຂຶ້ນ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງໄປນະຄອນສາວັດຖີ ໃນແຄວ້ນໂກສົນ ລະຫວ່າງທາງຖືກຊ້າງ ໄລ່ພິກຂຸ ນັ້ນແລ່ນໄປທີ່ເຫງົ້າໄມ້ ຢຳເກງຢູ່ຈຶ່ງບໍ່ຍອມຂຶ້ນ ພໍດີຊ້າງນັ້ນຍ່າງໄປທາງອື່ນ ເມື່ອພິກ ຂຸນັ້ນ ໄປເຖິງນະຄອນສາວັດຖີໄດ້ບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອມີເຫດທີ່ສົມຄວນ ເຮົາອະນຸຍາດ ໃຫ້ຂຶ້ນ ຕົ້ນໄມ້ສູງຊົ່ວບຸຣຸດ ແຕ່ໃນເວລາມີອັນຕະລາຍ ຂຶ້ນໄດ້ຕາມຄວາມປະສົງ"

## ເລື້ອງຊົງຫ້າມຍົກພຣະພຸດທະພົດຂຶ້ນເປັນພາສາສັນສະກິດ

[໔໗໕] ສະໄໝນັ້ນພິກຂຸ ໒ ອົງ ຊື່ເມດຖະແລະໂກກຸດຖະ ເປັນອ້າຍນ້ອງກັນ ເກີດໃນ ຕະກູນພາມ ເວົ້າຈາອ່ອນຫວານມີສຽງມ່ວນ ພິກຂຸທັງ ໒ ອົງນັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ຂາບ ທູນພຣະຜູ້ມີ ພຣະພາກເຈົ້າວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເວລານີ້ພິກຂຸທັງຫຼາຍຕ່າງຊື່ ຕ່າງ ໂຄດ ຕ່າງເຊື້ອຊາດ ຕ່າງຕະກູນພາກັນອອກບວດ ພິກຂຸເຫຼົ່ານັ້ນເຮັດພຣະພຸດທະພົດໃຫ້ຜິດ ບິດບັ້ງວດ້ວຍພາສາ ຂອງຕົນ[๑] ຂໍອະໂຣກາດ ຂ້າພຣະອົງຈະຂໍຍົກພຣະພຸດທະພົດຂຶ້ນເປັນພາສາ ສັນສະກິດ"[๒]

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກ ທ່ານ ຈຶ່ງກ່າວແນວນີ້ວ່າ ຂໍອະໂຣກາດ ຂ້າພຣະອົງຈະຂໍຍົກພຣະພຸດທະພົດຂຶ້ນເປັນພາສາສັນ ສະກິດນໍ ໂມຄະບຸຣຸດທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸ ທັງຫຼາຍ ພິກຂຸບໍ່ເພິ່ງຍົກພຸດທະວະຈະນະຂຶ້ນເປັນພາສາສັນສະກິດ ອົງໃດຍົກຂຶ້ນ ຕ້ອງອາບັດ ທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮ່ຳຮຽນພຸດທະວະຈະນະດ້ວຍພາສາຂອງຕົນ"

## ເລື້ອງພຣະສັບພັກຄືຮຽນໂລກາຍັດ

[໔໗໖] ສະໄໝນັ້ນ ພວກພິກຂຸສັບພັກຄືຮຽນໂລກາຍັດ[๑] ພວກຄົນທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍ ໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ພິກຂຸທັງຫຼາຍ ຜູ້ທີ່ເຫັນສາລະໃນໂລກາຍັດເພິ່ງເຖິງຄວາມຈະເລີນ ຄວາມງອກງາມ ຄວາມໄພບູນໃນພຣະທຳວິໄນນີ້ບໍ”

ພິກຂຸທັງຫຼາຍຂາບທູນວ່າ “ບໍ່ເຖິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ພິກຂຸທັງຫຼາຍ ຜູ້ທີ່ເຫັນສາລະໃນທຳວິໄນນີ້ ຍ່ອມຮຽນໂລກາຍັດບໍ”

ພິກຂຸທັງຫຼາຍຂາບທູນວ່າ “ບໍ່ຮຽນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຮຽນໂລກາຍັດ ອົງໃດຮຽນຕ້ອງອາບັດທຸກກົດ”

ສະໄໝນັ້ນ ພວກພິກຂຸສັບພັກຄີສອນໂລກາຍັດ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ “ຄືຄະລິຫັດຜູ້ບໍລິໂພກກາມ”

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສອນໂລກາຍັດ ອົງໃດສອນ ຕ້ອງອາບັດທຸກກົດ”

## ເລື້ອງພຣະສັບພັກຄີຮຽນເດຍຣັດສານວິຊາ

[໔໘໗] ສະໄໝນັ້ນ ພວກພິກຂຸສັບພັກຄີຮຽນເດຍຣັດສານວິຊາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຮຽນເດຍຣັດສານວິຊາອົງໃດຮຽນ ຕ້ອງອາບັດທຸກກົດ”

ສະໄໝນັ້ນ ພວກພິກຂຸສັບພັກຄີສອນເດຍຣັດສານວິຊາ ຄົນທັງຫຼາຍຕຳໜິ ປະນາມໂພນທະນາວ່າ “ຄືຄະລິຫັດຜູ້ບໍລິໂພກກາມ” ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸ ທັງຫຼາຍ ພິກຂຸບໍ່ເພິ່ງສອນເດຍຣັດສານວິຊາ ອົງໃດສອນ ຕ້ອງອາບັດທຸກກົດ”

## ເລື້ອງໃຫ້ພອນເມື່ອມີຜູ້ຈາມ

[໔໘໘] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຫ້ອມລ້ອມດ້ວຍບໍລິສັດໝູ່ໃຫຍ່ ປະທັບນັ່ງສະແດງທຳ ໄດ້ຊົງຈາມຂຶ້ນ ພິກຂຸທັງຫຼາຍໄດ້ຖວາຍພຣະພອນສຽງດັງວ່າ “ຂໍພຣະຜູ້ມີພຣະພາກ

ຈົ່ງຊົງພຣະຈະເລີນພຣະຊົນມາຍຸເທີ້ນ ຂໍພຣະສຸດຄົດເຈົ້າຈົ່ງຊົງພຣະຈະເລີນພຣະຊົນມາຍຸເທີ້ນ ຂ້ານ້ອຍ" ການສະແດງທຳຕ້ອງຢຸດລົງ ຍ້ອນສຽງຖວາຍພຣະພອນນັ້ນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອມີການຈາມ ຜູ້ທີ່ໄດ້ຮັບພອນວ່າ ຂໍຈົງມີອາຍຸຍືນ ຈະມີຊີວິດຫຼືຕ້ອງຕາຍຍ້ອນສາເຫດນັ້ນບໍນໍ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອມີການຈາມ ພິກຂຸບໍ່ເພິ່ງໃຫ້ພອນວ່າ ຂໍຈົງມີອາຍຸຍືນ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ໃນເວລາທີ່ພິກຂຸທັງຫຼາຍຈາມ ຄົນທັງຫຼາຍໃຫ້ພອນວ່າ "ຂໍທ່ານທັງຫຼາຍ ຈົ່ງມີອາຍຸຍືນ" ພິກຂຸຢຳເກງຢູ່ຈຶ່ງບໍ່ຍອມໃຫ້ພອນຕອບ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດ ເມື່ອເຂົາໃຫ້ພອນວ່າ ຈົ່ງມີອາຍຸຍືນ ຈຶ່ງບໍ່ໃຫ້ພອນຕອບນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຄົນທັງຫຼາຍຕ້ອງການຄວາມເປັນສິຣິມຸງຄຸນ ພິກຂຸທັງຫຼາຍ ເມື່ອພວກຄະລືຫັດໃຫ້ພອນວ່າ ຈົ່ງມີອາຍຸຍືນ ເຮົາອະນຸຍາດໃຫ້ພິກຂຸໃຫ້ພອນຕອບ ວ່າ ທ່ານກໍຈົ່ງມີອາຍຸຍືນ"

## ເລື້ອງສັນກະທຽມ

[໔໙໑] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຫ້ອມລ້ອມດ້ວຍບໍລິສັດໝູ່ໃຫຍ່ ປະທັບນັ່ງສະແດງທຳຢູ່ ພິກຂຸອົງໜຶ່ງສັນກະທຽມ ທ່ານຄິດວ່າ "ພິກຂຸທັງຫຼາຍຢ່າໄດ້ກິ່ນກະທຽມ" ຈຶ່ງນັ່ງທີ່ສົມຄວນດ້ານ ໜຶ່ງ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນພິກຂຸນັ້ນຜູ້ນັ່ງທີ່ສົມຄວນດ້ານໜຶ່ງຈຶ່ງຕັດຖາມວ່າ "ພິກຂຸທັງຫຼາຍ ເປັນຫຍັງພິກຂຸນັ້ນຈຶ່ງນັ່ງທີ່ສົມຄວນດ້ານໜຶ່ງນໍ"

ພິກຂຸທັງຫຼາຍຂາບທູນວ່າ "ພິກຂຸນັ້ນສັນກະທຽມແລ້ວຄິດວ່າ ພິກຂຸທັງຫຼາຍຢ່າໄດ້ກິ່ນກະທຽມ ຈຶ່ງນັ່ງທີ່ສົມຄວນດ້ານໜຶ່ງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ອາຫານທີ່ພິກຂຸສັນແລ້ວເຮັດໃຫ້ເຫີນຫ່າງຈາກທຳມະກະຖາແນວນີ້ ຄວນສັນບໍ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ຄວນສັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນກະທຽມ ອົງໃດສັນ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ທ່ານພຣະສາຣີບຸດອາພາດເປັນລົມສຽບທ້ອງ ທ່ານພຣະມະຫາໂມກຄັນລານະ ເຂົ້າໄປຫາແລ້ວຖາມວ່າ "ທ່ານສາຣີບຸດ ແຕ່ກ່ອນທ່ານເປັນລົມສຽບທ້ອງ ຫາຍຈາກພະຍາດຍ້ອນສັນອັນໃດ"

ທ່ານພຣະສາຣີບຸດຕອບວ່າ "ຍ້ອນສັນກະທຽມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນກະທຽມໄດ້ ຍ້ອນອາພາດເປັນປັດໄຈ"

## ເລື້ອງໝໍ້ປັດສາວະ

[໔໙໐] ສະໄໝນັ້ນ ພິກຂຸທັງຫຼາຍຖ່າຍປັດສາວະລົງໃນບ່ອນນັ້ນ ໆ ໃນອາຣາມ ອາຣາມສົກກະປົກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖ່າຍປັດສາວະໃນບ່ອນສົມຄວນ"

ອາຣາມມີກິ່ນເໝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໝໍ້ປັດສາວະ"

ພິກຂຸທັງຫຼາຍນັ່ງປັດສາວະບໍ່ສະດວກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖານວາງຕີນຖ່າຍປັດສາວະ"

ຖານວາງຕີນຖ່າຍປັດສາວະຢູ່ໃນບ່ອນເປີດເຜີຍ ພິກຂຸທັງຫຼາຍລະອາຍທີ່ຈະຖ່າຍປັດສາວະ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລ້ອມຮົ້ວ ໓ ຊະນິດ ຄື ຮົ້ວດິນຈີ່ ຮົ້ວສີລາ ຮົ້ວໄມ້"

ໝໍ້ປັດສາວະບໍ່ມີຝາອັດສົ່ງກິ່ນເໝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

## ເລື້ອງຂຸມຖ່າຍອຸດຈາຣະ

[໔໙໑] ສະໄໝນັ້ນ ພວກພິກຂຸຖ່າຍອຸດຈາຣະລົງໃນບ່ອນນັ້ນ ໆ ໃນອາຣາມ ອາຣາມສົກກະປົກ

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖ່າຍອຸດຈາຣະໃນບ່ອນສົມຄວນ"

ອາຣາມມີກິ່ນເໝັນ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດຂຸມຖ່າຍອຸດຈາຣະ"

ຂອບປາກຂຸມຖ່າຍອຸດຈາຣະພັງ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ກໍ່ຄັນກັ້ນດິນ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ຂຸມອຸດຈາຣະພື້ນຕ່ຳ ນ້ຳຈຶ່ງຖ້ວມ ໆລໆ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງ ໆລໆ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກໍ່ຄັນກັ້ນດິນທີ່ຖົມໄດ້ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ໆລໆ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຍຶດ"

ພິກຂຸທັງຫຼາຍນັ່ງຖ່າຍອຸດຈາຣະທີ່ຮິມຂຸມພາດຕົກລົງໄປ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປູພື້ນແລ້ວເຈາະປ່ອງຖ່າຍອຸດຈາຣະສູນກາງ"

ພິກຂຸທັງຫຼາຍນັ່ງຖ່າຍອຸດຈາຣະບໍ່ສະດວກ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖານວາງຕີນຖ່າຍອຸດຈາຣະ"

ພິກຂຸທັງຫຼາຍຖ່າຍປັດສາວະອອກໄປຂ້າງນອກ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸ ທັງຫຼາຍ ເຮົາອະນຸຍາດຮາງຮອງປັດສາວະ"

ໄມ້ຊຳຣະບໍ່ມີ ໆລໆ ຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ຊຳຣະ"

ກະຕ່າໃສ່ໄມ້ຊຳຣະບໍ່ມີ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດ ກະຕ່າໃສ່ໄມ້ຊຳຣະ"

ຂຸມອຸດຈາຣະບໍ່ໄດ້ອັດຝາ ສົ່ງກິ່ນເໝັນ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

# ເລື່ອງວັດຈະກຸດຕິ

ພິກຂຸທັງຫຼາຍຖ່າຍອຸດຈາຣະໃນກາງແຈ້ງຕ້ອງລຳບາກຍ້ອນຄວາມຮ້ອນແດ່ ຍ້ອນຄວາມໜາວແດ່ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດວັດຈະກຸດຕິ"

ວັດຈະກຸດຕິບໍ່ມີບານປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລິງກອນ ຫຼີ້ມປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ"

ຝາງຫຍ້າຕົກທີ່ວທີ່ວັດຈະກຸດຕິ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດໃຫ້ຮື້ລົງ ແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍຝຽກ"

[໔໗໔] ສະໄໝນັ້ນ ພິກຂຸອົງໜຶ່ງທຸບພົນລະພາບຍ້ອນຊະຣາ ຖ່າຍອຸດຈາຣະແລ້ວລຸກຂຶ້ນລົ້ມລົງ

ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຊືອກສຳລັບຈ່ອງ"

ວັດຈະກຸດຕິບໍ່ໄດ້ລ້ອມຮົ້ວ ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລ້ອມຮົ້ວ ໓ ຊະນິດ ຄື ຮົ້ວດິນຈີ່ ຮົ້ວສີລາ ຮົ້ວໄມ້"

ວັດຈະກຸດຕິບໍ່ມີຊຸ້ມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດຊຸ້ມ"

ຊຸ້ມມີພື້ນທີ່ຕ່ຳ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມ ພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສີລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສີລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕຶກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

ຊຸ້ມບໍ່ມີປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລີງ ກອນ ຫຼີ້ມ ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ"

ຝາງຫຍ້າຕຶກຫ່ວທີ່ຊຸ້ມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍພວງດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ"

ບໍລິເວນມື່ນ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຮຍຫີນແຮ່"

ຫີນແຮ່ຍັງບໍ່ເຕັມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ວາງສິລາພຽງ"

ນ້ຳຂັງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທີ່ລະບາຍນ້ຳ"

ໝໍ້ອຸດຈາຣະບໍ່ມີ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໝໍ້ອຸດຈາຣະ"

ກະບວຍໂອຕັກນ້ຳລ້າງອຸດຈາຣະບໍ່ມີ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກະບວຍໂອຕັກນ້ຳລ້າງອຸດຈາຣະ"

ພິກຂຸທັງຫຼາຍນັ່ງຊຳຣະບໍ່ສະດວກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖານວາງຕີນຊຳຣະ"

ຖານບ່ອນນັ່ງຖ່າຍຢູ່ໃນບ່ອນເປີດເຜີຍ ພິກຂຸທັງຫຼາຍລະອາຍທີ່ຈະຖ່າຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລ້ອມຮົ້ວ ໓ ຊະນິດ ຄື ຮົ້ວດິນຈີ່ ຮົ້ວສິລາ ຮົ້ວໄມ້"

ໝໍ້ອຸດຈາຣະບໍ່ໄດ້ອັດ ຝາງຫຍ້າແລະຂີ້ຝຸ່ນຕົກລົງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

## ເລື່ອງພຣະສັບພັກຄີປະພຶດບໍ່ເໝາະສົມ

[໔໙໖] ສະໄໝນັ້ນ ພວກພິກຂຸສັບພັກຄີປະພຶດບໍ່ເໝາະສົມປານນີ້ ຄື ປຸກໄມ້ດອກເອງແດ່ ໃຊ້ຜູ້ອື່ນປຸກແດ່ ຫົດນ້ຳເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ໃຫ້ຜູ້ອື່ນເຮັດແດ່

ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ມາໄລລຽງກ້ານ ດອກໄມ້ຊໍ່ ດອກໄມ້ພຸ່ມ ດອກໄມ້ເຊີດ ດອກໄມ້ພວງ ດອກໄມ້ແຜງປະດັບເອິກ ເພື່ອກຸນລະສະຕີ ເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໃພ້ຂອງຕະກູນ ເພື່ອຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດແລະຄຸມຜ້າຫົ່ມຮ່ວມກັນແດ່ ກັບກຸນລະສະຕີ ກຸນລະທິດາ ກຸນລະກຸມາຣີ ສະໃພ້ຂອງຕະກູນ ຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊົງດອກໄມ້ຂອງຫອມແລະເຄື່ອງລູບທາແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳ ກັບຍິງຟ້ອນລຳແດ່ ຂັບຮ້ອງກັບຍິງຟ້ອນລຳແດ່ ເສບດົນຕີກັບຍິງຟ້ອນລຳແດ່ ເຕັ້ນລຳ ກັບຍິງຟ້ອນລຳແດ່ ຟ້ອນລຳກັບຍິງຂັບຮ້ອງແດ່ ຂັບຮ້ອງກັບຍິງຂັບຮ້ອງແດ່ ເສບດົນຕີ ກັບຍິງຂັບຮ້ອງແດ່ ເຕັ້ນລຳກັບຍິງຂັບຮ້ອງແດ່ ຟ້ອນລຳກັບຍິງເສບດົນຕີແດ່ ຂັບຮ້ອງກັບຍິງເສບດົນຕີແດ່ ເສບດົນຕີກັບຍິງເສບດົນຕີແດ່ ເຕັ້ນລຳກັບຍິງເສບດົນຕີແດ່ ຟ້ອນລຳກັບຍິງເຕັ້ນລຳແດ່ ຂັບຮ້ອງກັບຍິງເຕັ້ນລຳແດ່ ເສບດົນຕີກັບຍິງເຕັ້ນລຳແດ່ ເຕັ້ນລຳ ກັບຍິງເຕັ້ນລຳແດ່ ຫຼິ້ນໝາກຣຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊີງນາງແດ່ ຫຼິ້ນໝາກໄຫວແດ່ ຫຼິ້ນໂຍນຫ່ວງແດ່ ຫຼິ້ນໄມ້ຫົ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປີ້ນຫຼັງກາແດ່ ຫຼິ້ນໄມ້ໝາກປີ່ນແດ່ ຫຼິ້ນຜອງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍ ໆ ແດ່ ຫຼິ້ນທະນູນ້ອຍ ໆ ແດ່ ຫຼິ້ນຂຽນທວາຍແດ່ ຫຼິ້ນທວາຍໃຈແດ່ ຫຼິ້ນລຽນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດເພງອາວຸດແດ່ ແລ່ນຜັດຊ້າງແດ່ ແລ່ນຜັດມ້າແດ່ ແລ່ນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນແຂ່ງກັນແດ່ ຜິວປາກແດ່ ຕົບມືແດ່ ປ້ຳກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕີທ່າມກາງເວທີເຕັ້ນລຳແລ້ວເວົ້າກັບຍິງຟ້ອນລຳ ແນວ

ນີ້ວ່າ “ນາງ ເຈົ້າຈົ່ງຟ້ອນລຳໃນບ່ອນນີ້” ດັ່ງນີ້ແລ້ວ ໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະພຶດບໍ່ເໝາະສົມ ອົງໃດປະພຶດ ຕ້ອງອາບັດທຸກກົດ”

## ເລື້ອງໂລຫະ

ສະໄໝນັ້ນ ເມື່ອທ່ານພຣະອຸເວລະກັດສະປະບວດແລ້ວ ເຄື່ອງໃຊ້ໂລຫະ ເຄື່ອງໃຊ້ໄມ້ເຄື່ອງໃຊ້ດິນຈຳນວນຫຼາຍເກີດຂຶ້ນແກ່ສົງ ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ “ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຄື່ອງໃຊ້ໂລຫະຫຼືບໍ່ໄດ້ຊົງອະນຸຍາດ ຊົງອະນຸຍາດເຄື່ອງໃຊ້ໄມ້ຫຼືບໍ່ໄດ້ຊົງອະນຸຍາດ ຊົງອະນຸຍາດເຄື່ອງໃຊ້ດິນຫຼືບໍ່ໄດ້ຊົງອະນຸຍາດ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງໃຊ້ໂລຫະທຸກຊະນິດ ເວັ້ນເຄື່ອງປະຫານ ອະນຸຍາດເຄື່ອງໃຊ້ໄມ້ທຸກຊະນິດເວັ້ນຕັ່ງນອນ ບັນລັງ (ແທ່ນນັ່ງ) ບາດໄມ້ ຊຽງຕີນ (ເກີບໄມ້) ອະນຸຍາດເຄື່ອງໃຊ້ດິນທຸກຊະນິດ ເວັ້ນເຄື່ອງໃຊ້ເຊັດຕີນ ກຸດຕິດິນເຜົາ”

**ຂຸດທະກະວັດຖຸຂັນທະກະທີ ໕ ຈົບ**

## ລວມເລື້ອງທີ່ມີໃນຂຸດທະກະວັດຖຸຂັນທະກະ

ພຣະສັບພັກຄີອາບນ້ຳຂັດສີກາຍກັບຕົ້ນໄມ້
ອາບນ້ຳຂັດສີກາຍກັບເສົາ ອາບນ້ຳຂັດສີກາຍກັບຝາ
ອາບນ້ຳໃນບ່ອນບໍ່ສົມຄວນ ໃຊ້ມືເຮັດດ້ວຍໄມ້ຫອມຖູກາຍອາບນ້ຳ
ໃຊ້ເຊືອກຂຸບແປ້ງຜົງສິລາສີຄືພອຍແດງຖູກາຍອາບນ້ຳ
ເຮັດບໍຣິກຳໃຫ້ແກ່ກັນແລະກັນ
ໃຊ້ໄມ້ບັງວຽນຈັກເປັນແຂ້ວມັງກອນຖູກາຍອາບນ້ຳ

ພິກຂຸເປັນຫິດ ພິກຂຸທຸບພົນລະພາບຍ້ອນຊະຣາ
ຊົງອະນຸຍາດໃຫ້ໃຊ້ຝາມືຖູຫຼັງ
ພຣະສັບພັກຄີໃຊ້ເຄື່ອງປະດັບຊະນິດຕ່າງ ໆ ຄື ເຄື່ອງປະດັບຫູ

ສ້ອຍສັງວານ ສ້ອຍຄໍ ເຄື່ອງປະດັບແອວ ວະໄລ ສ້ອຍຕາບ
ເຄື່ອງປະດັບຂໍ້ມື ແຫວນໃສ່ນິ້ວມື

ພຣະສັບພັກຄີຈິ່ງຜົມຍາວ ໃຊ້ແປງຫວີຜົມ
ໃຊ້ຫວີຫວີຜົມ ເສີຍຜົມ ໃຊ້ນ້ຳມັນປະສົມຂີ້ເຜີ້ງເສີຍຜົມ
ໃຊ້ນ້ຳມັນປະສົມນ້ຳເສີຍຜົມ ສ່ອງເງົາໜ້າທີ່ຄັນສ່ອງ ໃນພາຊະນະໃສ່ນ້ຳ
ພິກຂຸເປັນບາດທີ່ໜ້າ ຊົງອະນຸຍາດໃຫ້ກວດເບິ່ງຮອຍບາດທີ່ຄັນສ່ອງຫຼື

ທີ່ພາຊະນະໃສ່ນ້ຳໄດ້ ພຣະສັບພັກຄີທາໜ້າ ຖູໜ້າ ຜັດໜ້າ ເຈີມໜ້າ
ຍ້ອມໂຕ ຍ້ອມໜ້າ ຍ້ອມທັງໜ້າທັງໂຕ ພິກຂຸອາພາດເປັນໂຣກຕາ
ຊົງອະນຸຍາດໃຫ້ທາໜ້າໄດ້ ພຣະສັບພັກຄີເບິ່ງມະໂຫລະສົບ
ສູດທຳດ້ວຍສຽງຂັບຍາວ ຊົງອະນຸຍາດໃຫ້ສູດສໍຣະພັນຍະ
ພຣະສັບພັກຄີໃຊ້ຜ້າຂົນສັດ ພຣະສັບພັກຄີສັນໝາກມ່ວງ

ສະມາຄົມໜຶ່ງຖວາຍຕ່ອນໝາກມ່ວງ ຊົງອະນຸຍາດໃຫ້ໝາກໄມ້
ທີ່ສົມຄວນແກ່ສະມະນະ ພິກຂຸອົງໜຶ່ງຖືກງູກັດຍ້ອນບໍ່ຈະເລີນເມດຕາ
ພິກຂຸຕັດອົງຄະຊາດຂອງຕົນ ເສດຖີຖວາຍບາດໄມ້ຈັນ
ພຣະສັບພັກຄີໃຊ້ບາດຊະນິດຕ່າງ ໆ ໃຊ້ຕີນຮອງບາດຊະນິດຕ່າງ ໆ
ເຊັ່ນຕີນຮອງບາດຄຳ ໃຊ້ຕີນຮອງບາດສວຍງາມ
ພິກຂຸລາງພວກມ້ຽນບາດໄວ້ທັງທີ່ຍັງບໍ່ແຫ້ງ ເຮັດໃຫ້ບາດເໝັນອັບ
ເອົາບາດຕາກແດດທັງທີ່ຍັງມີນ້ຳ ບາດມີກິ່ນເໝັນ
ພິກຂຸລາງພວກວາງບາດໄວ້ໃນບ່ອນຮ້ອນ ຜິວບາດເສຍ
ວາງບາດໃນບ່ອນບໍ່ມີເຊີງຮອງ ວາງບາດໄວ້ທີ່ຕັ່ງໄມ້
ວາງບາດໄວ້ທີ່ຮີມຕັ່ງໄມ້ ບາດກິ້ງຕົກແຕກ
ວາງບາດໄວ້ທີ່ພື້ນດິນ ຊົງອະນຸຍາດຫຍ້າຮອງ ປວກກັດຫຍ້າ
ຊົງອະນຸຍາດປູ່ງຜ້າຮອງ ຊົງອະນຸຍາດຊັ້ນວາງ
ຊົງອະນຸຍາດໝໍ້ປາກກວ້າງມ້ຽນບາດ
ຊົງອະນຸຍາດຖົງບາດ ຊົງອະນຸຍາດສາຍພາຍດ້າຍຖັກ
ຊົງຫ້າມແຂວນບາດໄວ້ທີ່ເດືອຍຂ້າງຝາ ຊົງຫ້າມມ້ຽນບາດໄວ້ເທິງຕຽງ
ເທິງຕັ່ງ ເທິງຕັກ ເທິງກົດ ພິກຂຸຖືບາດຢູ່ໃນມືບໍ່ເພິ່ງຍູ້ປະຕູ
ບໍ່ເພິ່ງໃຊ້ກະໂຫຼກນ້ຳເຕົ້າແທນບາດ ບໍ່ເພິ່ງໃຊ້ໝໍ້ກະເບື້ອງແທນບາດ
ບໍ່ເພິ່ງໃຊ້ກະໂຫຼກຜີແທນບາດ ບໍ່ເພິ່ງໃຊ້ງຽງແທນບາດ

ພິກຂຸອົງໜຶ່ງໃຊ້ມີຈິກຜ້າຫຍິບຈີວອນ ມີດມີດ້າມເກີດຂຶ້ນແກ່ສົງ ຊົງຫ້າມໃຊ້ມີດດ້າມຄຳ ພິກຂຸທັງຫຼາຍໃຊ້ຂົນໄກ່ແລະໄມ້ຂັດຫຍິບຈີວອນ ຊົງອະນຸຍາດກ່ອງເຂັມ ແປ້ງເຂົ້າໝາກ ຜົງຂີ້ມິ້ນ ຝຸ່ນສີລາ ຂີ້ເຜີ້ງ ຜ້າມັດຂີ້ເຜີ້ງເພື່ອບໍ່ໃຫ້ເຂັມມີຂີ້ມ້ຽງຂຶ້ນ

ພິກຂຸທັງຫຼາຍຫຍິບຈີວອນໂດຍຂຶງກັບຫຼັກເຮັດໃຫ້ແຈຈີວອນເສຍ ຊົງອະນຸຍາດໃຫ້ມັດໄມ້ສະດຶງ ຊົງຫ້າມຂຶງໄມ້ສະດຶງໃນບ່ອນບໍ່ພຽງ ຊົງຫ້າມຂຶງໄມ້ສະດຶງທີ່ພື້ນດິນ ຂອບໄມ້ສະດຶງເປ່ເພ ໄມ້ສະດຶງບໍ່ພໍ ຊົງອະນຸຍາດໃຫ້ເຮັດໝາຍໄລຍະ ຊົງອະນຸຍາດເສັ້ນບັນທັດ

ພິກຂຸທັງຫຼາຍບໍ່ລ້າງຕີນຢຽບໄມ້ສະດຶງ ຕີນປຽກຢຽບໄມ້ສະດຶງ ໃສ່ເກີບຢຽບໄມ້ສະດຶງ ພິກຂຸທັງຫຼາຍຫຍິບຈີວອນ
ໃຊ້ນິ້ວມືຮັບເຂັມ ຊົງອະນຸຍາດປອກໃສ່ນິ້ວມື
ຊົງອະນຸຍາດກ່ອງສຳລັບເກັບເຄື່ອງຫຍິບຜ້າ
ຊົງອະນຸຍາດຖົງເກັບປອກໃສ່ນິ້ວມື
ຊົງອະນຸຍາດສາຍພາຍດ້າຍຖັກ

ພິກຂຸທັງຫຼາຍຫຍິບຈີວອນໃນກາງແຈ້ງ ໂຮງສະດຶງມີພື້ນທີ່ຕ່ຳ ດິນທີ່ຖົມພັງທະລາຍ ພິກຂຸທັງຫຼາຍຂຶ້ນລົງລຳບາກ
ຝົງຫຍ້າຕົກທົ່ວທີ່ໂຮງສະດຶງ
ຊົງອະນຸຍາດໃຫ້ສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ
ສີດຳ ສີເຫຼືອງ ແຕ້ມລວດລາຍດອກໄມ້
ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ
ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍຜຽກ

ພິກຂຸທັງຫຼາຍຖິ້ມໄມ້ສະດຶງຫຼີກໄປ ໄມ້ສະດຶງຫັກ ໄມ້ສະດຶງມາຍອອກ
ພິກຂຸທັງຫຼາຍເກັບໄມ້ສະດຶງໄວ້ທີ່ຝາກຸດຕິ
ພິກຂຸທັງຫຼາຍເກັບເຂັມມີດໄວ້ໃນບາດ
ຊົງອະນຸຍາດຖົງເກັບເຄື່ອງຢາ ຊົງອະນຸຍາດສາຍພາຍດ້າຍຖັກ

ພິກຂຸມັດເກີບໄວ້ກັບສາຍແອວ ຊົງອະນຸຍາດຖົງມ້ຽນເກີບ
ສາຍພາຍດ້າຍຖັກ ນ້ຳໃນລະຫວ່າງທາງເປັນອະກັບປີຍະ
ຊົງອະນຸຍາດຜ້າຕອງນ້ຳ ກະບອກຕອງນ້ຳ
ພິກຂຸ ໘ ອົງເດີນທາງໄປນະຄອນເວສາລີ

ຊົງອະນຸຍາດຜ້າຕອງນ້ຳມີຂອບ
ຊົງອະນຸຍາດໃຫ້ລາດຜ້າລົງເທິງນ້ຳ ຊົງອະນຸຍາດກຸດຕິກັນຍຸງ

ພິກຂຸທັງຫຼາຍມີອາພາດຫຼາຍຍ້ອນສັນອາຫານປະນີດ
ໝໍຊີວົກຈຶ່ງທູນຂໍອະນຸຍາດສ້າງທີ່ຈົງກົມແລະເຮືອນໄຟ
ພິກຂຸທັງຫຼາຍຈົງກົມໃນບ່ອນຂຸຂະຕືນເຈັບ
ທີ່ຈົງກົມມີພື້ນທີ່ຕ່ຳ ຊົງອະນຸຍາດກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ
ພິກຂຸທັງຫຼາຍຂຶ້ນລົງລຳບາກ
ຊົງອະນຸຍາດຂັ້ນໄດແລະຮາວສຳລັບຢຶດ

ພິກຂຸທັງຫຼາຍຈົງກົມໃນກາງແຈ້ງ ຜົງຫຍ້າຕົກທົ່ວທີ່ໂຮງຈົງກົມ
ຊົງອະນຸຍາດໃຫ້ສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ
ສີດຳ ສີເຫຼືອງ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ
ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍຫຼຽກ

ຊົງອະນຸຍາດໃຫ້ຖົມພື້ນທີ່ເຮືອນໄຟໃຫ້ສູງ ດິນທີ່ຖົມພັງທະລາຍ
ຊົງອະນຸຍາດຂັ້ນໄດ ຮາວຂັ້ນໄດ ຊົງອະນຸຍາດບານປະຕູ
ວົງກົບ ຮູທີ່ຮັບເດືອຍປະຕູ
ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລິງ ກອນ ຫຼີ້ມ
ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ
ຊົງອະນຸຍາດໃຫ້ສາບຝາເຮືອນໄຟຮອບ ໆ ຊົງອະນຸຍາດປ່ອງລະບາຍຄວັນ

ພິກຂຸທັງຫຼາຍຕັ້ງເຕົາໄຟໄວ້ກາງເຮືອນໄຟ
ຊົງອະນຸຍາດດິນທາໜ້າ ຮາງລະລາຍດິນ ດິນມີກິ່ນເໝັນ
ໄຟລວບກາຍ ຊົງອະນຸຍາດທີ່ໃສ່ນ້ຳ ໂອຕັກນ້ຳ
ເຮືອນໄຟບໍ່ອົບເຫື່ອ ເຮືອນໄຟມີພື້ນມື່ນ
ຊົງອະນຸຍາດໃຫ້ຊຳຮະລ້າງ ຊົງອະນຸຍາດໃຫ້ເຮັດທໍ່ລະບາຍນ້ຳ
ຊົງອະນຸຍາດຕັ່ງຮອງນັ່ງໃນເຮືອນໄຟ ຊົງອະນຸຍາດໃຫ້ເຮັດຊຸ້ມ
ຊົງອະນຸຍາດໃຫ້ໂຮຍຫີນແຮ່ ຊົງອະນຸຍາດໃຫ້ວາງສີລາພຽງ
ຊົງອະນຸຍາດທໍ່ລະບາຍນ້ຳ

ພິກຂຸທັງຫຼາຍເປືອຍກາຍໄຫວ້ກັນ
ພິກຂຸທັງຫຼາຍວາງຈີວອນໄວ້ເທິງພື້ນດິນ ຝຸ່ນຕົກຈີວອນປຽກ
ຊົງອະນຸຍາດເຄື່ອງກຳບັງ ໓ ຊະນິດ

ຊົງອະນຸຍາດນ້ຳສ້າງໃນເຮືອນໄຟ ຂອບນ້ຳສ້າງຂຸດ ນ້ຳສ້າງມີພື້ນທີ່ຕ່ຳ
ພິກຂຸທັງຫຼາຍໃຊ້ສາຍແອວແລະເຄືອເຂົາມັດພາຊະນະຕັກນ້ຳ
ຊົງອະນຸຍາດຄັນໂພງ ຣະຫັດມື ຣະຫັດຈັກ
ພາຊະນະຕັກນ້ຳທັງຫຼາຍແຕກ
ຊົງອະນຸຍາດຖັງຕັກນ້ຳໂລຫະ ຖັງໄມ້ແລະຖັງໜັງ

ຊົງອະນຸຍາດສາລານ້ຳສ້າງ ຜົງຫຍ້າຕົກທົ່ວໃນສາລານ້ຳສ້າງ
ຊົງອະນຸຍາດຝາອັດນ້ຳສ້າງ ຊົງອະນຸຍາດຮາງນ້ຳ
ຊົງອະນຸຍາດຮາງລະບາຍນ້ຳ ຊົງອະນຸຍາດກຳແພງກັ້ນ
ນ້ຳສ້າງມີ່ນ ຊົງອະນຸຍາດທໍ່ລະບາຍນ້ຳ

ພິກຂຸທັງຫຼາຍມີເນື້ອໂຕປຽກຊຸ່ມເຢັນ ຊົງອະນຸຍາດສະໂບກຂະຣະນີ
ນ້ຳໃນສະໂບກຂະຣະນີເກົ່າ ຊົງອະນຸຍາດເຮືອນໄຟມີປັ້ນລົມ
ພຣະສັບພັກຄີຢູ່ປາສະຈາກຜ້າປູນັ່ງ ໔ ເດືອນ
ພຣະສັບພັກຄີນອນເທິງບ່ອນນອນໂຮຍດ້ວຍດອກໄມ້

ຊົງອະນຸຍາດໃຫ້ຮັບປະເຄນດອກໄມ້ຂອງຫອມ
ຊົງອະນຸຍາດສັນຖັດຂົນຈຽມບໍ່ຕ້ອງອະທິຖານ
ພຣະສັບພັກຄີສັນອາຫານໂຕກ ຊົງອະນຸຍາດຕີນບາດ
ພຣະສັບພັກຄີສັນອາຫານໃນພາຊະດຽວກັນ ນອນຕຽງດຽວກັນ

ເຈົ້າວັດທະລິດສະຫວີໃສ່ຄວາມພຣະທັບພະ
ໂພທິຣາດຊະກຸມານທູນນິມົນພຣະຜູ້ມີພຣະພາກເຈົ້າມາຮັບພັດຕາຫານ
ທີ່ຜາສາດໃໝ່ ພຣະຜູ້ມີພຣະພາກເຈົ້າບໍ່ຊົງຢຽບຜ້າຂາວ

ນາງວິສາຂາມິຄາຣະມາຕານຳໝໍ້ນ້ຳປຸ່ມໄມ້ທີ່ເຊັດຕີນ
ແລະໄມ້ກວາດເຂົ້າໄປຖວາຍ ຊົງອະນຸຍາດທີ່ເຊັດຕີນສີລາ
ແຮ່ ສີລາຟອງນ້ຳ ຊົງອະນຸຍາດພັດວີ ພັດໃບຕານ
ແສ້ປັດຍຸງ ແສ້ຈາມະຣີ ພຣະສັບພັກຄີກັ້ງຄັນຮົ່ມຍ່າງທ່ຽວ

ພິກຂຸອົງໜຶ່ງເປັນໄຂ້ຂາດຄັນຮົ່ມແລ້ວບໍ່ມີຄວາມຜາສຸກ
ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງອະນຸຍາດໃຫ້ໃຊ້ຄັນຮົ່ມໄດ້
ກາງຮົ່ມໃນເຂດວັດໄດ້ ລວມເປັນ ໓ ເລື້ອງ
ຊົງອະນຸຍາດສິກກາສົມມຸດ

ພິກຂຸອົງໜຶ່ງມີນິໄສຄ້ຽວເອື້ອງ ສະມາຄົມໜຶ່ງຈັດສັງຄະພັດ ເຮັດເມັດເຂົ້າຕົກທົ່ວ

ພິກຂຸອົງໜຶ່ງຈິ່ງເລັບຍາວ ພິກຂຸທັງຫຼາຍໃຊ້ເລັບຕັດເລັບ ນິ້ວມືເຈັບ ຕັດເລັບຈົນເລືອດອອກ ຊົງອະນຸຍາດໃຫ້ຕັດເລັບ ສະເໝີເນື້ອ

ພຣະສັບພັກຄີຂັດເລັບທັງ ໒໐ ເລັບ ພິກຂຸທັງຫຼາຍຈິ່ງຜົມຍາວ ຊົງອະນຸຍາດມີດແຖ ຫີນລັບມີດ ປອກມີດ ຜ້າພັນມີດ ເຄື່ອງໃຊ້ແຖ ພຣະສັບພັກຄີແຕ່ງໜວດ ປ່ອຍໜວດໄວ້ຍາວ ຈິ່ງເຄົາຍາວ ແຕ່ງໜວດເປັນຮູບສີ່ຫຼ່ຽມ ແຕ່ງຂົນໜ້າເອິກ ແຕ່ງຂົນໜ້າທ້ອງ ແຕ່ງໜວດເປັນເຂົາໂຄ້ງ ແຖຂົນໃນບ່ອນແຄບ

ພິກຂຸອາພາດອະນຸຍາດໃຫ້ແຖຂົນໃນບ່ອນແຄບໄດ້ ຊົງອະນຸຍາດໃຊ້ກັນໄກຕັດຜົມ ໃນກໍລະນີທີ່ຫົວເປັນບາດ ຊົງຫ້າມຈິ່ງຂົນດັງຍາວ ຊົງຫ້າມໃຊ້ກ້ອນຫີນລົກຂົນດັງ ຊົງຫ້າມໃຊ້ກັນແລະກັນລົກຜົມຫງອກ ຊົງອະນຸຍາດໄມ້ແຄະຂີ້ຫູໃນກໍລະນີທີ່ຂີ້ຫູອຸດຮູຫູ ພວກພິກຂຸສັບພັກຄີສະສົມໂລຫະ ຊົງອະນຸຍາດຢາຕາ ຊົງຫ້າມນັ່ງຮັດເຂົ່າ ຊົງອະນຸຍາດຜ້າຮັດເຂົ່າ ຊົງອະນຸຍາດດ້າຍພັນແລະໄມ້ສະລັກທໍ ຊົງອະນຸຍາດສາຍແອວ ຊົງຫ້າມໃຊ້ສາຍແອວຊະນິດຕ່າງ ໆ ຄື ປະຄົດຖັກເຊືອກ ຖັກເປັນຫົວງູນ້ຳ ກົມຄ້າຍກຽວເຊືອກ ຄ້າຍສັງວານ ຊົງອະນຸຍາດປະຄົດແຜ່ນຜ້າ ປະຄົດໄສ້ໝູ

ຊາຍສາຍແອວລຸ່ຍ ຊົງອະນຸຍາດໃຫ້ຫຍິບທົບຖັກເປັນບ້ວງ ປາຍບ້ວງປະຄົດລຸ່ຍ ຊົງອະນຸຍາດລູກຖະອິນ ຊົງອະນຸຍາດລູກດຸມ ພິກຂຸສັບພັກຄີໃຊ້ລູກດຸມຊະນິດຕ່າງ ໆ ພິກຂຸທັງຫຼາຍຕິດແຜ່ນຜ້າຮອງລູກດຸມແລະຮັງດຸມທີ່ຊາຍຈີວອນ ຊົງອະນຸຍາດໃຫ້ຕິດແຜ່ນຜ້າເລີກເຂົ້າໄປ

ພວກພິກຂຸສັບພັກຄີນຸ່ງຜ້າແບບຄະລືຫັດ ຄື ນຸ່ງປ່ອຍຊາຍຄືງວງຊ້າງ ຄືຫາງປາ ປ່ອຍຊາຍເປັນສີ່ແຊກ ປ່ອຍຊາຍຄ້າຍກ້ານຕານ

ນຸ່ງຍົກກີບຕັ້ງຮ້ອຍ ພວກພິກຂຸສັບພັກຄີຫົ່ມຜ້າແບບຄະລືຫັດ
ນຸ່ງຜ້າໂຈງກະເບນ ພວກພິກຂຸສັບພັກຄີຫາບຂອງ
ຊົງອະນຸຍາດໃຫ້ຄອນຫາມເປັນຕົ້ນໄດ້

ພວກພິກຂຸສັບພັກຄີໃຊ້ໄມ້ຖູແຂ້ວຕີສາມະເນນ
ໄມ້ຖູແຂ້ວຕິດລໍາຄໍ ພວກພິກຂຸສັບພັກຄີຈູດກອງຫຍ້າ
ຊົງອະນຸຍາດໃຫ້ໃຊ້ໄຟເຜົາຕ້ານໄຟປ່າທີ່ກໍາລັງໄໝ້
ພວກພິກຂຸສັບພັກຄີຂຶ້ນຕົ້ນໄມ້ ພິກຂຸອົງໜຶ່ງຖືກຊ້າງໄລ່
ພິກຂຸເມດຖະແລະໂກກຸດຖະທູນຂໍຍົກພຣະພຸດທະພົດ
ຂຶ້ນເປັນພາສາສັນສະກິດ
ພວກພິກຂຸສັບພັກຄີຮຽນສອນໂລກາຍັດ
ພວກພິກຂຸສັບພັກຄີຮຽນເດຍຣັດສານວິຊາ
ເມື່ອມີການຈາມ ບໍ່ຄວນກ່າວຄໍາໃຫ້ພອນ

ຊົງອະນຸຍາດໃຫ້ພອນຕອບເພື່ອຄວາມເປັນສິຣິມຸງຄຸນ
ຊົງຫ້າມສັນກະທຽມເມື່ອເຂົ້າສະມາຄົມ
ພຣະສາຣີບຸດອາພາດເປັນລົມສຽບທ້ອງ
ຊົງອະນຸຍາດໃຫ້ສັນກະທຽມໄດ້

ອາຣາມສົກກະປົກມີກິ່ນເໝັນ ນັ່ງປັດສາວະບໍ່ສະດວກ
ຊົງອະນຸຍາດຖານວາງຕີນຖ່າຍປັດສາວະ
ທີ່ປັດສາວະເປີດເຜີຍພິກຂຸທັງຫຼາຍລະອາຍ
ຊົງອະນຸຍາດຮົ້ວໄມ້ ໝໍ້ປັດສາວະບໍ່ມີຝາອັດສິ່ງກິ່ນເໝັນ
ພິກຂຸທັງຫຼາຍຖ່າຍອຸດຈາຣະລົງບ່ອນນັ້ນ ໆ ອາຣາມມີກິ່ນເໝັນ
ຂອບປາກຂຸມຖ່າຍອຸດຈາຣະພັງ
ຊົງອະນຸຍາດໃຫ້ຖົມພື້ນໃຫ້ສູງ ຊົງອະນຸຍາດໃຫ້ກໍ່ຄັນກັ້ນ
ຊົງອະນຸຍາດຂັ້ນໄດ ຣາວຍຶດ
ພິກຂຸທັງຫຼາຍນັ່ງຖ່າຍອຸດຈາຣະທີ່ຮີມລຸດພາດຕົກລົງໄປ
ນັ່ງຖ່າຍບໍ່ສະດວກ ຊົງອະນຸຍາດຖານວາງຕີນຖ່າຍ
ຖ່າຍປັດສາວະອອກໄປຂ້າງນອກ
ຊົງອະນຸຍາດຮາງຮອງປັດສາວະໄມ້ຊໍາຣະ
ກະຕ່າທີ່ໃສ່ໄມ້ ຂຸມອຸດຈາຣະບໍ່ໄດ້ອັດຝາ
ຊົງອະນຸຍາດຝາອັດ

ຊົງອະນຸຍາດວັດຈະກຸດຕິ ບານປະຕູ ວົງກົບ
ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງສາຍຍູ ໄມ້ຫົວລິງ
ກອນ ຫຼົ່ມ ປ່ອງດານ ປ່ອງສໍາລັບດຶງ ເຊືອກສໍາລັບດຶງ

ຝາງຫຍ້າຕົກທົ່ວ ຊົງອະນຸຍາດໃຫ້ສາບດ້ວຍດິນ
ທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ສີດໍາ ສີເຫຼືອງ
ສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ
ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ
ຮາວຈີວອນ ສາຍຜຽກ

ພິກຂຸອົງໜຶ່ງຫຸບພົນລະພາບຍ້ອນຊະຮາຖ່າຍອຸດຈາຣະລຸກຂຶ້ນແລ້ວລົ້ມລົງ
ຊົງອະນຸຍາດໃຫ້ລ້ອມຮົ້ວ ຊົງອະນຸຍາດຊຸ້ມປະຕູວັດຈະກຸດຕິ
ຊົງອະນຸຍາດໃຫ້ໂຮຍຫີນແຮ່ ຊົງອະນຸຍາດໃຫ້ວາງສີລາພຽງ
ມີນໍ້າຂັງ ກໍຊົງອະນຸຍາດທໍ່ລະບາຍນໍ້າ
ຊົງອະນຸຍາດໝໍ້ອຸດຈາຣະ ໂອຕັກນໍ້າ
ພິກຂຸທັງຫຼາຍນັ່ງຖ່າຍບໍ່ສະດວກ
ຖານບ່ອນນັ່ງຖ່າຍອຸດຈາຣະເປີດເຜີຍ ພິກຂຸທັງຫຼາຍລະອາຍ
ຊົງອະນຸຍາດຝາອັດ

ພວກພິກຂຸສັບພັກຄີປະພຶດບໍ່ເໝາະສົມ
ເລື້ອງຊົງອະນຸຍາດເຄື່ອງໃຊ້ໂລຫະ ເວັ້ນເຄື່ອງປະຫານ
ຊົງອະນຸຍາດເຄື່ອງໃຊ້ໄມ້ ເວັ້ນຕັ່ງນອນ ບັນລັງ
ບາດແລະຊຽງຕີນ ຊົງອະນຸຍາດເຄື່ອງໃຊ້ດິນ
ເວັ້ນເຄື່ອງໃຊ້ເຊັດຕີນແລະກຸດຕິດິນເຜົາ

ນັກວິໄນເພິ່ງຮູ້ນິເທດແຫ່ງວັດຖຸທີ່ຄືກັນຂ້າງຕົ້ນວ່າ ຫຍໍ້ໄວ້ໃນອຸດທານ

ເລື້ອງໃນຂຸດທະກະວັດຖຸຂັນທະກະ ທີ່ສະແດງໄວ້ ໑໑໐ ເລື້ອງ
ພຣະວິໄນທອນຜູ້ສຶກສາດີແລ້ວ ຫວັງເກື້ອກູນ ມີສີນເປັນທີ່ຮັກ
ມີປັນຍາຄືປະທີບ ເປັນພະຫູສູດ ຜູ້ຄວນເຄົາລົບຂາບໄຫວ້
ຈະເປັນຜູ້ສືບຕໍ່ພຣະສັດທໍາ
ແລະອະນຸເຄາະເຫຼົ່າສະພົມມະຈາຣີ ຜູ້ມີສີນດີງາມ

**ຂຸດທະກະວັດຖຸຂັນທະກະ ຈົບ**

# ໖. ເສນາສະນະຂັນທະກະ

## ໑. ປະຖົມພານະວານ

### ວິຫາຣານຸຊານະນະ

### ວ່າດ້ວຍຊົງອະນຸຍາດວິຫານ

### ເລື້ອງເສດຖີຊາວນະຄອນຣາດຊະຄຶຂໍອະນຸຍາດສ້າງວິຫານ

[໔໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຍັງບໍ່ໄດ້ຊົງບັນຍັດ (ຍັງບໍ່ຊົງອະນຸຍາດ)ເສນາສະນະແກ່ພິກຂຸທັງຫຼາຍ ແລະພິກຂຸເຫຼົ່ານັ້ນຢູ່ໃນບ່ອນນັ້ນ ໆ ຄື ປ່າ ເຫງົ້າໄມ້ ພູ ລືບພູ ຖ້ຳ ປ່າຊ້າ ປ່າຮົກ ກາງແຈ້ງ ກອງເຟືອງ

ເວລາເຊົ້າມືດ ພິກຂຸເຫຼົ່ານັ້ນຍ່າງອອກມາຈາກບ່ອນນັ້ນ ໆ ຄື ຈາກປ່າ ເຫງົ້າໄມ້ ພູ ລືບພູ ຖ້ຳ ປ່າຊ້າ ປ່າຮົກ ກາງແຈ້ງ ກອງເຟືອງ ທອດສາຍຕາລົງຕ່ຳ ມີການກ້າວໄປ ການຖອຍຫຼັງ ການແນມເບິ່ງ ການຫຼຽວເບິ່ງ ການຄູ້ແຂນ ການຢຽດແຂນໜ້າເຫຼື້ອມໃສ ເປັນຜູ້ ສົມບູນດ້ວຍອິລິຍາບົດ

ຄັ້ງນັ້ນ ເສດຖີຊາວນະຄອນຣາດຊະຄຶໄປສວນແຕ່ເຊົ້າມືດ ໄດ້ແນມເຫັນພິກຂຸເຫຼົ່ານັ້ນຍ່າງອອກຈາກບ່ອນນັ້ນ ໆ ຄື ຈາກປ່າ ເຫງົ້າໄມ້ ພູ ລືບພູ ຖ້ຳ ປ່າຊ້າ ປ່າຮົກ ກາງແຈ້ງ ກອງເຟືອງ ທອດສາຍຕາລົງຕ່ຳ ມີການກ້າວໄປ ການຖອຍຫຼັງ ການແນມເບິ່ງ ການຫຼຽວເບິ່ງ ການຄູ້ແຂນ ການຢຽດແຂນໜ້າເຫຼື້ອມໃສ ເປັນຜູ້ສົມບູນດ້ວຍອິລິຍາບົດ ເມື່ອເຫັນແລ້ວ ເສດຖີຊາວນະຄອນຣາດຊະຄຶນັ້ນກໍມີຈິດເຫຼື້ອມໃສ

ລຳດັບນັ້ນ ເສດຖີຊາວນະຄອນຣາດຊະຄຶໄດ້ເຂົ້າໄປຫາພິກຂຸເຫຼົ່ານັ້ນ ບັດແລ້ວຈຶ່ງໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ຖ້າຂ້ານ້ອຍຈະໃຫ້ສ້າງວິຫານ ພຣະຜູ້ເປັນເຈົ້າຈະຢູ່ໃນວິຫານຂອງຂ້ານ້ອຍບໍ"

ພິກຂຸທັງຫຼາຍຕອບວ່າ "ຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າຍັງບໍ່ໄດ້ຊົງອະນຸຍາດວິຫານ"

ເສດຖີກ່າວວ່າ "ຖ້າເປັນແນວນັ້ນ ພຣະຜູ້ເປັນເຈົ້າຈົ່ງທູນຖາມພຣະຜູ້ມີພຣະພາກເຈົ້າແລ້ວແຈ້ງໃຫ້ ຂ້ານ້ອຍຮູ້"

ພິກຂຸເຫຼົ່ານັ້ນຮັບຄຳຂອງເສດຖີຊາວນະຄອນຣາດຊະຄຶແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບັດແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ເສດຖີຊາວນະຄອນຣາດຊະຄຶຕ້ອງການຈະໃຫ້ສ້າງວິຫານຖວາຍ

ຂ້າພຣະອົງທັງຫຼາຍຈະເພິ່ງປະຕິບັດແນວໃດ ຂ້ານ້ອຍ"

## ຊົງອະນຸຍາດເສນາສະນະ ໕ ຊະນິດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເສນາສະນະ ໕ ຊະນິດ ຄື ວິຫານ ເຮືອນ ມຸງແຖບດຽວ ຜາສາດ ເຮືອນໂລ້ນ ຖ້ຳ"

ຕໍ່ມາ ພິກຂຸເຫຼົ່ານັ້ນເຂົ້າໄປຫາເສດຖີຊາວນະຄອນຣາດຊະຄຶຮອດບ່ອນຢູ່ ແລ້ວໄດ້ກ່າວກັບເສດຖີຊາວນະຄອນຣາດຊະຄຶດັ່ງນີ້ວ່າ "ທ່ານຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວິຫານ໌ແລ້ວ ບັດນີ້ ທ່ານກຳນົດການອັນຄວນເທີ້ນ"

ລຳດັບນັ້ນ ເສດຖີຊາວນະຄອນຣາດຊະຄຶໃຫ້ສ້າງວິຫານ ໖໐ ຫຼັງ ໂດຍໃຊ້ເວລາແຄ່ພຽງມື້ດຽວ ເມື່ອໃຫ້ສ້າງສຳເລັດແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດແລ້ວນັ່ງທີ່ສົມຄວນ ເສດຖີຊາວນະຄອນຣາດຊະຄຶຜູ້ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າກັບພິກຂຸສົງຈົ່ງຮັບນິມົນ ສັນພັດຕາຫານຂອງຂ້າພຣະອົງ ເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ເສດຖີຊາວນະຄອນຣາດຊະຄຶຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວທູນລາຈາກໄປ

ເມື່ອຜ່ານຣາຕີນັ້ນໄປ ເສດຖີຊາວນະຄອນຣາດຊະຄຶໃຫ້ຈັດກຽມຂອງຫຍ້ຳຂອງສັນອັນ

ປະນີດ ແລ້ວໃຫ້ຄົນໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

## ເສດຖີຊາວນະຄອນຣາດຊະຄຶຖວາຍວິຫານ

ເວລາເຊົ້າມືດ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດ ໄປນິເວດຂອງເສດຖີຊາວນະຄອນຣາດຊະຄຶ ປະທັບນັ່ງເທິງອາສະນະທີ່ເຂົາປູຖວາຍ

ພ້ອມດ້ວຍພິກຂຸສົງ ເສດຖີຊາວນະຄອນຣາດຊະຄືໄດ້ນຳຂອງຫຍໍ້າຂອງສັນອັນປະນີດປະເຄນພິກຂຸສົງ ມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວລະພຣະຫັດຈາກບາດ ຈຶ່ງນັ່ງເຝົ້າຢູ່ທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າພຣະອົງຕ້ອງການບຸນ ຕ້ອງການສະຫວັນຈຶ່ງໃຫ້ສ້າງວິຫານ ໖໐ ຫຼັງນີ້ໄວ້ ຂ້າພຣະອົງຈະປະຕິບັດໃນວິຫານເຫຼົ່ານີ້ແນວໃດນໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ຖ້າເປັນແນວນັ້ນ ທ່ານຈົ່ງຖວາຍວິຫານເຫຼົ່ານັ້ນແກ່ສົງ ໃນທິດທັງ ໔ ຜູ້ມາແລ້ວແລະຍັງບໍ່ມາ"

ເສດຖີທູນຮັບພຣະພຸດທະດຳຣັດແລ້ວໄດ້ຈັດຖວາຍວິຫານ ໖໐ ຫຼັງແກ່ສົງຈາກທິດທັງ ໔ ຜູ້ມາແລ້ວແລະຍັງບໍ່ມາ

## ຄາຖາອະນຸໂມທະນາການຖວາຍວິຫານ

[໒໙໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາເສດຖີຊາວນະຄອນຣາດຊະຄືດ້ວຍ ພຣະຄາຖາເຫຼົ່ານີ້ວ່າ

ວິຫານຍ່ອມປ້ອງກັນຄວາມໜາວຮ້ອນແລະສັດຮ້າຍ
ນອກຈາກນັ້ນ ຍັງປ້ອງກັນງູ ຍຸງແລະຝົນໃນເວລາໜາວເຢັນ
ນອກຈາກນັ້ນ ຍັງປ້ອງກັນລົມແລະແດດອັນຮ້ອນໂພດທີ່ເກີດຂຶ້ນ
ການຖວາຍວິຫານແກ່ສົງ ເພື່ອຫຼີບຫຼີກຢູ່ ເພື່ອຄວາມສຸກ
ເພື່ອເພ່ງພິນິດ ແລະເພື່ອເຫັນແຈ້ງ
ພຣະພຸດທະເຈົ້າທັງຫຼາຍຊົງສັນເສີນວ່າເປັນທານອັນເລີດ

ຍ້ອນແນວນັ້ນ ຜູ້ສະຫຼາດເມື່ອເຫັນປະໂຫຍດຂອງຕົນ
ເພິ່ງສ້າງວິຫານອັນອອນຊອນຖວາຍພິກຂຸຜູ້ພະຫູສູດໃຫ້ຢູ່ໃນບ່ອນນີ້ເທີ້ນ
ອີກປະການໜຶ່ງ ຜູ້ເປັນບັນດິດມີຈິດເຫຼື້ອມໃສໃນພິກຂຸພະຫູສູດ
ຜູ້ປະຕິບັດກົງ ເພິ່ງຖວາຍເຂົ້າ ນໍ້າ ຜ້າ
ແລະເສນາສະນະອັນຄວນແກ່ທ່ານເຫຼົ່ານັ້ນ
ທ່ານເຫຼົ່ານັ້ນຍ່ອມສະແດງທຳອັນເປັນເຫດບັນເທົາສັບພະທຸກແກ່ເຂົາ
ເຊິ່ງເມື່ອເຂົາຮູ້ທົ່ວເຖິງແລ້ວຈະເປັນຜູ້ບໍ່ມີອາສະວະປະຣິນິບພານໄດ້ໃນຊາດນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາເສດຖີຊາວນະຄອນຣາດຊະຄືດ້ວຍພຣະຄາຖາເຫຼົ່ານີ້ ສຳເລັດແລ້ວ ຊົງລຸກຈາກອາສະນະສະເດັດກັບ

## ເລື່ອງບານປະຕູ

[໔໙໓] ຄົນທັງຫຼາຍໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວິຫານ" ຈຶ່ງພາກັນສ້າງວິຫານຢ່າງກະຕືລືລົ້ນ ວິຫານເຫຼົ່ານັ້ນບໍ່ມີບານປະຕູ ງູແດ່ ແມງງອດແດ່ ຂີ້ເຂັບແດ່ ຈຶ່ງເຂົ້າໄປໄດ້

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດບານປະຕູ"

ພິກຂຸທັງຫຼາຍເຈາະປ່ອງຝາ ໃຊ້ເຄືອເຂົາແດ່ ເຊືອກແດ່ມັດບານປະຕູ ໜູແດ່ ປວກແດ່ກັດເຊືອກທີ່ມັດໄວ້ ບານປະຕູທີ່ຖືກກັດຕົກລົງມາ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດວົງກົບ ຮູທີ່ຮັບເດືອຍປະຕູບ້ວງຂ້າງເທິງ"

ບານປະຕູອັດໄດ້ບໍ່ແຈບ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດປ່ອງສໍາລັບດຶງ ເຊືອກສໍາລັບດຶງ"

ບານປະຕູອັດບໍ່ຢູ່ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສາຍຢູ ໄມ້ຫົວລິງ ຫຼິ້ມກອນ"

## ເລື້ອງລູກກະແຈ

ສະໄໝນັ້ນ ພິກຂຸທັງຫຼາຍບໍ່ສາມາດອັດປະຕູໄດ້ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດລູກກະແຈ ໓ ຊະນິດ ຄືລູກກະແຈໂລຫະ ລູກກະແຈໄມ້ ລູກກະແຈເຂົາສັດ"

ໃຜ ໆ ກໍເປີດເຂົ້າໄປໄດ້ ວິຫານທັງຫຼາຍຄຸ້ມກັນບໍ່ໄດ້ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຫຼິ້ມຍົນ"

ສະໄໝນັ້ນ ວິຫານທີ່ມຸງຫຍ້າທັງຫຼາຍພໍເຖິງລະດູໜາວກໍໜາວ ເຖິງລະດູຮ້ອນກໍຮ້ອນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບ ທັງພາຍໃນພາຍນອກ"

## ເລື້ອງບານປ່ອງຢ້ຽມ

ສະໄໝນັ້ນ ວິຫານທັງຫຼາຍຍັງບໍ່ມີປ່ອງຢ້ຽມ ເຮັດໃຫ້ເສຍສາຍຕາ ມີກິ່ນອັບ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດປ່ອງຢ້ຽມ ໓ ຊະນິດ ຄືປ່ອງຢ້ຽມມີລວດລາຍເຮັດເປັນແທ່ນ ປ່ອງຢ້ຽມມີຕາໜ່າງ ປ່ອງຢ້ຽມມີລູກກົງ"

ກະແຕແດ່ ໂຕເຈຍແດ່ກໍຍັງເຂົ້າໄປທີ່ລືບປ່ອງຢ້ຽມໄດ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜືນຜ້ານ້ອຍສຳລັບກັ້ງປ່ອງຢ້ຽມ"

ກະແຕແດ່ ໂຕເຈຍແດ່ກໍຍັງເຂົ້າໄປທາງປ່ອງປ່ອງຢ້ຽມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມ່ານປ່ອງຢ້ຽມ"

ກະແຕແດ່ ໂຕເຈຍແດ່ເຂົ້າໄປທາງມ່ານປ່ອງຢ້ຽມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດບານປ່ອງຢ້ຽມ ເຄື່ອງອັດ ບານປ່ອງຢ້ຽມ"

## ເລື້ອງເຄື່ອງປູລາດຕັ່ງໄມ້ຕຽງຖັກສານ

ສະໄໝນັ້ນ ພິກຂຸນອນເທິງພື້ນດິນ ເນື້ອໂຕແດ່ ຈີວອນແດ່ເປື້ອນຝຸ່ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຫຍ້າຮອງນັ່ງ"

ຫຍ້າທີ່ຮອງຖືກໜູແດ່ ປວກແດ່ກັດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງໄມ້"

ເມື່ອນອນເທິງຕັ່ງນັ້ນ ເນື້ອໂຕເຈັບ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຖັກຫຼືຕຽງສານ"

# ມັນຈະປີຖາທີອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດຕຽງແລະຕັ່ງເປັນຕົ້ນ

### ເລື້ອງຕຽງແລະຕັ່ງ

[໔໙] ສະໄໝນັ້ນ ຕຽງມີໄມ້ຂອບຕຽງສອດເຂົ້າໃນຕີນທີ່ເຂົາຖີ້ມໄວ້ໃນປ່າຊ້າ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຊະນິດມີໄມ້ຂອບຕຽງສອດເຂົ້າໃນຕີນ”

ຕັ່ງມີໄມ້ຂອບຕຽງສອດເຂົ້າໃນຕີນທີ່ເຂົາຖີ້ມໄວ້ໃນປ່າຊ້າເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງມີໄມ້ຂອບຕຽງສອດເຂົ້າໃນຕີນ”

ສະໄໝນັ້ນ ຕຽງມີໄມ້ຂອບຕຽງຕິດກັບຕີນ ທີ່ເຂົາຖີ້ມໄວ້ໃນປ່າຊ້າ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຊະນິດມີໄມ້ຂອບຕຽງຕິດກັບຕີນ”

ຕັ່ງຊະນິດມີໄມ້ຂອບຕິດກັບຕີນທີ່ເຂົາຖີ້ມໄວ້ໃນປ່າຊ້າເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຊະນິດມີໄມ້ຂອບຕິດກັບຕີນ”

ສະໄໝນັ້ນ ຕຽງມີຕີນດັ່ງກ້າມປູ ທີ່ເຂົາຖີ້ມໄວ້ໃນປ່າຊ້າເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຊະນິດມີຕີນດັ່ງກ້າມປູ”

ຕັ່ງມີຕີນດັ່ງກ້າມປູທີ່ເຂົາຖີ້ມໄວ້ໃນປ່າຊ້າເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຊະນິດມີຕີນດັ່ງກ້າມປູ”

ສະໄໝນັ້ນ ຕຽງມີຕີນຮອດໄມ້ຂອບຕຽງ ທີ່ເຂົາຖິ້ມໄວ້ໃນປ່າຊ້າ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຊະນິດມີຕີນຮອດໄມ້ຂອບຕຽງ"

ຕັ່ງມີຕີນຮອດໄມ້ຂອບ ທີ່ເຂົາຖິ້ມໄວ້ໃນປ່າຊ້າ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຊະນິດມີຕີນຮອດໄມ້ຂອບ"

## ເລື້ອງມ້ານັ່ງຊະນິດຕ່າງ ໆ

ສະໄໝນັ້ນ ມ້ານັ່ງສີ່ຫຼ່ຽມ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມ້ານັ່ງສີ່ຫຼ່ຽມ"

ມ້ານັ່ງສີ່ຫຼ່ຽມສູງ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີ ພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມ້ານັ່ງສີ່ຫຼ່ຽມສູງ"

ມ້ານັ່ງສີ່ຫຼ່ຽມສູງມີພະນັກ ໓ ດ້ານ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມ້ານັ່ງສີ່ຫຼ່ຽມສູງມີພະນັກ ໓ ດ້ານ"

ມ້ານັ່ງສີ່ຫຼ່ຽມມີພະນັກ ໓ ດ້ານຊະນິດສູງ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງ ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມ້ານັ່ງສີ່ຫຼ່ຽມມີພະນັກ ໓ ດ້ານຊະນິດສູງ"

ຕັ່ງຫວາຍ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຫວາຍ"

ຕັ່ງຫຸ້ມດ້ວຍຜ້າ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຫຸ້ມດ້ວຍຜ້າ"

ຕັ່ງຂາຊາຍ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງຂາຊາຍ"

ຕັ່ງກ້ານໝາກຂາມປ້ອມ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງກ້ານໝາກຂາມປ້ອມ"

ແຜ່ນແປ້ນ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດແຜ່ນແປ້ນ"

ຕັ່ງເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງ"

ຕັ່ງເຟືອງ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕັ່ງເຟືອງ"

## ເລື້ອງຫ້າມນອນເທິງຕຽງສູງ

ສະໄໝນັ້ນ ພວກພິກຂຸສັບພັກຄີນອນເທິງຕຽງສູງ ຄົນທັງຫຼາຍຍ່າງທ່ຽວຊົມວິຫານເຫັນຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລິຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນອນເທິງຕຽງສູງ ອົງໃດນອນ ຕ້ອງອາບັດທຸກກົດ"

## ເລື້ອງໄມ້ໜຸນຕີນຕຽງ

ສະໄໝນັ້ນ ພິກຂຸອົງໜຶ່ງນອນເທິງຕຽງຕໍ່າ ຖືກງູກັດ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ໜຸນຕີນຕຽງ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ໄມ້ໜຸນຕີນຕຽງສູງ ສະລັກຕິດກັບໄມ້ໜຸນຕີນຕຽງ ຄົນທັງຫຼາຍຍ່າງທ່ຽວຊົມວິຫານເຫັນຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລິຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸບໍ່ເພິ່ງໃຊ້ໄມ້ໜຸນຕີນຕຽງສູງ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ໜຸນຕີນຕຽງສູງ ໘ ນີ້ວເປັນຢ່າງຫຼາຍ"

## ເລື້ອງດ້າຍ

ສະໄໝນັ້ນ ດ້າຍເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ດ້າຍຖັກຕຽງ"

ໂຕໄມ້ຂອບຕຽງເປືອງດ້າຍຫຼາຍ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດ ໃຫ້ເຈາະໂຕໄມ້ຂອບຕຽງແລ້ວຖັກເປັນຕາໝາກຣຸກ"

ປ່ຽງຜ້າຜືນນ້ອຍ ໆ ເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດເປັນຜ້າປູພື້ນ"

ປຸຍນຸ່ນເກີດຂຶ້ນ ໗ລ໗ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ ສາງນຸ່ນແລ້ວເຮັດເປັນໝອນ ປຸຍນຸ່ນມີ ໓ ຊະນິດ ຄື ນຸ່ນຈາກຕົ້ນໄມ້ ນຸ່ນຈາກເຄືອເຂົາ ນຸ່ນຈາກຫຍ້າ"

## ເລື້ອງໝອນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ໝອນຍາວຂະໜາດເຄິ່ງກາຍ (ຍາວເຄິ່ງລຳໂຕຄົນ) ຄົນທັງຫຼາຍຍ່າງທ່ຽວຊົມວິຫານເຫັນ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໝອນຍາວຂະໜາດເຄິ່ງກາຍ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດໝອນພໍເໝາະກັບຫົວ"

## ເລື້ອງຟູກ ໕ ຊະນິດ

ສະໄໝນັ້ນ ມີມະໂຫລະສົບເທິງຈອມພູໃນນະຄອນຣາດຊະຄຶ ຄົນທັງຫຼາຍຈັດຟູກ ໕ ຊະນິດໄວ້ ສຳລັບມະຫາອຳໝາດ ຄື ຟູກຂົນສັດ ຟູກຜ້າ ຟູກເປືອກໄມ້ ຟູກຫຍ້າ ຟູກໃບໄມ້ ເມື່ອມະໂຫລະສົບເຊົາແລ້ວ ເຂົາໄດ້ຖອດເອົາປອກຟູກໄປ ພິກຂຸທັງຫຼາຍເຫັນຂົນສັດ ປ່ຽງຜ້າ ເປືອກໄມ້ ຫຍ້າແລະໃບໄມ້ເປັນຈຳນວນຫຼາຍ ທີ່ເຂົາຖິ້ມໄວ້ໃນບ່ອນຫຼິ້ນມະໂຫລະສົບ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຟູກ ໕ ຊະນິດ ຄື ຟູກຂົນສັດ ຟູກຜ້າ ຟູກເປືອກໄມ້ ຟູກຫຍ້າ ຟູກໃບໄມ້"

ສະໄໝນັ້ນ ປ່ຽງຜ້າສຳລັບໃຊ້ສອຍປະຈຳເສນາສະນະເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫຸ້ມຟູກ"

## ເລື້ອງຕຽງຫຸ້ມດ້ວຍຟູກ

ສະໄໝນັ້ນ ພິກຂຸທັງຫຼາຍປູຟູກຕຽງລົງເທິງຕັ່ງ ປູຟູກຕັ່ງລົງເທິງຕຽງ ຟູກຂາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງຫຸ້ມດ້ວຍຟູກ ຕັ່ງຫຸ້ມດ້ວຍຟູກ"

ພິກຂຸປູລົງບໍ່ໄດ້ໃຊ້ຜ້າຮອງຂ້າງລຸ່ມ ຟູກຍ້ອຍລົງຂ້າງລຸ່ມ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບ ສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າຮອງປູພື້ນແລ້ວຫຸ້ມຟູກ"

ໂຈນເລີກຜ້າຫຸ້ມຟູກລັກເອົາໄປ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດໃຫ້ໃຊ້ຊຽນແຕ້ມ"

ໂຈນກໍຍັງລັກເອົາໄປອີກ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ເຮັດຕຳໜິໄວ້"

ເຖິງແນວນັ້ນກໍຍັງລັກເອົາໄປອີກ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ເຮັດຕຳໜິດ້ວຍນິ້ວມືໄວ້"

## ເສຕະວັນນາທິອະນຸຊານະນາ

### ວ່າດ້ວຍຊົງອະນຸຍາດສີຂາວເປັນຕົ້ນ

[໔໙໗] ສະໄໝນັ້ນ ທີ່ຢູ່ອາໄສຂອງພວກເດຍຣະຖີ ມີສີຂາວ ແຕ່ພື້ນເຮັດເປັນສີດຳ ເຮັດຝາເປັນສີເຫຼືອງ ຄົນທັງຫຼາຍປະລົງຈະເບິ່ງທີ່ຢູ່ອາໄສຈຶ່ງເດີນທາງໄປ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສີຂາວ ສີດຳ ສີເຫຼືອງໃນວິຫານ"

ສະໄໝນັ້ນ ຝາເນື້ອຫຍາບ ສີຂາວຈຶ່ງບໍ່ເກາະຕິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນປືນແກບແລ້ວໃຊ້ ກຽງສາບໃຫ້ພຽງ ໃຫ້ສີຂາວເກາະຕິດ"

ສີຂາວກໍຍັງບໍ່ຕິດສະນິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນລະອຽດແລ້ວໃຊ້ກຽງສາບໃຫ້ສີຂາວເກາະຕິດ"

ສີຂາວກໍຍັງບໍ່ຕິດສະນິດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ໃຊ້ຢາງໄມ້ ແປ້ງປຽກ"

ສະໄໝນັ້ນ ຝາເນື້ອຫຍາບ ສີເຫຼືອງຈຶ່ງບໍ່ເກາະຕິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນປືນແກບແລ້ວໃຊ້ ກຽງສາບໃຫ້ສີເຫຼືອງເກາະຕິດ"

ສີເຫຼືອງກໍຍັງບໍ່ເກາະຕິດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນປືນຮຳແລ້ວໃຊ້ກຽງສາບໃຫ້ສີເຫຼືອງເກາະຕິດ"

ສີເຫຼືອງກໍຍັງບໍ່ຕິດສະນິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ແປ້ງໄນຜັກກາດຂີ້ເຜີ້ງແຫຼວ"

ແປ້ງໜາເກີນໄປ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າເຊັດອອກ"

ສະໄໝນັ້ນ ພື້ນຫຍາບໄປ ສີດຳບໍ່ເກາະຕິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນປືນແກບແລ້ວໃຊ້ ກຽງສາບໃຫ້ສີດຳເກາະຕິດ"

ສີດຳກໍຍັງບໍ່ຕິດສະນິດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ດິນຂຸຍຂີ້ກະເດືອນ ແລ້ວໃຊ້ ກຽງສາບໃຫ້ສີດໍາເກາະຕິດ"

ສີດໍາກໍຍັງບໍ່ຕິດສະນິດ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຢາງໄມ້ ນໍ້າຝາດ"

## ປະຕິພານະຈິດຕະປຕິກເຂປະ

## ວ່າດ້ວຍຊົງຫ້າມຮູບຈິດຕະກໍາຝາ

## ເລື້ອງຊົງອະນຸຍາດຮູບດອກໄມ້

[໒໙໙] ສະໄໝນັ້ນ ພວກພິກຂຸສັບພັກຄີໃຫ້ຊ່າງແຕ້ມຮູບຈິດຕະກໍາ ຄື ຮູບສະຕີ ຮູບບຸຣຸດໄວ້ໃນວິຫານ ຄົນທັງຫຼາຍຍ່າງທ່ຽວຊົມເຫັນຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ຊ່າງແຕ້ມຮູບຈິດຕະກໍາ ຄື ຮູບສະຕີ ຮູບບຸຣຸດ ອົງໃດໃຫ້ແຕ້ມຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດ ຮູບລວດລາຍດອກໄມ້ ຮູບລວດລາຍເຄືອເຂົາ ຮູບລວດລາຍແຂ້ວມັງກອນ ຮູບລວດລາຍດອກຈອກ"

## ອິດຖະກາຈະຍາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດໃຫ້ກໍ່ດິນຈີ່ເປັນຕົ້ນ

## ເລື້ອງວິຫານພື້ນຕໍ່າ

[໓໐໐] ສະໄໝນັ້ນ ວິຫານມີພື້ນຕໍ່າ ນໍ້າຖ້ວມ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາ ອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

## ເລື້ອງວິຫານມີພື້ນເປັນລານໂລ່ງ

ສະໄໝນັ້ນ ວິຫານມີພື້ນເປັນລານໂລ່ງ[១] ພິກຂຸທັງຫຼາຍລະອາຍທີ່ຈະນອນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າກັ້ງ"

ພິກຂຸທັງຫຼາຍຮື້ຊາຍຜ້າກັ້ງແນມເບິ່ງກັນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກັ້ນຝາເຄິ່ງໜຶ່ງ"

ພິກຂຸທັງຫຼາຍກໍຍັງແນມຜ່ານຂ້າງເທິງຝານັ້ນໄດ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຫ້ອງພາຍໃນ ໓ ຊະນິດ ຄື ຫ້ອງຄ້າຍສະຫຼຽງ ຫ້ອງຄ້າຍອຸບໂມງ ຫ້ອງເທິງເຮືອນໂລ້ນ"[១]

## ເລື້ອງວິຫານນ້ອຍ

ສະໄໝນັ້ນ ພິກຂຸທັງຫຼາຍກັ້ນຫ້ອງໄວ້ສູນກາງວິຫານນ້ອຍ ບໍ່ມີບໍລິເວນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກັ້ນຫ້ອງໄວ້ດ້ານໜຶ່ງໃນວິຫານນ້ອຍ ແຕ່ກັ້ນຫ້ອງໄວ້ສູນກາງໃນວິຫານໃຫຍ່"

## ເລື້ອງຝາວິຫານເປ່ເພ

ສະໄໝນັ້ນ ຕີນຝາວິຫານເປ່ເພ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂອບຕີນຝາ"

ຝາວິຫານຖືກຝົນສາດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດແຜງກັນສາດ ຝາເຮັດດ້ວຍດິນປົນຂີ້ເທົ່າກັບມູນງົວ"

## ເລື້ອງຊົງອະນຸຍາດເພດານ

ສະໄໝນັ້ນ ງູຕົກຈາກຫຼັງຄາມຸງຫຍ້າລົງມາທີ່ຄໍພິກຂຸອົງໜຶ່ງ ພິກຂຸນັ້ນຕົກໃຈຢ້ານ ຮ້ອງສຽງດັງ ພິກຂຸທັງຫຼາຍແລ່ນເຂົ້າໄປຖາມວ່າ "ອາວຸໂສ ທ່ານຮ້ອງເຮັດຫຍັງ"

ພິກຂຸນັ້ນຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເພດານ"

## ເລື້ອງຊົງອະນຸຍາດໄມ້ຫ້ອຍ

ສະໄໝນັ້ນ ພິກຂຸທັງຫຼາຍຫ້ອຍຖົງໄວ້ທີ່ຕີນຕຽງແດ່ ທີ່ຕີນຕັ່ງແດ່ ໜູແດ່ ປວກແດ່ກັດກິນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ເດືອຍຕິດຝາ ໄມ້ຮູບງາຊ້າງ"

## ເລື້ອງຊົງອະນຸຍາດຮາວຈີວອນ

ສະໄໝນັ້ນ ພິກຂຸທັງຫຼາຍມ້ຽນຈີວອນໄວ້ເທິງຕຽງແດ່ ເທິງຕັ່ງແດ່ ຈີວອນເສຍຫາຍ ພິກຂຸ ທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວຈີວອນ ສາຍຝຽກໃນວິຫານ"

ສະໄໝນັ້ນ ວິຫານຍັງບໍ່ມີລະບຽງ ພັກອາໄສບໍ່ໄດ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດລະບຽງ ສະຫຼຽງ ລັບແລໜ້າມຸກມີຫຼັງຄາ"

ລະບຽງໂລ່ງ ພິກຂຸທັງຫຼາຍລະອາຍທີ່ຈະນອນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດແຜງເລື່ອນຝາຄ້ຳ"

# ອຸປັດຖານະສາລາອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດທໍາສັນ

## ເລື້ອງພິກຂຸສັນຮ່ວມກັນໃນກາງແຈ້ງ

[໓໐໑] ສະໄໝນັ້ນ ພິກຂຸທັງຫຼາຍສັນອາຫານຮ່ວມກັນໃນກາງແຈ້ງ ຕ້ອງລໍາບາກຍ້ອນຄວາມໜາວແດ່ ຍ້ອນຄວາມຮ້ອນແດ່

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທໍາສັນ"

ທໍາສັນມີພື້ນທີ່ຕ່ໍາ ນ້ໍາຖ້ວມເຖິງ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄືຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລໍາບາກ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສໍາລັບຢຶດ"

ຫຍ້າຕົກທົ່ວທີ່ທໍາສັນ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດໍາ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍຫຍັກ"

ສະໄໝນັ້ນ ພິກຂຸທັງຫຼາຍປູຈີວອນລົງເທິງພື້ນດິນກາງແຈ້ງ ຈີວອນເປື້ອນຝຸ່ນ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວຈີວອນ ສາຍຫຍັກໄວ້ກາງແຈ້ງ ฯລฯ

ນ້ໍາດື່ມຖືກແດດຈຶ່ງຮ້ອນ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ສາລານ້ໍາດື່ມ ຜາມນ້ໍາດື່ມ"

ສາລານ້ຳດື່ມມີພື້ນທີ່ຕ່ຳ ນ້ຳຖ້ວມເຖິງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຍຶດ"

ຜົງຫຍ້າຕົກທົ່ວທີ່ສາລານ້ຳດື່ມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍໜຽກ"

ບໍ່ມີພາຊະນະສຳລັບຕັກນ້ຳ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຫອຍສັງຕັກນ້ຳ ໂອນ້ຳ"

## ປາກາຣາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດຮົ້ວລ້ອມເປັນຕົ້ນ

## ເລື້ອງວິຫານບໍ່ມີຮົ້ວລ້ອມ

[໓໐໘] ສະໄໝນັ້ນ ວິຫານຍັງບໍ່ມີຮົ້ວລ້ອມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລ້ອມຮົ້ວ ໓ ຊະນິດ ຄື ຮົ້ວດິນຈີ່ ຮົ້ວສິລາ ຮົ້ວໄມ້"

## ເລື້ອງຊົງອະນຸຍາດຊຸ້ມປະຕູ

ຊຸ້ມປະຕູບໍ່ມີ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຊຸ້ມປະຕູ”

ຊຸ້ມປະຕູມີພື້ນທີ່ຕ່ຳ ນ້ຳຖ້ວມເຖິງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖົມພື້ນໃຫ້ສູງ”

ຊຸ້ມປະຕູບໍ່ມີບານປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ທົວລິງ ຫຼິ້ມ ກອນ ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ”

ຜົງຫຍ້າຕົກທົ່ວທີ່ຊຸ້ມປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ”

## ເລື້ອງຊົງອະນຸຍາດທໍ່ລະບາຍນ້ຳ

ສະໄໝນັ້ນ ບໍລິເວນເປັນຕົມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຮຍຫີນແຮ່”

ຫີນແຮ່ບໍ່ເຕັມ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປູສິລາພຽງ”

ນ້ຳຂັງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດທໍ່ລະບາຍນ້ຳ”

## ເລື້ອງຊົງອະນຸຍາດສາລາໄຟ

ສະໄໝນັ້ນ ພິກຂຸທັງຫຼາຍເຮັດທີ່ຕັ້ງເຕົາໃນບ່ອນຕ່າງ ໆ ທົ່ວບໍລິເວນຈຶ່ງສົກກະປົກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດສາລາໄຟໄວ້ໃນບ່ອນສົມຄວນ ດ້ານໜຶ່ງ”

ໂຮງໄຟມີພື້ນທີ່ຕ່ຳ ນ້ຳຖ້ວມເຖິງ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາ ອະນຸຍາດໃຫ້ຖົມພື້ນໃຫ້ສູງ"

ດິນທີ່ຖົມພັງທະລາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາ ອະນຸຍາດ ໃຫ້ກໍ່ຄັນກັ້ນດິນທີ່ຖົມ ໓ ຊະນິດ ຄື ຄັນທີ່ເຮັດດ້ວຍດິນຈີ່ ຄັນທີ່ເຮັດດ້ວຍສິລາ ຄັນທີ່ເຮັດດ້ວຍໄມ້"

ພິກຂຸທັງຫຼາຍຂຶ້ນລົງລຳບາກ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາ ອະນຸຍາດຂັ້ນໄດ ໓ ຊະນິດ ຄື ຂັ້ນໄດດິນຈີ່ ຂັ້ນໄດສິລາ ຂັ້ນໄດໄມ້"

ເມື່ອພິກຂຸທັງຫຼາຍຂຶ້ນລົງພາດຕົກລົງມາ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວສຳລັບຢຶດ"

ໂຮງໄຟບໍ່ມີບານປະຕູ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາ ອະນຸຍາດ ບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ສາຍຍູ ໄມ້ຫົວລິງ ຫຼິ້ມ ກອນ ປ່ອງດານ ປ່ອງສຳລັບດຶງ ເຊືອກສຳລັບດຶງ"

ຜົງຫຍ້າຕົກທົ່ວທີ່ສາລາໄຟ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາ ອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ ຮາວຈີວອນ ສາຍຜຽກ"

## ອາຣາມະປະຣິກເຂປະອະນຸຊານະນາ

## ເລື້ອງຊົງອະນຸຍາດຮົ້ວລ້ອມອາຣາມ

[໓໐໓] ສະໄໝນັ້ນ ອາຣາມບໍ່ມີຮົ້ວລ້ອມ ແບ້ແດ່ ປະສຸສັດແດ່ເຮັດສິ່ງທີ່ປຸກໄວ້ເສຍຫາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮົ້ວ ໓ ຊະນິດ ຄື ຮົ້ວໄມ້ໄຜ່ ຮົ້ວໜາມ ຄູ"

ຊຸ້ມປະຕູບໍ່ມີ ແບ້ແລະປະສຸສັດກໍຍັງເຮັດສິ່ງທີ່ປຸກໄວ້ເສຍຫາຍຄືເກົ່າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດຊຸ້ມປະຕູ ໄມ້ຄ້າວ ບານປະຕູຄູ່ ຫຼັກຮົ້ວຕ້າຍ ກອນເຫຼັກ"

ເມິ່ງຫຍ້າຕົກທົ່ວທີ່ຊຸ້ມປະຕູ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ລົງແລ້ວເອົາດິນໂບກສາບທັງພາຍໃນພາຍນອກ ເຮັດໃຫ້ມີສີຂາວ ໃຫ້ມີສີດຳ ໃຫ້ມີສີຢາງໄມ້ ແຕ້ມລວດລາຍດອກໄມ້ ແຕ້ມລວດລາຍເຄືອເຂົາ ຈັກເປັນແຂ້ວມັງກອນ ແຕ້ມລວດລາຍດອກຈອກ"

ພື້ນອາຮາມມື່ນ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຮຍຫີນແຮ່"

ຫີນແຮ່ບໍ່ເຕັມ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປູສີລາພຽງ"

ນ້ຳຂັງ ฯລฯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດທໍ່ລະບາຍນ້ຳ"

ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ມີພຣະຣາຊະປະສົງຈະຊົງສ້າງຜາສາດ ສາບປູນຂາວຖວາຍສົງ ເວລານັ້ນພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດເຄື່ອງມຸງຫຼືບໍ່ໄດ້ຊົງອະນຸຍາດໄວ້"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງມຸງ ໕ ຊະນິດ ຄືກະເບື້ອງ ສີລາ ປູນຂາວ ຫຍ້າ ໃບໄມ້"

**ປະຖົມພານະວາຣະ ຈົບ**

# ໔. ທຸຕິຍະພານະວາຣະ

## ອະນາຖະປິນທິກະວັດຖຸ

### ວ່າດ້ວຍເລື້ອງອະນາຖະບິນດິກະຄະຫະບໍດີ

[໓໐໔] ສະໄໝນັ້ນ ອະນາຖະບິນດິກະຄະຫະບໍດີ ເປັນນ້ອງເຂີຍຂອງເສດຖີຊາວນະຄອນຣາດຊະຄຶ ຄັ້ງນັ້ນ ອະນາຖະບິນດິກະຄະຫະບໍດີ ໄດ້ເດີນທາງໄປນະຄອນຣາດຊະຄຶດ້ວຍວຽກງານບາງຢ່າງ

ເສດຖີຊາວນະຄອນຣາດຊະຄຶໄດ້ນິມົນພຣະສົງ ມີພຣະພຸດທະເຈົ້າເປັນປະທານ ເພື່ອຈະເລີນກຸສົນໃນມື້ອື່ນນີ້ ສັ່ງຂ້າທາດແລະກຳມະກອນວ່າ "ທ່ານທັງຫຼາຍ ຖ້າເປັນແນວນັ້ນ ພວກທ່ານຈົ່ງຕື່ນແຕ່ເຊົ້າມືດ ຕົ້ມເຂົ້າ ຫຸງເຂົ້າ ຕົ້ມແກງ ຊ່ອຍກັນຈັດກຽມແກງອ່ອມ"

ຂະນະນັ້ນ ອະນາຖະບິນດິກະຄະຫະບໍດີໄດ້ມີຄວາມຄິດດັ່ງນີ້ວ່າ "ເວລາກ່ອນເມື່ອເຮົາມາ ຄະຫະບໍດີທ່ານນີ້ເຮັດທຸລະສຳເລັດກໍສົນທະນາປາໄສກັບເຮົາຜູ້ດຽວ ເວລານີ້ເຂົາມີທ່າທີວຸ່ນວາຍ ສັ່ງຂ້າທາດແລະກຳມະກອນວ່າ ພວກທ່ານຈົ່ງຕື່ນແຕ່ເຊົ້າມືດ ຕົ້ມເຂົ້າ ຫຸງເຂົ້າ ຕົ້ມແກງ ຊ່ອຍກັນຈັດກຽມແກງອ່ອມ ຄະຫະບໍດີນີ້ມັກຈະມີງານອາວາຫະມຸງຄຸນ ວິວາຫະມຸງຄຸນ ມະຫາຍັນພິທີ ຫຼື ຈະທູນເຊີນພຣະເຈົ້າພິມພິສານຈອມທັບມະຄົດຣັດ ພ້ອມດ້ວຍກອງທັບມາລ້ຽງອາຫານໃນມື້ອື່ນນີ້ແລ້ວບໍ"

ເມື່ອເສດຖີຊາວນະຄອນຣາດຊະຄຶສັ່ງຂ້າທາດແລະກຳມະກອນແລ້ວ ເຂົ້າໄປຫາອະນາຖະບິນດິກະຄະຫະບໍດີ ເຖິງທີ່ ເມື່ອເຖິງແລ້ວໄດ້ສົນທະນາກັບອະນາຖະບິນດິກະຄະຫະບໍດີແລ້ວນັ່ງທີ່ສົມຄວນ

ອະນາຖະບິນດິກະຄະຫະບໍດີໄດ້ກ່າວກັບເສດຖີຊາວນະຄອນຣາດຊະຄຶດັ່ງນີ້ວ່າ "ເມື່ອຂ້າພະເຈົ້າມາເທື່ອກ່ອນ ທ່ານເຮັດທຸລະສຳເລັດກໍສົນທະນາປາໄສກັບຂ້າພະເຈົ້າຜູ້ດຽວ ເວລານີ້ທ່ານມີທ່າທີວຸ່ນວາຍ ສັ່ງຂ້າທາດແລະກຳມະກອນວ່າ ພວກທ່ານຈົ່ງຕື່ນແຕ່ເຊົ້າມືດ ຕົ້ມເຂົ້າ ຫຸງເຂົ້າ ຕົ້ມແກງ ຊ່ອຍກັນຈັດກຽມແກງອ່ອມ ທ່ານຄົງຈະມີງານອາວາຫະມຸງຄຸນ ວິວາຫະມຸງຄຸນ ມະຫາຍັນພິທີ ຫຼືຈະທູນເຊີນພຣະເຈົ້າພິມພິສານຈອມທັບມະຄົດຣັດ ພ້ອມດ້ວຍກອງທັບມາລ້ຽງອາຫານໃນມືອື່ນນີ້ບໍ"

ເສດຖີຊາວນະຄອນຣາດຊະຄຶຕອບວ່າ "ຂ້າພະເຈົ້າ ບໍ່ມີງານອາວາຫະມຸງຄຸນ ຫຼື ວິວາຫະມຸງຄຸນທັງບໍ່ໄດ້ທູນເຊີນສະເດັດພຣະເຈົ້າພິມພິສານຈອມທັບມະຄົດຣັດພ້ອມດ້ວຍກອງທັບມາລ້ຽງອາຫານ ໃນມື້ອື່ນນີ້ ແທ້ຈິງຂ້າພະເຈົ້າຈະປະກອບມະຫາຍັນພິທີ ຄື ນິມົນພຣະສົງ ມີພຣະພຸດທະເຈົ້າ ເປັນປະທານ ເພື່ອຈະເລີນກຸສົນໃນມື້ອື່ນນີ້"

ອະນາຖະບິນດິກະຄະຫະບໍດີຖາມວ່າ "ທ່ານກ່າວວ່າ ພຣະພຸດທະເຈົ້າບໍ"

ເສດຖີຊາວນະຄອນຣາດຊະຄຶຕອບວ່າ "ຄະຫະບໍດີ ຂ້າພະເຈົ້າກ່າວວ່າ ພຣະພຸດທະເຈົ້າ"

ອະນາຖະບິນດິກະຄະຫະບໍດີຖາມຊ້ຳວ່າ "ທ່ານກ່າວວ່າ ພຣະພຸດທະເຈົ້າບໍ"

ເສດຖີຊາວນະຄອນຣາດຊະຄຶຕອບວ່າ "ຄະຫະບໍດີ ຂ້າພະເຈົ້າກ່າວວ່າ ພຣະພຸດທະເຈົ້າ"

ອະນາຖະບິນດິກະຄະຫະບໍດີຖາມຊ້ຳອີກວ່າ "ທ່ານກ່າວວ່າ ພຣະພຸດທະເຈົ້າບໍ"

ເສດຖີຊາວນະຄອນຣາດຊະຄຶກໍຍັງຕອບວ່າ “ຄະຫະບໍດີ ຂ້າພະເຈົ້າກ່າວວ່າ ພຣະພຸດທະເຈົ້າ”

ອະນາຖະບິນດິກະຄະຫະບໍດີກ່າວວ່າ “ແມ່ນສຽງປະກາດວ່າ ພຣະພຸດທະເຈົ້າ ພຣະພຸດທະເຈົ້າ ນີ້ກໍຍາກທີ່ຈະໄດ້ຍິນໃນໂລກ ທ່ານຄະຫະບໍດີ ຂ້າພະເຈົ້າສາມາດຈະເຂົ້າເຝົ້າພຣະຜູ້ມີພຣະພາກອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ ໃນເວລານີ້ໄດ້ບໍ”

ເສດຖີຊາວນະຄອນຣາດຊະຄຶຕອບວ່າ “ຄະຫະບໍດີ ເວລານີ້ຍັງບໍ່ຄວນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ມື້ອື່ນທ່ານຈະໄດ້ເຂົ້າເຝົ້າ”

ຫຼັງຈາກນັ້ນ ອະນາຖະບິນດິກະຄະຫະບໍດີນອນນຶກເຖິງພຣະພຸດທະເຈົ້າເປັນອາລົມວ່າ “ມື້ອື່ນນີ້ເຮົາຈະໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນແຕ່ເຊົ້າມືດ” ເລົ່າກັນວ່າ ຄະຫະບໍດີຕື່ນກາງດຶກເຖິງ ໓ ຄັ້ງຍ້ອນເຂົ້າໃຈວ່າສະຫວ່າງແລ້ວ

[໓໐໕] ຄັ້ງນັ້ນ ທ່ານອະນາຖະບິນດິກະຄະຫະບໍດີຍ່າງໄປທາງປະຕູປ່າສີຕະວັນ ພວກອະມະນຸດ ໄຂປະຕູໃຫ້ ເມື່ອທ່ານອະນາຖະບິນດິກະຄະຫະບໍດີຍ່າງອອກຈາກເມືອງໄປແລ້ວ ແສງສະຫວ່າງກາຍເປັນຫາຍໄປ ຜາກົດຄວາມມືດແທນ ຄວາມຢ້ານ ຄວາມຕື່ນຕົກໃຈ ອາການຂົນຫົວລຸກບັງເກີດຂຶ້ນ ທ່ານອະນາຖະບິນດິກະຄະຫະບໍດີຕ້ອງການຈະກັບຈາກບ່ອນນັ້ນ

ຂະນະນັ້ນ ສີວະກະຍັກຫາຍໂຕຢູ່ປະກາດໃຫ້ໄດ້ຍິນສຽງວ່າ

“ຊ້າງ ໑ ແສນເຊືອກ ມ້າ ໑ ແສນໂຕ
ລົດມ້າອັດສະດອນ ໑ ແສນຄັນ ສາວນ້ອຍປະດັບຕຸ້ມຫູເພັດ ໑ ແສນຄົນ
ກໍຍັງບໍ່ເຖິງສ່ວນທີ່ ໑໖ ແຫ່ງການກ້າວຍ່າງໄປກ້າວໜຶ່ງ
ເຊີນກ້າວໄປເທີ້ນຄະຫະບໍດີ ທ່ານກ້າວໄປດີກວ່າ ຢ່າຖອຍກັບເລີຍ”

ທັນໃດນັ້ນຄວາມມືດກາຍເປັນຫາຍໄປ ແສງສະຫວ່າງຜາກົດຂຶ້ນແກ່ທ່ານອະນາຖະບິນດິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ອາການຂົນຫົວລຸກກາຍເປັນຫາຍໄປ

ແມ່ນເທື່ອທີ ໔ ໆລໆ

ແມ່ນເທື່ອທີ ໓ ແສງສະຫວ່າງກາຍເປັນຫາຍໄປ ຜາກົດຄວາມມືດແທນ ຄວາມຢ້ານ ຄວາມ ຕື່ນຕົກໃຈ ອາການຂົນຫົວລຸກບັງເກີດຂຶ້ນ ທ່ານອະນາຖະບິນດິກະຄະຫະບໍດີຕ້ອງການຈະກັບຈາກບ່ອນນັ້ນ

ແມ່ນເທື່ອທີ ໓ ສີວະກະຍັກກໍຫາຍໂຕຢູ່ແຕ່ປະກາດໃຫ້ໄດ້ຍິນສຽງວ່າ

“ຊ້າງ ໑ ແສນເຊືອກ ມ້າ ໑ ແສນໂຕ
ລົດມ້າອັດສະດອນ ໑ ແສນຄັນ ສາວນ້ອຍປະດັບຕຸ້ມຫູເພັດ ໑ ແສນຄົນ

ກໍຍັງບໍ່ເຖິງສ່ວນທີ່ ໑໖ ແຫ່ງການກ້າວຢ່າງໄປກ້າວໜຶ່ງ
ເຊີນກ້າວໄປເທີ້ນຄະຫະບໍດີ ທ່ານກ້າວໄປດີກວ່າ ຢ່າຖອຍກັບເລີຍ"

ແມ່ນເທື່ອທີ ໓ ຄວາມມືດກາຍເປັນຫາຍໄປ ແສງສະຫວ່າງຜາກົດແກ່ທ່ານອະນາຖະບິນດິກະຄະຫະບໍດີ ຄວາມຢ້ານ ຄວາມຕື່ນຕົກໃຈ ອາການຂົນຫົວລຸກກາຍເປັນຫາຍໄປ

ລຳດັບນັ້ນ ອະນາຖະບິນດິກະຄະຫະບໍດີຍ່າງເຂົ້າໄປສູ່ປ່າສີຕະວັນ ເຊົ້າມືດມື້ນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນຈົງກົມທີ່ກາງແຈ້ງ ໄດ້ທອດພຣະເນດເຫັນທ່ານອະນາຖະບິນດິກະຄະຫະບໍດີຍ່າງມາແຕ່ໄກ ບັດແລ້ວຈຶ່ງສະເດັດລົງຈາກທີ່ຈົງກົມປະທັບນັ່ງເທິງອາສະນະທີ່ປູໄວ້ ເມື່ອແລ້ວໄດ້ຕັດກັບທ່ານອະນາຖະບິນດິກະຄະຫະບໍດີດັ່ງນີ້ວ່າ "ມາເທີ້ນສຸທັດຕະ"

ທ່ານອະນາຖະບິນດິກະຄະຫະບໍດີຣື່ນເຣິງບັນເທີງໃຈວ່າ "ພຣະຜູ້ມີພຣະພາກເຈົ້າຕັດຮຽກຊື່ເຮົາ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບັດແລ້ວຊົບຫົວລົງແທບພຣະບາດທັງສອງແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເປັນສຸກດີບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ

ພາມຜູ້ດັບກິເລດແລ້ວ ຍ່ອມຢູ່ເປັນສຸກທຸກເມື່ອ
ຜູ້ບໍ່ຕິດຢູ່ໃນກາມ ເປັນຄົນເຢືອກເຢັນ
ບໍ່ມີອຸປະທິກິເລດ ຕັດກິເລດເຄື່ອງຂ້ອງໄດ້ທຸກຢ່າງແລ້ວ
ກຳຈັດຄວາມກະວົນກະວາຍໃນໃຈ
ເຂົ້າເຖິງຄວາມສະງົບ ຍ່ອມຢູ່ເປັນສຸກ[๑]

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ)
໓. ສັກຄະກະຖາ (ເລື້ອງສະຫວັນ)
໔. ກາມາທີນະວະກະຖາ (ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ)
໕. ເນກຂຳມານິສັງສະກະຖາ (ອານິສົງແຫ່ງການອອກຈາກກາມ) ແກ່ອະນາຖະບິນດິກະຄະຫະບໍດີ

ເມື່ອຊົງຮູ້ວ່າທ່ານອະນາຖະບິນດິກະຄະຫະບໍດີມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາ໌ຂອງພຣະພຸດທະເຈົ້າທັງຫຼາຍ

ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ທ່ານອະນາຖະບິນດິກະຄະຫະບໍດີ ທີ່ອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບຄືຜ້າຂາວສະອາດປາສະຈາກມົນທິນຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ທ່ານອະນາຖະບິນດິກະຄະຫະບໍດີໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າໂຜດຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂໍພຣະອົງພ້ອມດ້ວຍພິກຂຸສົງຈົ່ງຮັບພັດຕາຫານ ເພື່ອຈະເລີນກຸສົນໃນມື້ອື່ນນີ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ເມື່ອທ່ານອະນາຖະບິນດິກະຄະຫະບໍດີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວກະທຳປະທັກຂິນກັບໄປ

ເສດຖີຊາວນະຄອນຣາດຊະຄຶໄດ້ຮູ້ຂ່າວວ່າ "ທ່ານອະນາຖະບິນດິກະຄະຫະບໍດີ ນິມົນພຣະສົງມີພຣະພຸດທະເຈົ້າເປັນປະທານ ເພື່ອຈະເລີນກຸສົນໃນມື້ອື່ນນີ້"

[໓໐໖] ຄັ້ງນັ້ນ ເສດຖີຊາວນະຄອນຣາດຊະຄຶ ໄດ້ກ່າວກັບທ່ານອະນາຖະບິນດິກະຄະຫະບໍດີ ດັ່ງນີ້ວ່າ "ຄະຫະບໍດີ ໄດ້ຂ່າວວ່າທ່ານນິມົນພຣະສົງມີພຣະພຸດທະເຈົ້າເປັນປະທານເພື່ອຈະເລີນກຸສົນໃນມື້ອື່ນນີ້ ກໍທ່ານເປັນອາຄັນຕຸກະ ຂ້າພະເຈົ້າຈະໃຫ້ຢືມຊັບທີ່ຈະຈັບຈ່າຍສິ່ງຂອງເພື່ອຈັດແຕ່ງພັດຕາຫານ ຖວາຍພຣະສົງມີພຣະພຸດທະເຈົ້າເປັນປະທານ"

ທ່ານອະນາຖະບິນດິກະຄະຫະບໍດີຕອບວ່າ "ຢ່າເລີຍ ຄະຫະບໍດີ ຊັບທີ່ຈະຈັບຈ່າຍໃຊ້ສອຍ ເພື່ອຈັດແຕ່ງພັດຕາຫານລ້ຽງພຣະສົງມີພຣະພຸດທະເຈົ້າເປັນປະທານຂອງຂ້າພະເຈົ້າມີພ້ອມແລ້ວ"

ຊາວນິຄົມໃນນະຄອນຣາດຊະຄຶ ໄດ້ຮູ້ຂ່າວວ່າ "ທ່ານອະນາຖະບິນດິກະຄະຫະບໍດີນິມົນພຣະ ສົງມີພຣະພຸດທະເຈົ້າເປັນປະທານເພື່ອຈະເລີນກຸສົນໃນມື້ອື່ນນີ້" ລຳດັບນັ້ນ ຊາວນິຄົມໃນນະຄອນຣາດຊະຄຶຈຶ່ງໄດ້ກ່າວກັບອະນາຖະບິນດິກະຄະຫະບໍດີດັ່ງນີ້ວ່າ "ຄະຫະບໍດີ ໄດ້ຂ່າວວ່າ

ທ່ານນິມົນພຣະສົງມີພຣະພຸດທະເຈົ້າເປັນປະທານ ເພື່ອຈະເລີນກຸສົນໃນມື້ອື່ນນີ້ ກໍທ່ານເປັນອາຄັນຕຸກະ ຂ້າພະເຈົ້າຈະໃຫ້ຍືມຊັບທີ່ຈະຈັບຈ່າຍສິ່ງຂອງ ເພື່ອຈັດແຕ່ງພັດຕາຫານຖວາຍພຣະສົງມີພຣະພຸດທະເຈົ້າເປັນປະທານ"

ທ່ານອະນາຖະບິນດິກະຄະຫະບໍດີຕອບວ່າ "ຢ່າເລີຍທ່ານ ຊັບທີ່ຈະຈັບຈ່າຍໃຊ້ສອຍເພື່ອຈັດແຕ່ງພັດຕາຫານລ້ຽງພຣະສົງມີພຣະພຸດທະເຈົ້າເປັນປະທານຂອງຂ້າພະເຈົ້າມີພ້ອມແລ້ວ"

ພຣະເຈົ້າພິມພິສານຈອມທັບມະຄົດຣັດພໍໄດ້ຮູ້ຂ່າວວ່າ "ທ່ານອະນາຖະບິນດິກະຄະຫະບໍດີນິມົນພຣະສົງມີພຣະພຸດທະເຈົ້າເປັນປະທານເພື່ອຈະເລີນກຸສົນໃນມື້ອື່ນນີ້" ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ກ່າວກັບອະນາຖະບິນດິກະຄະຫະບໍດີດັ່ງນີ້ວ່າ "ຄະຫະບໍດີໄດ້ຂ່າວວ່າ ທ່ານນິມົນພຣະສົງມີພຣະພຸດທະເຈົ້າເປັນປະທານ ເພື່ອຈະເລີນກຸສົນໃນມື້ອື່ນນີ້ກໍທ່ານເປັນອາຄັນຕຸກະ ເຮົາຈະໃຫ້ຍືມຊັບທີ່ຈະຈັບຈ່າຍສິ່ງຂອງ ເພື່ອຈັດແຕ່ງພັດຕາຫານຖວາຍພຣະສົງມີພຣະພຸດທະເຈົ້າເປັນປະທານ"

ທ່ານອະນາຖະບິນດິກະຄະຫະບໍດີທູນຕອບວ່າ "ຢ່າເລີຍ ຂ້ານ້ອຍ ຊັບທີ່ຈະຈັບຈ່າຍໃຊ້ສອຍເພື່ອຈັດແຕ່ງພັດຕາຫານລ້ຽງພຣະສົງ ມີພຣະພຸດທະເຈົ້າເປັນປະທານຂອງຂ້າພຣະອົງມີພ້ອມແລ້ວ"

ເມື່ອລ່ວງຣາຕີນັ້ນໄປ ທ່ານອະນາຖະບິນດິກະຄະຫະບໍດີສັ່ງໃຫ້ຈັດກຽມຂອງຫຍ້ຳຂອງສັນອັນປະນີດໃນນິເວດຂອງເສດຖີຊາວນະຄອນຣາດຊະຄຶ ແລ້ວໃຫ້ຄົນໄປຂາບທູນພັດຕະການວ່າ "ເຖິງເວລາແລ້ວຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດໄປນິເວດຂອງເສດຖີຊາວນະຄອນຣາດຊະຄຶ ປະທັບນັ່ງເທິງອາສະນະທີ່ເຂົາປູຖວາຍພ້ອມກັບພິກຂຸສົງ

ລຳດັບນັ້ນ ທ່ານອະນາຖະບິນດິກະຄະຫະບໍດີໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ຈົນວ່າພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ຈຶ່ງນັ່ງເຝົ້າຢູ່ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງຈົ່ງຊົງຮັບນິມົນໄປຢູ່ຈຳພັນສາທີ່ນະຄອນສາວັດຖີຂອງຂ້າພຣະອົງເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ຕະຖາຄົດທັງຫຼາຍຍ່ອມຍິນດີໃນສຸນຍາຄານ"

ທ່ານອະນາຖະບິນດິກະຄະຫະບໍດີຂາບທູນວ່າ "ຮູ້ແລ້ວຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ທ່ານອະນາຖະບິນດິກະຄະຫະບໍດີເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ສະເດັດລຸກຈາກອາສະນະແລ້ວສະເດັດກັບໄປ

## ອະນາຖະບິນດິກະສ້າງພຣະເຊຕະວັນ

[໓໐໗] ສະໄໝນັ້ນ ທ່ານອະນາຖະບິນດິກະຄະຫະບໍດີເປັນຄົນມີມິດຫຼາຍ ມີສະຫາຍຫຼາຍ ປະຊາຊົນເຊື່ອຖືຄຳເວົ້າ ເມື່ອທ່ານອະນາຖະບິນດິກະຄະຫະບໍດີເຮັດທຸລະໃນນະຄອນຣາດຊະຄຶ ສຳເລັດແລ້ວ ກໍເດີນທາງກັບໄປນະຄອນສາວັດຖີ ລະຫວ່າງທາງໄດ້ຊັກຊວນຄົນທັງຫຼາຍວ່າ "ທ່ານທັງຫຼາຍຈົ່ງຊ່ອຍກັນສ້າງອາຣາມ ສ້າງວິຫານ ກຽມທານ ເວລານີ້ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວແລະຂ້າພະເຈົ້າໄດ້ທູນນິມົນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແລ້ວ ພຣະອົງຈະສະເດັດ ມາທາງນີ້"

ຄັ້ງນັ້ນ ຄົນທັງຫຼາຍທີ່ທ່ານອະນາຖະບິນດິກະຄະຫະບໍດີຊັກຊວນໄວ້ ໄດ້ພາກັນສ້າງອາຣາມ ສ້າງວິຫານກຽມທານ

ເມື່ອທ່ານອະນາຖະບິນດິກະຄະຫະບໍດີເຖິງນະຄອນສາວັດຖີ ທ່ຽວກວດເບິ່ງຮອບ ໆ ນະຄອນສາວັດຖີຄິດ ວ່າ "ພຣະຜູ້ມີພຣະພາກເຈົ້າຄວນປະທັບຢູ່ໄສດີເຊິ່ງບໍ່ໄກຈາກໝູ່ບ້ານເກີນໄປ ບໍ່ໃກ້ໝູ່ບ້ານເກີນໄປ ການຄົມນາຄົມສະດວກ ຜູ້ຢາກຈະເຂົ້າເຝົ້າໄປມາໄດ້ງ່າຍ ກາງເວັນຄົນບໍ່ສາລະວົນ ກາງຄືນມີສຽງລົບກວນໜ້ອຍ ບໍ່ມີສຽງອຶກກະທຶກ ຂາດຜູ້ຄົນ ເປັນສະຖານທີ່ພວກມະນຸດຈະເຮັດກິດທີ່ລັບໄດ້ ເປັນສະຖານທີ່ເໝາະແກ່ການຫຼີບຫຼີກ"

ທ່ານອະນາຖະບິນດິກະຄະຫະບໍດີໄດ້ເຫັນພຣະອຸທະຍານຂອງເຈົ້າເຊຕະຣາດຊະກຸມານ ເປັນສະຖານທີ່ບໍ່ໄກຈາກໝູ່ບ້ານເກີນໄປ ບໍ່ໃກ້ໝູ່ບ້ານເກີນໄປ ການຄົມນາຄົມສະດວກ ຜູ້ຢາກຈະເຂົ້າເຝົ້າໄປມາໄດ້ງ່າຍ ກາງເວັນຄົນບໍ່ສາລະວົນ ກາງຄືນມີສຽງລົບກວນໜ້ອຍ ບໍ່ມີສຽງອຶກກະທຶກ ຂາດຜູ້ຄົນ ເປັນສະຖານທີ່ພວກມະນຸດຈະເຮັດກິດທີ່ລັບໄດ້ ເປັນສະຖານທີ່ເໝາະແກ່ການຫຼີບຫຼີກ ບັດແລ້ວຈຶ່ງເຂົ້າເຝົ້າເຈົ້າເຊຕະຣາດຊະກຸມານຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຂາບທູນເຈົ້າເຊຕະຣາດຊະກຸມານດັ່ງນີ້ວ່າ "ພຣະລູກເຈົ້າ ຂໍພຣະອົງ ຊົງໂປດປະທານພຣະອຸທະຍານແກ່ຂ້ານ້ອຍ ເພື່ອຈັດສ້າງພຣະອາຣາມເທີ້ນ ຂ້ານ້ອຍ"

ເຈົ້າເຊຕະຣາດຊະກຸມານຮັບສັ່ງວ່າ "ຄະຫະບໍດີ ເຖິງໃຊ້ກະຫາປະນະມາລຽງໃຫ້ຈອດກັນ ເຮົາກໍໃຫ້ອຸທະຍານບໍ່ໄດ້"

ທ່ານອະນາຖະບິນດິກະຄະຫະບໍດີທູນຖາມວ່າ "ພຣະລູກເຈົ້າ ພຣະອົງຂາຍອຸທະຍານແລ້ວບໍ ຂ້ານ້ອຍ"

ເຈົ້າເຊຕະຣາດຊະກຸມານຮັບສັ່ງວ່າ "ຄະຫະບໍດີ ເຮົາຍັງບໍ່ໄດ້ຂາຍອຸທະຍານ"[១]

ເຊຕະຣາດຊະກຸມານກັບອະນາຖະບິນດິກະຄະຫະບໍດີຖາມພວກມະຫາອຳໝາດຜູ້ພິພາກສາວ່າ "ອຸທະຍານ ເປັນອັນຂາຍແລ້ວ ຫຼືຍັງບໍ່ໄດ້ຂາຍ"

ພວກມະຫາອຳໝາດຕອບວ່າ "ພຣະລູກເຈົ້າ ຍ້ອນພຣະອົງຕີລາຄາແລ້ວ ອຸທະຍານຈຶ່ງເປັນອັນຂາຍແລ້ວ"

ຈາກນັ້ນ ທ່ານອະນາຖະບິນດິກະຄະຫະບໍດີສັ່ງໃຫ້ຄົນງານນຳກວຽນບັນທຸກເງິນອອກມາລຽງ ລາດໃຫ້ຈອດກັນໃນເຊຕະວັນ ເງິນທີ່ຂົນອອກມາເທື່ອດຽວຍັງບໍ່ພຽງພໍແກ່ພື້ນທີ່ອີກໜ້ອຍໜຶ່ງໃກ້ຊຸ້ມປະຕູ ທ່ານອະນາຖະບິນດິກະຄະຫະບໍດີຈຶ່ງສັ່ງພວກຄົນງານວ່າ "ພວກທ່ານຈົ່ງໄປຂົນເງິນມາ ເຮົາຈະລຽງໃຫ້ເຕັມໃນບ່ອນນີ້"

ຂະນະນັ້ນ ເຈົ້າເຊຕະຣາດຊະກຸມານໄດ້ຊົງມີພຣະດຳຣິດັ່ງນີ້ວ່າ "ການກະທຳນີ້ບໍ່ແມ່ນຂອງຕ່ຳຕ້ອຍ ຍ້ອນຄະຫະບໍດີນີ້ບໍລິຈາກເງິນຫຼວງຫຼາຍເຖິງພຽງນີ້" ລຳດັບນັ້ນ ເຈົ້າເຊຕະຣາດຊະກຸມານໄດ້ຮັບສັ່ງກັບ ທ່ານອະນາຖະບິນດິກະຄະຫະບໍດີດັ່ງນີ້ວ່າ "ພໍເທີ້ນ ທ່ານຄະຫະບໍດີທີ່ວ່າງກົງນັ້ນ ທ່ານຢ່າລາດ ເງິນເລີຍ ໃຫ້ໂອກາດແກ່ເຮົາແດ່ ສ່ວນນີ້ຂ້າພະເຈົ້າຈະຂໍຮ່ວມຖວາຍນຳ"

ຄັ້ງນັ້ນ ທ່ານອະນາຖະບິນດິກະຄະຫະບໍດີດຳຣິວ່າ "ເຈົ້າເຊຕະຣາດຊະກຸມານພຣະອົງນີ້ຊົງເຮືອງພຣະນາມ ປະຊາຊົນຮູ້ຈັກ ຄວາມເຫຼື້ອມໃສໃນພຣະທຳວິໄນນີ້ຂອງຜູ້ທີ່ປະຊາຊົນຮູ້ຈັກແບບນີ້ ມີປະໂຫຍດຫຼາຍ" ຈຶ່ງໄດ້ຖວາຍທີ່ວ່າງນັ້ນແກ່ເຈົ້າເຊຕະຣາດຊະກຸມານ ລຳດັບນັ້ນ ເຈົ້າເຊຕະຣາດຊະກຸມານຮັບສັ່ງໃຫ້ສ້າງຊຸ້ມປະຕູທີ່ກົງນັ້ນ

ຕໍ່ມາ ທ່ານອະນາຖະບິນດິກະຄະຫະບໍດີໃຫ້ສ້າງວິຫານຫຼາຍຫຼັງໄວ້ໃນພຣະເຊຕະວັນ ສ້າງ ບໍລິເວນ ສ້າງຊຸ້ມປະຕູ ສ້າງສາລາຫໍສັນ ສ້າງໂຮງໄຟ ສ້າງກັບປິຍະກຸດຕີ[២] ສ້າງວັດຈະກຸດຕີ ສ້າງສະຖານທີ່ຈົງກົມ ສ້າງສາລາຈົງກົມ ຂຸດນ້ຳສ້າງ ສ້າງສາລານ້ຳສ້າງ ສ້າງເຮືອນໄຟ ສ້າງສາລາເຮືອນໄຟ ຂຸດສະໂບກຂະຣະນີ ສ້າງມົນດົບ

# ນະວະກຳມະຫານະ

## ວ່າດ້ວຍໃຫ້ນະວະກຳ (ການກໍ່ສ້າງ)

## ເລື້ອງຊ່າງຊຸນຜ້າ

[໓໐໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສ ແລ້ວສະເດັດຈາຣິກໄປທາງນະຄອນເວສາລີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນເວສາລີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄາຣະສາລາປ່າມະຫາວັນ ໃນນະຄອນເວສາລີນັ້ນ

ສະໄໝນັ້ນ ຄົນທັງຫຼາຍເຮັດນະວະກຳຢ່າງກະຕືລືລົ້ນ ອຸປັດຖາກພິກຂຸທັງຫຼາຍຜູ້ດຳເນີນງານກໍ່ສ້າງດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານໂດຍເຄົາລົບ

ຄັ້ງນັ້ນ ຊ່າງຊຸນຜ້າທຸກໄຮ້ຄົນໜຶ່ງໄດ້ມີຄວາມຄິດດັ່ງນີ້ວ່າ "ການເຮັດນະວະກຳນີ້ບໍ່ແມ່ນຂອງຕ່ຳຕ້ອຍ ຍ້ອນຄົນທັງຫຼາຍຊ່ອຍກັນເຮັດນະວະກຳ ທາງທີ່ດີເຮົາເພິ່ງຊ່ອຍເຮັດນະວະກຳແດ່"

ລຳດັບນັ້ນ ຊ່າງຊຸນຜ້າທຸກໄຮ້ນັ້ນຈຶ່ງນວດຕົມກໍ່ດິນຈີ່ຕັ້ງຝາຂຶ້ນ ແຕ່ຝາທີ່ກໍ່ດ້ວຍຄວາມບໍ່ຊ່ຽວຊານຄົດ ຈຶ່ງພັງທະລາຍລົງມາ

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ຊ່າງຊຸນຜ້າທຸກໄຮ້ນັ້ນກໍນວດຕົມກໍ່ດິນຈີ່ຕັ້ງຝາຂຶ້ນ ແຕ່ຝາທີ່ກໍ່ດ້ວຍຄວາມບໍ່ຊ່ຽວຊານຄົດ ຈຶ່ງພັງທະລາຍລົງມາ

ຄັ້ງນັ້ນ ຊ່າງຊຸນຜ້າທຸກໄຮ້ນັ້ນຕຳໜິ ປະນາມ ໂພນທະນາວ່າ "ພວກພຣະສະມະນະເຊື້ອສາຍສາກະຍະບຸດອົບຮົມສັ່ງສອນແຕ່ພວກທີ່ຖວາຍຈີວອນ ບິນທະບາດ ເສນາສະນະແລະຄິລານະ ປັດໄຈເພສັດບໍຣິຂານ ອຳນວຍການເຮັດນະວະກຳແກ່ຄົນພວກນັ້ນ ສ່ວນເຮົາເປັນຄົນທຸກໄຮ້ບໍ່ມີໃຜອົບຮົມສັ່ງສອນ ບໍ່ມີຄົນອຳນວຍການເຮັດນະວະກຳໃຫ້"

ພິກຂຸທັງຫຼາຍໄດ້ຍິນຊ່າງຊຸນຜ້າທຸກໄຮ້ນັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງ ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໃຫ້ນະວະກຳໄດ້ ພິກຂຸທັງຫຼາຍ

ພິກຂຸນັກເຮັດນະວະກຳຕ້ອງຂົບຂວາຍວ່າ ເຮັດແນວໃດນໍວິຫານຈຶ່ງຈະສຳເລັດໄດ້ໄວ ຕ້ອງປະຕິສັງຂອນເສນາສະນະທີ່ຊຸດໂຊມ

## ວິທີໃຫ້ນະວະກຳແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ນະວະກຳແບວນີ້ ເບື້ອງຕົ້ນເພິ່ງຂໍອະນຸຍາດພິກຂຸກ່ອນ ເມື່ອແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໓໐໙] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວສົງເພິ່ງໃຫ້ນະວະກຳວິຫານ[໑]ຂອງຄະຫະບໍດີ ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງໃຫ້ນະວະກຳວິຫານຂອງຄະຫະບໍດີຊື່ນີ້ແກ່ພິກຂຸຊື່ນີ້ ທ່ານອົງໃດເຫັນດ້ວຍກັບການໃຫ້ນະວະກຳວິຫານຂອງຄະຫະບໍດີຊື່ນີ້ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ນະວະກຳວິຫານຂອງຄະຫະບໍດີ ສົງໃຫ້ແກ່ພິກຂຸຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບວນີ້"

## ອັກຄາສະນາທິອະນຸຊານະາ

## ວ່າດ້ວຍຊົງອະນຸຍາດອາສະນະເລີດເປັນຕົ້ນ

## ເລື້ອງຄວາມເຄົາລົບ

[໓໑໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນເວສາລີຕາມພຣະອັດທະຍາໄສ ແລ້ວສະເດັດຈາຣິກໄປສູ່ນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸອັນເຕວາສິກຂອງພວກພິກຂຸສັບພັກຄີ ລ່ວງໜ້າໄປກ່ອນພຣະສົງທີ່ມີພຣະພຸດທະເຈົ້າເປັນປະທານ ຈັບຈອງວິຫານ ຈັບຈອງບ່ອນນອນໂດຍກ່າວວ່າ "ທີ່ນີ້ເປັນຂອງພຣະອຸປັດຊາທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພຣະອາຈານທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພວກເຮົາ"

ຕໍ່ມາ ທ່ານພຣະສາຣີບຸດໄປພາຍຫຼັງພຣະສົງທີ່ມີພຣະພຸດທະເຈົ້າເປັນປະທານ ເມື່ອວິຫານຖືກຈັບຈອງແລ້ວ ເມື່ອບ່ອນນອນຖືກຈັບຈອງແລ້ວ ເມື່ອບໍ່ໄດ້ບ່ອນນອນ ຈຶ່ງນັ່ງຢູ່ຂ່ວງໄມ້ຕົ້ນໜຶ່ງ

ເມື່ອເວລາໃກ້ຮຸ່ງ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນຊົງພຣະກາສະ ແມ່ນທ່ານພຣະສາຣີບຸດ ກໍໄດ້ອະແຮມຮັບ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໃຜຢູ່ບ່ອນນັ້ນ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າພຣະອົງ ສາຣີບຸດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ສາຣີບຸດ ເປັນຫຍັງທ່ານຈຶ່ງມານັ່ງບ່ອນນີ້ນໍ"

ທ່ານພຣະສາຣີບຸດໄດ້ຂາບທູນເລື້ອງນັ້ນໃຫ້ຊົງຮັບຮູ້

## ເລື້ອງຜູ້ຄວນໄດ້ອາສະນະເລີດເປັນຕົ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບ ຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸອັນເຕວາສິກຂອງພວກພິກຂຸ ສັບພັກຄີໄປກ່ອນພິກຂຸສົງ ແລ້ວຈັບຈອງວິຫານ ຈັບຈອງບ່ອນນອນໂດຍກ່າວວ່າ ທີ່ນີ້ເປັນຂອງພຣະອຸປັດຊາທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພຣະອາຈານທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພວກເຮົາ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດທັງຫຼາຍຈຶ່ງໄປກ່ອນພິກຂຸສົງ ແລ້ວຈັບຈອງວິຫານ ຈັບຈອງບ່ອນນອນໂດຍກ່າວວ່າ ທີ່ນີ້ເປັນຂອງພຣະອຸປັດຊາທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພຣະອາຈານທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພວກເຮົານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໃຜຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ບວດຈາກຕະກູນກະສັດ ຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ບວດຈາກຕະກູນພາມ ຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ບວດຈາກຕະກູນຄະຫະບໍດີ ຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ຊົງສຸດຕັນຕະຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ຊົງພຣະວິໄນຄວນໄດ້ ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນທຳມະກະຖຶກຄວນໄດ້ ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ປະຖົມຊານຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ທຸຕິຍະຊານຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ຕະຕິຍະຊານຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ຈະຕຸດຖະຊານຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນພຣະໂສດາບັນຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນພຣະສະກະທາຄາມີຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນພຣະອະນາຄາມີຄວນໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນພຣະອະຣະຫັນຄວນ ໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ວິດຊາ ໓ ຄວນໄດ້ ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

ພິກຂຸລາງພວກຂາບທູນແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ໄດ້ອະພິນຍາ ຜົຄວນ ໄດ້ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດ"

## ເລື້ອງສັດ ໓ ສະຫາຍ

[໓໑໑] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໃນແຖວຕີນພູຫິມະພານ ມີຕົ້ນໄຮໃຫຍ່ຢູ່ຕົ້ນໜຶ່ງ ສັດ ໓ ສະຫາຍ ຄື ນົກກະທາ ລີງ ແລະຊ້າງພາຍ ອາໄສຕົ້ນໄຮນັ້ນຢູ່ ສັດ ໓ ສະຫາຍນັ້ນຢູ່ຢ່າງບໍ່ເຄົາລົບ ບໍ່ຢຳເກງກັນແລະກັນ ມີການດຳເນີນຊີວິດບໍ່ຄືກັນ

ພິກຂຸທັງຫຼາຍ ຕໍ່ມາ ສັດ ໓ ສະຫາຍເປີກສາກັນວ່າ "ນີ້ພວກເຮົາ ເຮັດແນວໃດຈຶ່ງ ຈະຮູ້ໄດ້ວ່າ ໃນພວກເຮົາ ໓ ສະຫາຍ ຜູ້ໃດຄືຜູ້ສູງໄວກວ່າກັນ ຈະໄດ້ສັກກາຣະ ເຄົາລົບ ນັບຖື ບູຊາ ແລະເຊື່ອຟັງຜູ້ນັ້ນ"

ພິກຂຸທັງຫຼາຍ ຄັ້ງນັ້ນ ນົກກະທາແລະລີງຖາມຊ້າງພາຍວ່າ "ເພື່ອນເອີຍ ທ່ານຈື່ເລື່ອງເກົ່າ ໆ ອັນໃດໄດ້ແດ່ນໍ" ຊ້າງຕອບວ່າ "ເມື່ອເຮົາຍັງນ້ອຍ ເຮົາເຄີຍຍ່າງກວມຕົ້ນໄຮຕົ້ນນີ້ ຍອດໄຮພໍຣະທ້ອງຂອງເຮົາ ເຮົາຈື່ເລື້ອງເກົ່ານີ້ໄດ້"

ພິກຂຸທັງຫຼາຍ ລຳດັບນັ້ນ ນົກກະທາແລະຊ້າງພາຍຖາມລີງວ່າ "ເພື່ອນຈື່ເລື່ອງເກົ່າ ໆ ອັນໃດໄດ້ແດ່"

ລີງຕອບວ່າ "ເມື່ອເຮົາຍັງນ້ອຍ ເຮົາເຄີຍນັ່ງເທິງພື້ນດິນຫຍ້ຳກິນຍອດໄຮຕົ້ນນີ້ ເຮົາຈື່ເລື້ອງເກົ່ານີ້ໄດ້"

ພິກຂຸທັງຫຼາຍ ລຳດັບນັ້ນ ລີງແລະຊ້າງພາຍຖາມນົກກະທາວ່າ "ເພື່ອນຈື່ເລື່ອງເກົ່າ ໆ ອັນໃດໄດ້ແດ່"

ນົກກະທາຕອບວ່າ "ເພື່ອນທັງຫຼາຍ ທີ່ນັ້ນມີຕົ້ນໄຮໃຫຍ່ ເຮົາກິນໝາກຂອງຕົ້ນໄຮ ນັ້ນແລ້ວຖ່າຍມູນໄວ້ທີ່ນີ້ ໄຮຕົ້ນນີ້ເກີດຈາກຜົນຂອງຕົ້ນໄຮນັ້ນ ດັ່ງນັ້ນເຮົາຈຶ່ງເປັນຜູ້ໃຫຍ່ໂດຍ ຊາດກຳເນີດ"

ພິກຂຸທັງຫຼາຍ ລຳດັບນັ້ນ ລີງກັບຊ້າງພາຍໄດ້ກ່າວກັບນົກກະທາດັ່ງນີ້ວ່າ "ເພື່ອນ ບັນດາເຮົາທັງຫຼາຍ ທ່ານຄືຜູ້ໃຫຍ່ກວ່າໂດຍຊາດກຳເນີດ ເຮົາທັງ ໒ ຈະສັກກາຣະ ເຄົາລົບ ນັບຖື ບູຊາ ແລະເຊື່ອຟັງທ່ານ"

ພິກຂຸທັງຫຼາຍ ລຳດັບນັ້ນ ນົກກະທາໄດ້ໃຫ້ລີງກັບຊ້າງສະມາທານສີນ ໕ ທັງຕົນເອງ ກໍຮັກສາສີນ ໕ ສະຫາຍທັງ ໓ ນັ້ນຕ່າງເຄົາລົບຢຳເກງ ດຳເນີນຊີວິດຢູ່ຢ່າງສະເໝີພາກກັນ ຫຼັງ

ຈາກສິ້ນຊີວິດໄດ້ໄປເກີດໃນສຸກຄະຕິໂລກສະຫວັນ ພິກຂຸທັງຫຼາຍ ຂໍ້ປະຕິບັດນີ້ ຮຽກວ່າ ຕິດຕິຣິຍະພົມມະຈັນ

ນໍຣະຊົນເຫຼົ່າໃດສະຫຼາດໃນທຳ
ປະພຶດອ່ອນນ້ອມຖ່ອມຕົນຕໍ່ບຸກຄົນຜູ້ຈະເລີນທັງຫຼາຍ
ນໍຣະຊົນເຫຼົ່ານັ້ນເປັນຜູ້ໄດ້ຮັບການສັນເສີນໃນປັດຈຸບັນ
ແລະມີສຸກຄະຕິພົບໃນເບື້ອງໜ້າ[๑]

ພິກຂຸທັງຫຼາຍ ສັດເດຍຣັດສານພວກນັ້ນຍັງມີຄວາມເຄົາລົບຢຳເກງ ດຳເນີນຊີວິດຢູ່ຢ່າງສະເໝີພາກກັນ ພິກຂຸທັງຫຼາຍ ການທີ່ພວກທ່ານເປັນຜູ້ບວດແລ້ວ ໃນທຳວິໄນທີ່ເຮົາກ່າວດີແລ້ວ ມີຄວາມເຄົາລົບມີຄວາມຢຳເກງກັນແລະກັນ ດຳເນີນຊີວິດຢ່າງສະເໝີພາກກັນ ຈະເພິ່ງງົດງາມໃນທຳວິໄນນີ້

ພິກຂຸທັງຫຼາຍ ການເຮັດເຊັ່ນນັ້ນບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການຂາບໄຫວ້ ການລຸກຮັບ ອັນຊະລີກຳ ສາມີຈິກຳ ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດຕາມລຳດັບພັນສາອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກີດກັນເສນາສະນະຂອງສົງຕາມລຳດັບພັນສາ ອົງໃດກີດກັນຕ້ອງອາບັດທຸກກົດ"

## ອະວັນທິຍາທິປຸກຄະລະ

## ວ່າດ້ວຍບຸກຄົນທີ່ບໍ່ຄວນໄຫວ້ເປັນຕົ້ນ

## ເລື້ອງບຸກຄົນທີ່ບໍ່ຄວນໄຫວ້ ໑໐ ຈຳພວກ

[໓໑໘] ພິກຂຸທັງຫຼາຍ ບຸກຄົນທີ່ພິກຂຸບໍ່ຄວນໄຫວ້ ໑໐ ຈຳພວກ ເຫຼົ່ານີ້ຄື

໑. ຜູ້ອຸປະສົມບົດກ່ອນບໍ່ຄວນໄຫວ້ຜູ້ອຸປະສົມບົດພາຍຫຼັງ
໒. ບໍ່ຄວນໄຫວ້ອະນຸປະສຳບັນ
໓. ບໍ່ຄວນໄຫວ້ພິກຂຸນານາສັງວາດຜູ້ມີພັນສາແກ່ກວ່າ ເປັນອະທຳວາທີ
໔. ບໍ່ຄວນໄຫວ້ມາຕຸຄາມ
໕. ບໍ່ຄວນໄຫວ້ບັນເດາະ

໖. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງຢູ່ປະຣິວາດ
໗. ບໍ່ຄວນໄຫວ້ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ
໘. ບໍ່ຄວນໄຫວ້ພິກຂຸຜູ້ຄວນແກ່ມານັດ
໙. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງປະພຶດມານັດ
໑໐. ບໍ່ຄວນໄຫວ້ພິກຂຸຜູ້ຄວນແກ່ອັບພານ

ພິກຂຸທັງຫຼາຍ ບຸກຄົນທີ່ພິກຂຸບໍ່ຄວນໄຫວ້ ໑໐ ຈຳພວກ ເຫຼົ່ານີ້ແລ

## ເລື້ອງບຸກຄົນທີ່ພິກຂຸຄວນໄຫວ້ ໓ ຈຳພວກ

ພິກຂຸທັງຫຼາຍ ບຸກຄົນທີ່ພິກຂຸຄວນໄຫວ້ ໓ ຈຳພວກ ຄື

໑. ຜູ້ອຸປະສົມບົດພາຍຫຼັງຄວນໄຫວ້ຜູ້ອຸປະສົມບົດກ່ອນ
໒. ຄວນໄຫວ້ພິກຂຸນານາສັງວາດຜູ້ມີພັນສາແກ່ກວ່າ ເປັນທຳວາທີ
໓. ຄວນໄຫວ້ພຣະຕະຖາຄົດຜູ້ເປັນພຣະອະຣະຫັນ ຕັດສະຣູ້ເອງໂດຍຖືກຕ້ອງ ໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດ

ພິກຂຸທັງຫຼາຍ ບຸກຄົນທີ່ພິກຂຸຄວນໄຫວ້ ໓ ຈຳພວກເຫຼົ່ານີ້ແລ

## ອາສະນະປະຕິພາທະນະປະຕິກເຂປະ

## ວ່າດ້ວຍຊົງຫ້າມການກີດກັນອາສະນະ

## ເລື້ອງອັນເຕວາສິກຂອງພຣະສັບພັກຄີ

[໓໑໓] ສະໄໝນັ້ນ ຄົນທັງຫຼາຍຕົກແຕ່ງມົນດົບ ຈັດກຽມເຄື່ອງປູລາດ ຈັດກຽມບໍລິເວນໄວ້ເຈາະຈົງພຣະສົງ ພວກພິກຂຸອັນເຕວາສິກຂອງພວກພິກຂຸສັບພັກຄີກ່າວວ່າ "ເສນາສະນະສະເພາະທີ່ເປັນຂອງສົງທີ່ນັ້ນທີ່ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຕາມລຳດັບພັນສາ ບໍ່ໄດ້ຊົງອະນຸຍາດຂອງທີ່ເຮັດເຈາະຈົງ" ລ່ວງໜ້າໄປກ່ອນພຣະສົງທີ່ມີພຣະພຸດທະເຈົ້າເປັນປະທານ ຈັບຈອງມົນດົບແດ່ ຈັບຈອງເຄື່ອງປູລາດແດ່ ຈັບຈອງບໍລິເວນແດ່ໂດຍກ່າວວ່າ "ທີ່ນີ້ເປັນຂອງພຣະ

ອຸປັດຊາທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພຣະອາຈານທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພວກເຮົາ"

ຕໍ່ມາ ທ່ານພຣະສາຣີບຸດໄປພາຍຫຼັງພຣະສົງທີ່ມີພຣະພຸດທະເຈົ້າເປັນປະທານ ເມື່ອມີນດິບຖືກຈັບຈອງແລ້ວ ເມື່ອເຄື່ອງປູລາດຖືກຈັບຈອງແລ້ວ ເມື່ອບໍລິເວນຖືກຈັບຈອງແລ້ວ ເມື່ອບໍ່ໄດ້ບ່ອນນອນຈຶ່ງນັ່ງຢູ່ຂ່ວງໄມ້ຕົ້ນໜຶ່ງ

ເມື່ອເວລາໃກ້ຮຸ່ງ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນຊົງພຣະກາສະ ແມ່ນທ່ານພຣະສາຣີບຸດ ກໍໄດ້ອະແຮມຮັບ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໃຜຢູ່ບ່ອນນັ້ນ"
ທ່ານພຣະສາຣີບຸດຂາບທູນວ່າ "ຂ້າພຣະອົງ ສາຣີບຸດ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ສາຣີບຸດ ເປັນຫຍັງທ່ານຈຶ່ງມານັ່ງບ່ອນນີ້ນໍ"
ທ່ານພຣະສາຣີບຸດໄດ້ຂາບທູນເລື້ອງນັ້ນໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບ ຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸອັນເຕວາສິກຂອງພວກພິກຂຸສັບພັກຄີກ່າວວ່າ ເສນາສະນະສະເພາະທີ່ເປັນຂອງສົງທີ່ນັ້ນທີ່ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດ ຕາມລຳດັບພັນສາ ບໍ່ໄດ້ຊົງອະນຸຍາດຂອງທີ່ເຮັດເຈາະຈົງ ແລ້ວລ່ວງໜ້າໄປກ່ອນພຣະສົງທີ່ມີພຣະພຸດທະເຈົ້າເປັນປະທານ ຈັບຈອງມີນດິບແດ່ ຈັບຈອງເຄື່ອງປູລາດແດ່ ຈັບຈອງບໍລິເວນແດ່ໂດຍກ່າວວ່າ ທີ່ນີ້ເປັນຂອງພຣະອຸປັດຊາທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພຣະອາຈານທັງຫຼາຍຂອງພວກເຮົາ ທີ່ນີ້ເປັນຂອງພວກເຮົາ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກີດກັນແມ່ນຂອງທີ່ເຂົາເຮັດເຈາະຈົງຕາມລຳດັບພັນສາ ອົງໃດກີດກັນ ຕ້ອງອາບັດທຸກກົດ"

## ຄິຫິວິກະຕະອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດເຄື່ອງໃຊ້ແບບຄະລືຫັດ

[໓໑໔] ສະໄໝນັ້ນ ຄົນທັງຫຼາຍຕົກແຕ່ງບ່ອນນອນສູງແລະບ່ອນນອນໃຫຍ່ໄວ້ທີ່ໂຮງອາຫານໃນ ບໍລິເວນເຮືອນ ຄື

໑. ຕຽງມີຕີນສູງເກີນຂະໜາດ
໒. ຕຽງມີຕີນເປັນຮູບສັດຮ້າຍ
໓. ພົມຂົນສັດ
໔. ເຄື່ອງປູລາດຂົນແກະລາຍວິຈິດ
໕. ເຄື່ອງປູລາດຂົນແກະມີສີຂາວ
໖. ເຄື່ອງປູລາດມີຮູບດອກໄມ້
໗. ເຄື່ອງປູລາດຍັດນຸ່ນ
໘. ເຄື່ອງປູລາດຂົນແກະວິຈິດດ້ວຍຮູບສັດຮ້າຍເຊັ່ນຣາດຊະສີແລະເສືອ
໙. ເຄື່ອງປູລາດຂົນແກະມີຂົນ ໒ ດ້ານ
໑໐. ເຄື່ອງປູລາດຂົນແກະມີຂົນດ້ານດຽວ
໑໑. ເຄື່ອງປູລາດປັກດ້ວຍໄໝປະດັບຣັດຕະນະ
໑໒. ເຄື່ອງປູລາດຜ້າໄໝປະດັບຣັດຕະນະ
໑໓. ເຄື່ອງປູລາດຂົນແກະຂະໜາດໃຫຍ່
໑໔. ເຄື່ອງປູລາດເທິງຫຼັງຊ້າງທີ່ນາງຟ້ອນ ໑໖ ຄົນລ່າຍລຳ
໑໕. ເຄື່ອງປູລາດເທິງຫຼັງມ້າ
໑໖. ເຄື່ອງປູລາດໃນລົດ
໑໗. ເຄື່ອງປູລາດເຮັດດ້ວຍໜັງເສືອ
໑໘. ເຄື່ອງປູລາດໜັງຊະມົດ
໑໙. ເຄື່ອງປູລາດມີເພດານ
໒໐. ເຄື່ອງປູລາດມີໝອນ ໒ ຂ້າງ[១]

ພິກຂຸທັງຫຼາຍຢ້ຳເກງຢູ່ຈຶ່ງບໍ່ຍອມນັ່ງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງໃຊ້ແບບຄະລິຫັດຍົກເວັ້ນເຄື່ອງປູລາດ ໓ ຊະນິດ ຄື ມ້ານັ່ງສີ່ຫຼ່ຽມ ຕຽງໃຫຍ່ ເຄື່ອງປູລາດຍັດນຸ່ນ ນອກນັ້ນນັ່ງໄດ້ ແຕ່ບໍ່ອະນຸຍາດໃຫ້ນອນ”

ສະໄໝນັ້ນ ຄົນທັງຫຼາຍຕົກແຕ່ງຕຽງແດ່ ຕັ່ງແດ່ຍັດນຸ່ນໄວ້ທີ່ໂຮງອາຫານໃນບໍລິເວນບ້ານ ພວກພິກຂຸຢ້ຳເກງຢູ່ຈຶ່ງບໍ່ຍອມນັ່ງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັ່ງເທິງເຄື່ອງໃຊ້ແບບຄະລິຫັດໄດ້ ແຕ່ບໍ່ອະນຸຍາດໃຫ້ນອນ”

## ເຊຕະວະນະວິຫາຣານຸໂມທະນາ

## ວ່າດ້ວຍຊົງອະນຸໂມທະນາການຖວາຍພຣະເຊຕະວັນວິຫານ

[໓໑໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະຄະຫະບໍດີໃນນະຄອນສາວັດຖີນັ້ນ

ຄັ້ງນັ້ນ ອະນາຖະບິນດິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ທ່ານອະນາຖະບິນດິກະຄະຫະບໍດີຜູ້ນັ່ງທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງຊົງຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ເມື່ອອະນາຖະບິນດິກະຄະຫະບໍດີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

ເມື່ອຣາຕີນັ້ນຜ່ານໄປ ອະນາຖະບິນດິກະຄະຫະບໍດີສັ່ງໃຫ້ຈັດກຽມຂອງຫຍໍ້າຂອງສັນອັນປະນີດ ໃຫ້ຄົນໄປຂາບທູນພັດຕະການວ່າ "ເຖິງເວລາພັດຕາຫານແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດ ໄປນິເວດຂອງອະນາຖະບິນດິກະຄະຫະບໍດີ ປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍພ້ອມກັບພິກຂຸສົງ ອະນາຖະບິນດິກະຄະຫະບໍດີໄດ້ນຳຂອງຫຍໍ້າຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດແລ້ວ ຈຶ່ງນັ່ງເຝົ້າຢູ່ທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າພຣະອົງຈະປະຕິບັດແນວໃດໃນພຣະເຊຕະວັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານຈົ່ງຈັດຖວາຍເຊຕະວັນແກ່ສົງຈາກທິດທັງ ໔ ຜູ້ມາແລ້ວແລະຍັງບໍ່ມາ"

ອະນາຖະບິນດິກະຮັບສະໜອງພຣະພຸດທະດຳຣັດແລ້ວໄດ້ຖວາຍພຣະເຊຕະວັນແກ່ສົງຈາກທິດທັງ ໔ ຜູ້ມາແລ້ວແລະຍັງບໍ່ມາ

## ຄາຖາອະນຸໂມທະນາການຖວາຍວິຫານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາອະນາຖະບິນດິກະຄະຫະບໍດີ ດ້ວຍພຣະຄາຖາເຫຼົ່ານີ້ວ່າ

ວິຫານຍ່ອມປ້ອງກັນຄວາມໜາວຮ້ອນແລະສັດຮ້າຍ
ນອກຈາກນັ້ນ ຍັງປ້ອງກັນງູ ຍຸງແລະຝົນໃນເວລາໜາວເຢັນ
ນອກຈາກນັ້ນ ຍັງປ້ອງກັນລົມແລະແດດອັນຮ້ອນໂພດທີ່ເກີດຂຶ້ນ
ການຖວາຍວິຫານແກ່ສົງເພື່ອຫຼີບຫຼີກຢູ່ ເພື່ອຄວາມສຸກ
ເພື່ອເພ່ງພິນິດ ແລະເພື່ອເຫັນແຈ້ງ
ພຣະພຸດທະເຈົ້າທັງຫຼາຍຊົງສັນເສີນວ່າເປັນທານອັນເລີດ

ຍ້ອນແນວນັ້ນ ຜູ້ສະຫຼາດເມື່ອເຫັນປະໂຫຍດຂອງຕົນ
ເພິ່ງສ້າງວິຫານອັນອອນຊອນຖວາຍພິກຂຸຜູ້ພະຫູສູດໃຫ້ຢູ່ໃນບ່ອນນີ້ເທີ້ນ
ອີກປະການໜຶ່ງ ຜູ້ເປັນບັນດິດມີຈິດເຫຼື້ອມໃສໃນພິກຂຸພະຫູສູດ
ຜູ້ປະຕິບັດກົງເພິ່ງຖວາຍເຂົ້າ ນ້ຳ ຜ້າ
ແລະເສນາສະນະອັນຄວນ ແກ່ທ່ານເຫຼົ່ານັ້ນ
ທ່ານເຫຼົ່ານັ້ນຍ່ອມສະແດງທຳອັນເປັນເຫດບັນເທົາສັບພະທຸກແກ່ເຂົາ
ເຊິ່ງເມື່ອເຂົາຮູ້ທົ່ວເຖິງແລ້ວຈະເປັນຜູ້ບໍ່ມີອາສະວະປະຣິນິບພານໄດ້ໃນຊາດນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ອະນາຖະບິນດິກະຄະຫະບໍດີດ້ວຍພຣະຄາຖາເຫຼົ່ານີ້ແລ້ວ ຊົງລຸກຈາກອາສະນະສະເດັດກັບ

## ອາສະນະປະຕິພາຫະນາທິ

## ວ່າດ້ວຍການກີດກັນອາສະນະເປັນຕົ້ນ

## ເລື້ອງບັງຄັບພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ຍັງສັນຢູ່

[໓໑໗] ສະໄໝນັ້ນ ມະຫາອຳໜາດຜູ້ໜຶ່ງເປັນສາວົກຂອງອາຊີວົກຈັດຖວາຍສັງຄະພັດທ່ານ ພຣະອຸປະນັນທະສາກະຍະບຸດມາພາຍຫຼັງ ບັງຄັບພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ ຈຶ່ງເກີດຄວາມວຸ່ນວາຍຂຶ້ນໃນໂຮງອາຫານ

ຄັ້ງນັ້ນ ມະຫາອຳໝາດຜູ້ນັ້ນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະ ເຊື້ອສາຍສາກະຍະບຸດມາພາຍຫຼັງຈຶ່ງບັງຄັບພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ນໍ ເຮັດໃຫ້ເກີດຄວາມວຸ່ນວາຍໃນໂຮງອາຫານ ພິກຂຸຜູ້ນັ່ງທີ່ອື່ນຄວນຈະໄດ້ສັນຈົນອີ່ມບໍ່ແມ່ນບໍ"

ພິກຂຸທັງຫຼາຍໄດ້ຍິນມະຫາອຳໝາດນັ້ນຕຳໜິ ປະນາມ ໂພນທະນາ ຯລຯ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດ ມາພາຍຫຼັງ ຈຶ່ງບັງຄັບພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ນໍ ເຮັດໃຫ້ເກີດຄວາມວຸ່ນວາຍໃນໂຮງອາຫານ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າ ທ່ານມາພາຍຫຼັງບັງຄັບພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ ເຮັດໃຫ້ເກີດຄວາມ ວຸ່ນວາຍໃນໂຮງອາຫານແມ່ນບໍ?"

ພຣະອຸປະນັນທະທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງທ່ານມາພາຍຫຼັງຈຶ່ງບັງຄັບ ພິກຂຸຜູ້ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ ເຮັດໃຫ້ເກີດຄວາມວຸ່ນວາຍໃນໂຮງອາຫານນໍ ໂມຄະບຸຣຸດ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງ ຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍພິກຂຸບໍ່ເພິ່ງບັງຄັບໃຫ້ພິກຂຸທີ່ນັ່ງອາສະນະຖັດໄປໃຫ້ລຸກຂຶ້ນທັງທີ່ກຳລັງສັນຢູ່ ອົງໃດບັງຄັບໃຫ້ລຸກຂຶ້ນ ຕ້ອງອາບັດທຸກກົດ ຖ້າບັງຄັບໃຫ້ລຸກຂຶ້ນ ພິກຂຸທີ່ລຸກຂຶ້ນນັ້ນຍ່ອມເປັນຜູ້ຫ້າມພັດດ້ວຍ ເພິ່ງກ່າວກັບພິກຂຸນັ້ນວ່າ ທ່ານຈົ່ງໄປຫານ້ຳມາ ຖ້າເພິ່ງໄດ້ນ້ຳນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທີ່ຖືກບັງຄັບໃຫ້ລຸກຂຶ້ນນັ້ນເພິ່ງກືນເມັດເຂົ້າໃຫ້ຮຽບຮ້ອຍແລ້ວຈຶ່ງໃຫ້ອາສະນະແກ່ພິກຂຸຜູ້ແກ່ພັນສາກວ່າ ພິກຂຸທັງຫຼາຍ ແຕ່ເຮົາບໍ່ໄດ້ກ່າວວ່າ ພິກຂຸເພິ່ງກີດກັນອາສະນະສຳລັບພິກຂຸ ຜູ້ແກ່ພັນສາກວ່າ ໂດຍປະຣິຍາຍໃດ ໆ ອົງໃດກີດກັນ ຕ້ອງອາບັດທຸກກົດ"

## ເລື້ອງພວກພິກຂຸສັບພັກຄີໄລ່ພິກຂຸອາພາດ

ສະໄໝນັ້ນ ພວກພິກຂຸສັບພັກຄີບັງຄັບພວກພິກຂຸເປັນໄຂ້ໃຫ້ລຸກຂຶ້ນ

ພວກພິກຂຸເປັນໄຂ້ຕອບວ່າ "ພວກເຮົາບໍ່ສາມາດລຸກຂຶ້ນໄດ້ (ຍ້ອນ) ພວກເຮົາເປັນໄຂ້"

ພວກພິກຂຸສັບພັກຄີກ່າວວ່າ "ພວກເຮົາຈະຊ່ອຍໂຈມພວກທ່ານໃຫ້ລຸກຂຶ້ນ" ແລ້ວຊ່ອຍປະຄອງໃຫ້ລຸກຂຶ້ນ ແລ້ວກໍປ່ອຍໃຫ້ພວກພິກຂຸໄຂ້ຢືນຢູ່ ພວກພິກຂຸໄຂ້ສະຫຼົບລົ້ມລົງ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ ພຣະຜູ້ມີພຣະພາກຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງບັງຄັບພິກຂຸເປັນໄຂ້ໃຫ້ລຸກຂຶ້ນ ອົງໃດບັງຄັບໃຫ້ລຸກຂຶ້ນ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີກ່າວວ່າ "ພວກຂ້ານ້ອຍເປັນໄຂ້ບໍ່ຄວນທີ່ຈະຖືກໄລ່ໃຫ້ລຸກຂຶ້ນ" ແລ້ວຍຶດເອົາບ່ອນນອນດີ ໆ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເພື່ອໃຫ້ບ່ອນນອນທີ່ເໝາະສົມ ແກ່ພິກຂຸເປັນໄຂ້"

ຕໍ່ມາ ພວກພິກຂຸສັບພັກຄີກໍກົດກັນອາສະນະເອົາໄວ້ໂດຍອ້າງເລດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກົດກັນເສນາສະນະໂດຍອ້າງເລດ ອົງໃດກົດກັນ ຕ້ອງອາບັດທຸກກົດ"

## ເລື້ອງອະນຸຍາດໃຫ້ພິກຂຸຖືເສນາສະນະ

ສະໄໝນັ້ນ ພວກພິກຂຸສັດຕະຣະສະວັກຄີ (ພວກພິກຂຸທີ່ຢູ່ໃນກຸ່ມພິກຂຸ ໑໗ ອົງ) ຊ່ອມແປງວິຫານຫຼັງໃຫຍ່ແຫ່ງໜຶ່ງຢູ່ສຸດເຂດອາຣາມ ດ້ວຍໝາຍໃຈວ່າ "ພວກເຮົາຈະຈຳພັນສາໃນບ່ອນນີ້"

ພວກພິກຂຸສັບພັກຄີເຫັນພວກພິກຂຸສັດຕະຣະສະວັກຄີກຳລັງຊ່ອມແປງວິຫານ ເມື່ອເຫັນແລ້ວຈຶ່ງກ່າວກັນແນວນີ້ວ່າ "ທ່ານທັງຫຼາຍ ພວກພິກຂຸສັດຕະຣະສະວັກຄີເຫຼົ່ານີ້ກຳລັງຊ່ອມແປງວິຫານ ມາເທີ້ນ ພວກເຮົາຊ່ອຍກັນຂັບໄລ່ພວກພິກຂຸສັດຕະຣະສະວັກຄີນັ້ນອອກໄປ"

ພິກຂຸລາງພວກກ່າວແນວນີ້ວ່າ "ທ່ານທັງຫຼາຍ ໂຜດຖ້າຈົນກວ່າພວກພິກຂຸສັດຕະຣະສະວັກຄີນັ້ນຈະຊ່ອມວິຫານສຳເລັດແລ້ວພວກເຮົາຄ່ອຍໄລ່ອອກໄປ"

ຕໍ່ມາ ພວກພິກຂຸສັບພັກຄີໄດ້ກ່າວກັບພວກພິກຂຸສັດຕະຣະສະວັກຄີດັ່ງນີ້ວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ທ່ານທັງຫຼາຍ ພວກທ່ານຄວນຈະບອກກ່ອນບໍ່ແມ່ນບໍ ພວກເຮົາຈະໄດ້ຊ່ອມແປງວິຫານຫຼັງອື່ນ"

ພວກພິກຂຸສັບພັກຄີຕອບວ່າ "ທ່ານທັງຫຼາຍ ວິຫານເປັນຂອງສົງບໍ່ແມ່ນບໍ"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ແມ່ນ ທ່ານທັງຫຼາຍ ວິຫານເປັນຂອງສົງ"

ພວກພິກຂຸສັບພັກຄີກ່າວວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ"

ພວກພິກຂຸສັດຕະຣະສະວັກຄີກ່າວວ່າ "ວິຫານໃຫຍ່ ພວກທ່ານກໍຢູ່ໄດ້ ພວກເຮົາກໍຢູ່ໄດ້"

ພວກພິກຂຸສັບພັກຄີກ່າວວ່າ "ພວກທ່ານຈົ່ງຍ້າຍອອກໄປ ວິຫານເປັນຂອງພວກເຮົາ" ແລ້ວໂກດ ບໍ່ພໍໃຈ ຈັບຄໍລາກອອກໄປ

ພວກພິກຂຸສັດຕະຣະສະວັກຄີເມື່ອຖືກພວກພິກຂຸສັບພັກຄີລາກອອກໄປກໍຮ້ອງໄຫ້

ພິກຂຸທັງຫຼາຍຖາມວ່າ "ທ່ານທັງຫຼາຍ ພວກທ່ານຮ້ອງໄຫ້ເປັນຫຍັງ"

ພວກພິກຂຸສັດຕະຣະສະວັກຄີຕອບວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີເຫຼົ່ານີ້ໂກດ ບໍ່ພໍໃຈລາກພວກຂ້ານ້ອຍອອກຈາກວິຫານຂອງສົງ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍອອກຈາກວິຫານຂອງສົງນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍອອກຈາກວິຫານຂອງສົງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຄຽດບໍ່ພໍໃຈ ບໍ່ເພິ່ງລາກພິກຂຸອອກຈາກວິຫານຂອງສົງ ອົງໃດລາກ ເພິ່ງປັບອາບັດຕາມທຳ[១] ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຖືເສນາສະນະ"

## ເສນາສະນະຄາຫາປະກະສົມມຸດ

## ວ່າດ້ວຍການແຕ່ງຕັ້ງພິກຂຸເປັນເຈົ້າໜ້າທີ່ຈັດແຈງເສນາສະນະ

[໓໑໗] ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ໃຜຈະເພິ່ງຈັດແຈງໃຫ້ພິກຂຸຖືເສນາສະນະ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກເສນາສະນະທີ່ໃຫ້ພິກຂຸຖືແລະເສນາສະນະທີ່ຍັງບໍ່ໄດ້ໃຫ້ພິກຂຸຖື

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ໃນເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວສົງເພິ່ງແຕ່ງຕັ້ງພິກຂຸຊື່ ນີ້ເປັນເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ເປັນເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງເປັນເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງວິທີການໃຫ້ຖືເສນາສະນະເປັນຕົ້ນ

[໓໑໘] ຄັ້ງນັ້ນ ພິກຂຸເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະທັງຫຼາຍເປີກສາກັນດັ່ງນີ້ວ່າ "ພວກເຮົາຈະໃຫ້ພິກຂຸຖືເສນາສະນະແນວໃດນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັບພິກຂຸທັງຫຼາຍກ່ອນ ເມື່ອນັບພິກຂຸທັງຫຼາຍແລ້ວຈຶ່ງນັບບ່ອນນອນ ແລ້ວຈຶ່ງໃຫ້ຖືຕາມຈຳນວນບ່ອນນອນ"

ເມື່ອພິກຂຸເຈົ້າໜ້າທີ່ທັງຫຼາຍໃຫ້ຖືຕາມຈຳນວນບ່ອນນອນ ບ່ອນນອນເຫຼືອຫຼາຍ ຯລຯ ພຣະຜູ້ມີພຣະພາກຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖືຕາມຈຳນວນວິຫານ"

ເມື່ອພິກຂຸເຈົ້າໜ້າທີ່ທັງຫຼາຍໃຫ້ຖືຕາມຈຳນວນວິຫານ ວິຫານກໍຍັງເຫຼືອຫຼາຍ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖືຕາມຈຳນວນບໍລິເວນ"

ເມື່ອພິກຂຸເຈົ້າໜ້າທີ່ທັງຫຼາຍໃຫ້ຖືຕາມຈຳນວນບໍລິເວນ ບໍລິເວນກໍຍັງເຫຼືອຫຼາຍ ໗ລ໗ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເພີ່ມໃຫ້ອີກ ເມື່ອພິກຂຸຮັບສ່ວນເພີ່ມໄປແລ້ວ ພິກຂຸອື່ນມາ ເມື່ອບໍ່ປາຖະໜາ (ຈະໃຫ້) ກໍບໍ່ຕ້ອງໃຫ້"

ສະໄໝນັ້ນ ພິກຂຸທັງຫຼາຍໃຫ້ພິກຂຸຜູ້ຢູ່ນອກສີມາຖືເສນາສະນະ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ພິກຂຸທີ່ຢູ່ນອກສີມາຖືເສນາສະນະ ອົງໃດໃຫ້ຖື ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຖືເສນາສະນະແລ້ວຫວງໄວ້ຕະຫຼອດເວລາ ພິກຂຸທັງຫຼາຍຈຶ່ງນຳ ເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຖືເສນາສະນະແລ້ວຫວງໄວ້ ຕະຫຼອດເວລາ ອົງໃດຫວງໄວ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫວງໄວ້ໄດ້ ຕະຫຼອດ ໓ ເດືອນລະດູຝົນ ແຕ່ຈະຫວງໄວ້ຕະຫຼອດລະດູບໍ່ໄດ້"

## ເລື້ອງໃຫ້ຖືເສນາສະນະ ໓ ຢ່າງ

ຕໍ່ມາ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ການໃຫ້ຖືເສນາສະນະມີຈັກຢ່າງ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ການໃຫ້ຖືເສນາສະນະມີ ໓ ຢ່າງ ຄື

໑. ໃຫ້ຖືໃນມື້ເຂົ້າພັນສາຕົ້ນ
໒. ໃຫ້ຖືໃນມື້ເຂົ້າພັນສາຫຼັງ
໓. ໃຫ້ຖືໃນເວລາພົ້ນຈາກໄລຍະນັ້ນ

ເສນາສະນະທີ່ຈະໃຫ້ຖືໃນມື້ເຂົ້າພັນສາຕົ້ນ ເພິ່ງໃຫ້ຖືໃນມື້ແຮມ ໑ ຄ່ຳ ເດືອນ ໘ ເສນາສະນະທີ່ຈະໃຫ້ຖືໃນມື້ເຂົ້າພັນສາຫຼັງ ເພິ່ງໃຫ້ຖືໃນເມື່ອເດືອນ ໘ ລ່ວງໄປ ໑ ເດືອນ (ເດືອນ ໙) ເສນາສະນະທີ່ຈະໃຫ້ຖືໃນເວລາພົ້ນຈາກໄລຍະນັ້ນ ເພິ່ງໃຫ້ຖືໃນມື້ຖັດຈາກມື້ ປະວາຣະນາ ຄື ມື້ແຮມ ໑ ຄ່ຳ ເພື່ອຢູ່ຈຳພັນສາຕໍ່ໄປ ພິກຂຸທັງຫຼາຍ ການໃຫ້ຖືເສນາສະນະມີ ໓ ຢ່າງນີ້"

**ທຸຕິຍະພານະວານ ຈົບ**

# ៦. ຕະຕິຍະພານະວານ

## ເລື້ອງພຣະອຸປະນັນທະສາກະຍະບຸດຈອງເສນາສະນະ

[៦໑໙] ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຖືເສນາສະນະໃນນະຄອນສາວັດຖີ ແລ້ວ ເດີນທາງໄປອາວາດໃກ້ໝູ່ບ້ານອີກແຫ່ງໜຶ່ງ ໄດ້ຖືເສນາສະນະໃນບ່ອນນັ້ນອີກ

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ທ່ານອຸປະນັນທະສາກະຍະບຸດນີ້ເປັນຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ຖ້າທ່ານອຸປະນັນທະສາກະຍະບຸດຈະຈຳພັນສາໃນອາວາດນີ້ ພວກເຮົາທັງໝົດຈະຢູ່ບໍ່ຜາສຸກ ຢ່າຈັ່ງຊັ້ນເລີຍ ພວກເຮົາຈະຖາມທ່ານອຸປະນັນທະສາກະຍະບຸດ" ລຳດັບນັ້ນ ພິກຂຸເຫຼົ່ານັ້ນຈຶ່ງຖາມທ່ານພຣະອຸປະນັນທະສາກະຍະບຸດດັ່ງນີ້ວ່າ "ທ່ານອຸປະນັນທະ ທ່ານຖືເສນາສະນະ ໃນນະຄອນສາວັດຖີແລ້ວບໍ່ແມ່ນບໍ"

ທ່ານພຣະອຸປະນັນທະສາກະຍະບຸດຕອບວ່າ "ແມ່ນແລ້ວ ທ່ານທັງຫຼາຍ"

ພິກຂຸທັງຫຼາຍຖາມວ່າ "ທ່ານອົງດຽວ ເຫດໃດຈຶ່ງຫວງເສນາສະນະໄວ້ເຖິງ ໔ ແຫ່ງນໍ"

ທ່ານພຣະອຸປະນັນທະສາກະຍະບຸດຕອບວ່າ "ຂ້ານ້ອຍຈະສະຫຼະເສນາສະນະບ່ອນນີ້ໄປດຽວນີ້ແລ້ວ ຈະຖືເສນາສະນະໃນນະຄອນສາວັດຖີນັ້ນ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານອຸປະນັນທະສາກະຍະບຸດຈຶ່ງຫວງເສນາສະນະໄວ້ເຖິງ ໔ ແຫ່ງນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມທ່ານພຣະອຸປະນັນທະວ່າ "ອຸປະນັນທະ ໄດ້ຂ່າວວ່າທ່ານ ພຽງອົງດຽວຫວງເສນາສະນະໄວ້ ໔ ແຫ່ງແມ່ນບໍ?"

ພຣະອຸປະນັນທະທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງທ່ານຜູ້ດຽວຈຶ່ງຫວງເສນາສະນະ ໄວ້ເຖິງ ໔ ແຫ່ງນໍ ໂມຄະບຸຣຸດ ທ່ານຖືໃນບ່ອນນັ້ນແລ້ວສະຫຼະໃນບ່ອນນີ້ ຖືໃນບ່ອນນີ້ແລ້ວສະຫຼະໃນບ່ອນນັ້ນ ໂມຄະບຸຣຸດ ເມື່ອເປັນແນວນີ້ທ່ານກໍຈະຄາດຈາກເສນາສະນະທັງ ໔ ແຫ່ງ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸອົງດຽວບໍ່ເພິ່ງຫວງເສນາສະນະໄວ້ ໔ ແຫ່ງ ອົງໃດຫວງໄວ້ ຕ້ອງອາບັດທຸກກົດ"

# ເລື້ອງຕັດວິໄນກະຖາ

[໓໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຕັດວິໄນກະຖາແກ່ພິກຂຸທັງຫຼາຍ ຊົງພັນນາຄຸນແຫ່ງພຣະວິໄນ ຕັດສັນເສີນການຮຽນພຣະວິໄນ ຊົງພັນນາຄຸນຂອງທ່ານພຣະອຸບາລີໂດຍປະການຕ່າງ ໆ

ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດວິໄນກະຖາ ຊົງພັນນາຄຸນແຫ່ງພຣະວິໄນ ຕັດສັນເສີນການຮຽນພຣະວິໄນ ຊົງພັນນາຄຸນຂອງທ່ານພຣະອຸບາລີໂດຍປະການຕ່າງ ໆ ຂໍໃຫ້ພວກເຮົາມາຮຽນພຣະວິໄນໃນສຳນັກຂອງທ່ານພຣະອຸບາລີ ກັນເທີ້ນ"

ພິກຂຸເຫຼົ່ານັ້ນຈຳນວນຫຼາຍເປັນເຖຣະກໍມີ ເປັນນະວະກະກໍມີ ເປັນມັດຊິມະກໍມີພາກັນຮ່ຳຮຽນພຣະວິໄນໃນສຳນັກຂອງທ່ານພຣະອຸບາລີ ທ່ານພຣະອຸບາລີກໍຢືນສອນດ້ວຍຄວາມເຄົາລົບ ພິກຂຸທັງຫຼາຍຜູ້ເປັນເຖຣະ ຝ່າຍພິກຂຸເຖຣະທັງຫຼາຍກໍຢືນຮຽນດ້ວຍຄວາມເຄົາລົບທຳ ດ້ວຍເຫດນີ້ ພິກຂຸເຖຣະທັງຫຼາຍກໍອ່ອນແຮງ ແລະທ່ານພຣະອຸບາລີກໍອ່ອນແຮງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນະວະກະຜູ້ສອນນັ່ງເທິງ ອາສະນະສະເໝີກັນຫຼືສູງກວ່າ (ພິກຂຸຜູ້ຮຽນທີ່ເປັນເຖຣະ) ໄດ້ ດ້ວຍຄວາມເຄົາລົບທຳ ໃຫ້ພິກຂຸ ຜູ້ເຖຣະຜູ້ຮຽນນັ່ງເທິງອາສະນະສະເໝີກັນຫຼືຕ່ຳກວ່າ (ພຣະຜູ້ສອນທີ່ເປັນນະວະກະ) ໄດ້ ດ້ວຍຄວາມເຄົາລົບທຳ"

ສະໄໝນັ້ນ ພິກຂຸຈຳນວນຫຼາຍຢືນຄອຍຖ້າຈະຮຽນພຣະວິໄນໃນສຳນັກຂອງທ່ານພຣະອຸບາລີ ຈົນອ່ອນແຮງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸມີອາສະນະ[໑] ລະດັບດຽວກັນນັ່ງລວມກັນໄດ້"

ຕໍ່ມາ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ທີ່ຊື່ວ່າພິກຂຸມີອາສະນະລະດັບດຽວກັນດ້ວຍຄຸນສົມບັດທໍ່ໃດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ມີພັນສາແກ່ກວ່າ ກັນອ່ອນກວ່າກັນລະຫວ່າງ ໓ ພັນສານັ່ງລວມກັນໄດ້"

ສະໄໝນັ້ນ ພິກຂຸຈຳນວນຫຼາຍ ອົງມີອາສະນະລະດັບດຽວກັນນັ່ງເທິງຕຽງດຽວກັນເຮັດໃຫ້ຕຽງຫັກ ນັ່ງເທິງຕັ່ງດຽວກັນ ເຮັດໃຫ້ຕັ່ງຫັກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງລະ ໓ ອົງ ຕັ່ງລະ ໓ ອົງ"

ແມ່ນພິກຂຸ ໓ ອົງນັ່ງເທິງຕຽງກໍເຮັດໃຫ້ຕຽງຫັກ ນັ່ງເທິງຕັ່ງກໍເຮັດໃຫ້ຕັ່ງຫັກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕຽງລະ ໒ ອົງ ຕັ່ງລະ ໒ ອົງ"

ສະໄໝນັ້ນ ພິກຂຸທັງຫຼາຍຢຳເກງທີ່ຈະນັ່ງເທິງອາສະນະຍາວຮ່ວມກັບພິກຂຸຜູ້ມີອາສະນະຕ່າງລະດັບກັນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັ່ງເທິງອາສະນະຍາວຮ່ວມ ກັບພິກຂຸທີ່ມີອາສະນະຕ່າງລະດັບກັນໄດ້ ຍົກເວັ້ນບັນເດາະ ມາຕຸຄາມ ອຸພະໂຕພະຍັນຊະນະກະ"

ຕໍ່ມາ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ອາສະນະຍາວບ່ອນສຸດກຳນົດໄວ້ທີ່ໃດ ໆລໆ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດອາສະນະຍາວບ່ອນສຸດນັ່ງໄດ້ ໓ ອົງ"

ສະໄໝນັ້ນ ນາງວິສາຂາມິຄາຣະມາຕາປະສົງຈະໃຫ້ສ້າງຜາສາດມີລະບຽງແລະມີຫຼັງຄາດັ່ງເຊີດຕັ້ງຢູ່ເທິງກະພອງຊ້າງຖວາຍສົງ ລຳດັບນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດການໃຊ້ສອຍຜາສາດຫຼືຍັງບໍ່ໄດ້ຊົງອະນຸຍາດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ສອຍຜາສາດທຸກຢ່າງ"

ສະໄໝນັ້ນ ສົມເດັດພຣະໄອຍິກາຂອງພຣະເຈົ້າປະເສນທິໂກສົນທິວົງຄົດ ຍ້ອນການທິວົງຄົດນັ້ນ ເຄື່ອງອະກັບປິຍະພັນຈຳນວນຫຼາຍຈຶ່ງເກີດຂຶ້ນແກ່ສົງ ຄື

໑. ຕຽງມີຕີນສູງເກີນຂະໜາດ
໒. ຕຽງມີຕີນເປັນຮູບສັດຮ້າຍ
໓. ພົມຂົນສັດ

໔. ເຄື່ອງປູລາດຂົນແກະລາຍວິຈິດ
໕. ເຄື່ອງປູລາດຂົນແກະມີສີຂາວ
໖. ເຄື່ອງປູລາດມີຮູບດອກໄມ້
໗. ເຄື່ອງປູລາດຍັດນຸ່ນ
໘. ເຄື່ອງປູລາດຂົນແກະວິຈິດດ້ວຍຮູບສັດຮ້າຍເຊັ່ນຣາດຊະສີແລະເສືອ
໙. ເຄື່ອງປູລາດຂົນແກະມີຂົນ ໔ ດ້ານ
໑໐. ເຄື່ອງປູລາດຂົນແກະມີຂົນດ້ານດຽວ
໑໑. ເຄື່ອງປູລາດປັກດ້ວຍໄໝປະດັບຣັດຕະນະ
໑໔. ເຄື່ອງປູລາດຜ້າໄໝປະດັບຣັດຕນະ
໑໓. ເຄື່ອງປູລາດຂົນແກະຂະໜາດໃຫຍ່
໑໔. ເຄື່ອງປູລາດເທິງຫຼັງຊ້າງທີ່ນາງຟ້ອນ ໑໖ ຄົນລ່າຍລຳ
໑໕. ເຄື່ອງປູລາດເທິງຫຼັງມ້າ
໑໖. ເຄື່ອງປູລາດໃນລົດ
໑໗. ເຄື່ອງປູລາດເຮັດດ້ວຍໜັງເສືອ
໑໘. ເຄື່ອງປູລາດໜັງຊະມົດ
໑໙. ເຄື່ອງປູລາດມີເພດານ
໔໐. ເຄື່ອງປູລາດມີໝອນ ໔ ຂ້າງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕັດຕີນຕັ່ງນອນແລ້ວໃຊ້ສອຍໄດ້ ໃຫ້ທຳລາຍຮູບສັດຮ້າຍຕຽງໃຫຍ່ແລ້ວໃຊ້ສອຍໄດ້ ໃຫ້ຮື້ຟູກທີ່ຍັດນຸ່ນເຮັດເປັນໝອນແລ້ວໃຊ້ສອຍໄດ້ ນອກຈາກນີ້ໃຫ້ເຮັດເປັນເຄື່ອງປູລາດພື້ນ"

## ອະວິສະສັດຊິຍະວັດຖຸ

### ວ່າດ້ວຍຂອງທີ່ບໍ່ເພິ່ງສະຫຼະ

[໓໔໑] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ຢູ່ປະຈຳໃນອາວາດໃກ້ບ້ານແຫ່ງໜຶ່ງ ບໍ່ຫ່າງຈາກນະຄອນສາວັດຖີ ຈັດແຈງເສນາສະນະແກ່ພວກພິກຂຸອາຄັນຕຸກະແລະພິກຂຸຜູ້ກຽມຈະອອກເດີນທາງ ໄດ້ຮັບຄວາມລຳບາກ ຄັ້ງນັ້ນ ພິກຂຸເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ເວລານີ້ພວກເຮົາຈັດແຈງເສນາສະນະແກ່ພວກພິກຂຸອາຄັນຕຸກະແລະພິກຂຸຜູ້ກຽມຈະອອກເດີນທາງໄດ້ຮັບຄວາມລຳບາກ ທ່ານທັງຫຼາຍ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະມອບເສນາສະນະຂອງສົງທັງໝົດແກ່ພິກຂຸ

ອົງໜຶ່ງ ຈະໃຊ້ສອຍເສນາສະນະຂອງທ່ານ" ພິກຂຸເຫຼົ່ານັ້ນໄດ້ໃຫ້ເສນາສະນະຂອງສົງທັງໝົດແກ່ພິກຂຸອົງໜຶ່ງ ພິກຂຸອາຄັນຕຸກະທັງຫຼາຍໄດ້ກ່າວກັບພິກຂຸທັງຫຼາຍຜູ້ຢູ່ປະຈຳໃນອາວາດເຫຼົ່ານັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານໂຜດຈັດເສນາສະນະໃຫ້ພວກຂ້ານ້ອຍເທີ້ນ"

ພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍຕອບວ່າ "ເສນາສະນະຂອງສົງບໍ່ມີດອກທ່ານ ເສນາສະນະທັງໝົດ ພວກເຮົາມອບໃຫ້ພິກຂຸອົງໜຶ່ງໄປແລ້ວ"

ພິກຂຸອາຄັນຕຸກະທັງຫຼາຍຖາມວ່າ "ພວກທ່ານມອບເສນາສະນະຂອງສົງໃຫ້ພິກຂຸອົງໜຶ່ງໄປແລ້ວບໍ"

ພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍຕອບວ່າ "ແມ່ນແລ້ວ ທ່ານທັງຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍຈຶ່ງສະຫຼະເສນາສະນະທີ່ເປັນຂອງສົງນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສະຫຼະເສນາສະນະຂອງສົງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງສະຫຼະເສນາສະນະຂອງສົງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຂອງທີ່ສະຫຼະບໍ່ໄດ້ ໕ ໝວດ ສົງ ຄະນະຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ

ຂອງທີ່ບໍ່ຄວນສະຫຼະ ໕ ໝວດ ຄືອັນໃດແດ່ ຄື

໑. ອາຣາມ ພື້ນທີ່ອາຣາມ ນີ້ເປັນຂອງທີ່ບໍ່ຄວນສະຫຼະອັນດັບທີ ໑ ສົງ ຄະນະ ຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ
໒. ວິຫານ ພື້ນທີ່ວິຫານ ນີ້ເປັນຂອງທີ່ບໍ່ຄວນສະຫຼະອັນດັບທີ ໒ ສົງ ຄະນະຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ
໓. ຕຽງ ຕັ່ງ ຟູກ ໝອນ ນີ້ເປັນຂອງທີ່ບໍ່ຄວນສະຫຼະອັນດັບທີ ໓ ສົງ ຄະນະ ຫຼືບຸກຄົນ ບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ

໔. ໝໍ້ໂລຫະ ອ່າງໂລຫະ ກະຖາງໂລຫະ ກະທະໂລຫະ ມີດ ຂວານ ຂວານຖາກ ຈົກ ສະວ່ານ ນີ້ເປັນຂອງທີ່ບໍ່ຄວນສະຫຼະອັນດັບທີ ໔ ສົງ ຄະນະຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ

໕. ເຄືອເຂົາ ໄມ້ໄຜ່ ຫຍ້າປ້ອງ ຫຍ້າມຸ້ງກະຕ່າຍ ຫຍ້າສາມັນ ດິນ ເຄື່ອງໄມ້ແລະເຄື່ອງດິນນີ້ເປັນຂອງທີ່ບໍ່ຄວນສະຫຼະອັນດັບທີ ໕ ສົງ ຄະນະ ຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ຂອງທີ່ສະຫຼະບໍ່ໄດ້ ໕ ໝວດເຫຼົ່ານີ້ແລ ສົງ ຄະນະຫຼືບຸກຄົນບໍ່ເພິ່ງສະຫຼະ ແມ່ນສະຫຼະແລ້ວກໍບໍ່ເປັນອັນສະຫຼະ ອົງໃດສະຫຼະ ຕ້ອງອາບັດຖຸນລັດໄຈ”

# ອະເວພັງຄິຍະວັດຖຸ

## ວ່າດ້ວຍຂອງທີ່ບໍ່ເພິ່ງແບ່ງ

### ເລື່ອງພຣະອັດສະຊິແລະພຣະປຸນັບພະສຸກະ

[໓໘໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນສາວັດຖີ ຕາມພຣະອັດທະຍາໄສ ແລ້ວ ໄດ້ສະເດັດຈາຣິກໄປກີຕາຄີຣີຊົນນະບົດ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລວມທັງພຣະສາຣີບຸດແລະພຣະໂມກຄັນລານະ

ພຣະອັດສະຊິແລະພຣະປຸນັບພະສຸກະຮູ້ຂ່າວແລ້ວເປີກສາກັນວ່າ “ພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາກີຕາຄີຣີຊົນນະບົດ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລວມທັງພຣະສາຣີບຸດແລະພຣະໂມກຄັນລານະ ພວກເຮົາຈະແບ່ງເສນາສະນະຂອງສົງທັງໝົດ ພຣະສາຣີບຸດແລະພຣະໂມກຄັນລານະມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ ພວກເຮົາຈະບໍ່ຈັດເສນາສະນະໃຫ້ທ່ານທັງ ໒ ນັ້ນ” ພຣະອັດສະຊິແລະພຣະປຸນັບພະສຸກະນັ້ນ ຈຶ່ງແບ່ງເສນາສະນະຂອງສົງທັງໝົດ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງກີຕາຄີຣີຊົນນະບົດແລ້ວ ບັດແລ້ວໄດ້ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ພວກທ່ານຈົ່ງໄປຫາພິກຂຸອັດສະຊິແລະພິກຂຸ ປຸນັບພະສຸກະແລ້ວກ່າວແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າສະເດັດມາພ້ອມກັບພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ລວມທັງພຣະສາຣີບຸດແລະພຣະໂມກຄັນລານະ ຂໍໃຫ້ທ່ານ

ທັງຫຼາຍຈົ່ງຈັດເສນາສະນະຖວາຍພຣະຜູ້ມີພຣະພາກເຈົ້າ ພິກຂຸສົງ ລວມທັງພຣະສາຣີບຸດແລະພຣະໂມກຄັນລານະ"

ພິກຂຸເຫຼົ່ານັ້ນ ຮັບສະໜອງພຣະພຸດທະດຳຣັດແລ້ວ ເຂົ້າໄປຫາພຣະອັດສະຊິ ແລະພຣະປຸນັບພະສຸກະ ຈົນຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພຣະອັດສະຊິແລະພຣະປຸນັບພະສຸກະດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດມາພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ລວມທັງພຣະສາຣີບຸດ ແລະພຣະໂມກຄັນລານະ ຂໍໃຫ້ທ່ານທັງຫຼາຍຈົ່ງຈັດເສນາສະນະຖວາຍພຣະຜູ້ມີພຣະພາກເຈົ້າ ພິກຂຸສົງລວມທັງພຣະສາຣີບຸດ ແລະພຣະໂມກຄັນລານະ"

ພຣະອັດສະຊິແລະພຣະປຸນັບພະສຸກະຕອບວ່າ "ທ່ານທັງຫຼາຍ ເສນາສະນະຂອງສົງບໍ່ມີພວກເຮົາແບ່ງກັນໝົດແລ້ວ ພຣະຜູ້ມີພຣະພາກເຈົ້າສະເດັດມາດີແລ້ວ ໂຜດປະທັບໃນວິຫານທີ່ຊົງພຣະປະສົງເທີ້ນ ພຣະສາຣີບຸດແລະພຣະໂມກຄັນລານະຜູ້ມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ ພວກເຮົາບໍ່ຈັດເສນາສະນະໃຫ້ທ່ານທັງ ໒ ນັ້ນ"

ພິກຂຸທັງຫຼາຍຖາມວ່າ "ພວກທ່ານແບ່ງເສນາສະນະຂອງສົງບໍ"

ພຣະອັດສະຊິແລະພຣະປຸນັບພະສຸກະຕອບວ່າ "ແມ່ນແລ້ວ ທ່ານທັງຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອັດສະຊິແລະພຣະປຸນັບພະສຸກະຈຶ່ງແບ່ງເສນາສະນະຂອງສົງນໍ"

ລຳດັບນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພຣະອັດສະຊິແລະພຣະປຸນັບພະສຸກະແບ່ງເສນາສະນະຂອງສົງແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງ ແບ່ງເສນາສະນະຂອງສົງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຂອງທີ່ບໍ່ຄວນແບ່ງ ໕ ໝວດ ສົງ ຄະນະຫຼືບຸກຄົນບໍ່ເພິ່ງແບ່ງ ແມ່ນ ແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ

## ຂອງທີ່ບໍ່ຄວນແບ່ງ ໕ ໝວດ ຄື

໑. ອາຣາມ ພື້ນທີ່ອາຣາມ ນີ້ເປັນຂອງທີ່ບໍ່ຄວນແບ່ງອັນດັບທີ ໑ ສົງ ຄະນະ ຫຼືບຸກຄົນບໍ່ເພິ່ງແບ່ງ ແມ່ນແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ

໒. ວິຫານ ພື້ນທີ່ວິຫານ ນີ້ເປັນຂອງທີ່ບໍ່ຄວນແບ່ງອັນດັບທີ ໒ ສົງ ຄະນະ ຫຼືບຸກຄົນ ບໍ່ເພິ່ງແບ່ງ ແມ່ນແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ

໓. ຕຽງ ຕັ່ງ ຟູກ ໝອນ ນີ້ເປັນຂອງທີ່ບໍ່ຄວນແບ່ງອັນດັບທີ ໓ ສົງ ຄະນະ ຫຼືບຸກຄົນ ບໍ່ເພິ່ງແບ່ງ ແມ່ນແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ

໔. ໝໍ້ໂລຫະ ອ່າງໂລຫະ ກະຖາງໂລຫະ ກະທະໂລຫະ ມີດ ຂວານ ຂວານຖາກ ຈົກ ສະວ່ານ ນີ້ເປັນຂອງທີ່ບໍ່ຄວນແບ່ງອັນດັບທີ ໔ ສົງ ຄະນະຫຼືບຸກຄົນບໍ່ເພິ່ງແບ່ງ ແມ່ນແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດ ຖຸນລັດໄຈ

໕. ເຄືອເຂົາ ໄມ້ໄຜ່ ຫຍ້າປ້ອງ ຫຍ້າມຸ້ງກະຕ່າຍ ຫຍ້າສາມັນ ດິນ ເຄື່ອງໄມ້ແລະເຄື່ອງດິນນີ້ເປັນຂອງທີ່ບໍ່ຄວນແບ່ງອັນດັບທີ ໕ ສົງ ຄະນະ ຫຼືບຸກຄົນບໍ່ເພິ່ງແບ່ງ ແມ່ນແບ່ງ ແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ຂອງທີ່ບໍ່ຄວນແບ່ງ ໕ ໝວດເຫຼົ່ານີ້ແລ ສົງ ຄະນະຫຼືບຸກຄົນບໍ່ ເພິ່ງແບ່ງ ແມ່ນແບ່ງແລ້ວກໍບໍ່ເປັນອັນແບ່ງ ອົງໃດແບ່ງ ຕ້ອງອາບັດຖຸນລັດໄຈ"

## ນະວະກຳມະທານະກະຖາ

## ວ່າດ້ວຍວິທີການທີ່ພິກຂຸໃຫ້ນະວະກຳ

## ເລື້ອງພິກຂຸຊາວເມືອງອາລະວີໃຫ້ນະວະກຳ

[໓໘໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກິຕາຄິຣີຊົນນະບົດຕາມພຣະອັດທະຍາໄສ ແລ້ວ ໄດ້ສະເດັດຈາຣິກໄປທາງເມືອງອາລະວີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງເມືອງອາລະວີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອັກຄາລະວະເຈດີ ໃນເມືອງອາລະວີນັ້ນ

ສະໄໝນັ້ນ ພວກພິກຂຸຊາວເມືອງອາລະວີ ໃຫ້ນະວະກຳແບບນີ້ ຄື ໃຫ້ນະວະກຳ[໑] ດ້ວຍອາການພຽງວາງກ້ອນດິນແດ່ ໃຫ້ນະວະກຳດ້ວຍອາການພຽງສາບທາຝາແດ່ ໃຫ້ນະວະກຳ ດ້ວຍອາການພຽງຕິດຕັ້ງປະຕູແດ່ ໃຫ້ນະວະກຳດ້ວຍອາການພຽງຕິດສາຍຍູແດ່ ໃຫ້ນະວະກຳ ດ້ວຍອາການພຽງຕິດຕັ້ງວົງກົບແດ່ ໃຫ້ນະວະກຳດ້ວຍອາການພຽງທາສີຂາວແດ່ ໃຫ້ນະວະກຳດ້ວຍອາການພຽງທາສີດຳແດ່ ໃຫ້ນະວະກຳດ້ວຍອາການພຽງທາສີເຫຼືອງແດ່ ໃຫ້ນະວະກຳດ້ວຍອາການພຽງມຸງຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງຜູກມັດຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງຕິດໄມ້ຫຼົບຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງປະຕິສັງຂອນເສນາສະນະທີ່ຊຸດໂຊມແດ່ ໃຫ້ນະວະກຳດ້ວຍອາການພຽງຂັດຖູແດ່ ໃຫ້ນະວະກຳ ໒໐ ປີແດ່ ໃຫ້ນະວະກຳ ໓໐ ປີແດ່ ໃຫ້ນະວະກຳຕະຫຼອດຊີວິດແດ່ ໃຫ້ນະວະກຳວິຫານທີ່ສ້າງສຳເລັດແລ້ວ ຊົ່ວເວລາແຫ່ງຄວັນໄຟແດ່

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸຊາວເມືອງອາລະວີຈິ່ງມອບນະວະກຳໃຫ້ແບບນີ້ ຄື ໃຫ້ນະວະກຳດ້ວຍອາການພຽງວາງກ້ອນດິນແດ່ ໃຫ້ນະວະກຳດ້ວຍອາການພຽງສາບທາຝາແດ່ ໃຫ້ນະວະກຳດ້ວຍອາການພຽງຕິດຕັ້ງປະຕູແດ່ ໃຫ້ນະວະກຳດ້ວຍອາການພຽງຕິດສາຍຍູໃຫ້ແດ່ ໃຫ້ນະວະກຳດ້ວຍອາການພຽງຕິດວົງກົບແດ່ ໃຫ້ນະວະກຳດ້ວຍອາການພຽງທາສີຂາວແດ່ ໃຫ້ນະວະກຳດ້ວຍອາການພຽງທາສີດຳແດ່ ໃຫ້ນະວະກຳດ້ວຍອາການພຽງທາສີເຫຼືອງແດ່ ໃຫ້ນະວະກຳດ້ວຍອາການພຽງມຸງຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງຜູກມັດຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງຕິດໄມ້ຫຼົບຫຼັງຄາແດ່ ໃຫ້ນະວະກຳດ້ວຍອາການພຽງປະຕິສັງຂອນ ເສນາສະນະທີ່ຊຸດໂຊມແດ່ ໃຫ້ນະວະກຳດ້ວຍອາການພຽງຂັດຖູແດ່ ໃຫ້ນະວະກຳ ໒໐ ປີແດ່ ໃຫ້ນະວະກຳ ໓໐ ປີແດ່ ໃຫ້ນະວະກຳຕະຫຼອດຊີວິດແດ່ ໃຫ້ນະວະກຳວິຫານທີ່ສ້າງສຳເລັດແລ້ວ ຊົ່ວເວລາແຫ່ງຄວັນໄຟແດ່"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈິ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ຯລຯ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍ ວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງວາງກ້ອນດິນ ຯລຯ ບໍ່ເພິ່ງໃຫ້ ນະວະກຳດ້ວຍອາການພຽງສາບທາຝາ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຕິດຕັ້ງປະຕູ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຕິດສາຍຍູ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຕິດຕັ້ງວົງກົບ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງທາສີຂາວ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍ ອາການພຽງທາສີດຳ ຯລຯ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງທາສີເຫຼືອງ

ໆລໆ ບໍ່ເພິ່ງໃຫ້ນະວະກຳ ດ້ວຍອາການພຽງມຸງຫຼັງຄາ ໆລໆ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຜູກມັດຫຼັງຄາ ໆລໆ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຕິດໄມ້ຫຼີບຫຼັງຄາ ໆລໆ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງປະຕິສັງຂອນເສນາສະນະທີ່ຊຸດໂຊມ ໆລໆ ບໍ່ເພິ່ງໃຫ້ນະວະກຳດ້ວຍອາການພຽງຂັດຖູ ໆລໆ ບໍ່ເພິ່ງໃຫ້ນະວະກຳ ໒໐ ປີ ໆລໆ ບໍ່ເພິ່ງໃຫ້ນະວະກຳ ໓໐ ປີ ໆລໆ ບໍ່ເພິ່ງໃຫ້ນະວະກຳຕະຫຼອດຊີວິດ ໆລໆ ບໍ່ເພິ່ງໃຫ້ນະວະກຳວິຫານທີ່ສ້າງສຳເລັດແລ້ວ ຊົ່ວເວລາແຫ່ງຄວັນໄຟ ອົງໃດໃຫ້ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໃຫ້ນະວະກຳວິຫານທີ່ຍັງບໍ່ໄດ້ສ້າງ ຫຼືທີ່ສ້າງຄ້າງໄວ້ ໃຫ້ກວດເບິ່ງວິຫານນ້ອຍແລ້ວໃຫ້ນະວະກຳ ໕-໖ ປີ ໃຫ້ກວດເບິ່ງງານໃນເຮືອນມຸງແຖບດຽວແລ້ວ ໃຫ້ນະວະກຳ ໗-໘ ປີ ໃຫ້ກວດເບິ່ງງານໃນວິຫານໃຫຍ່ຫຼືຜາສາດແລ້ວໃຫ້ນະວະກຳ ໑໐-໑໒ ປີ"

ສະໄໝນັ້ນ ພິກຂຸທັງຫຼາຍໃຫ້ນະວະກຳວິຫານທັງຫຼັງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ນະວະກຳວິຫານທັງຫຼັງ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຫ້ນະວະກຳໃນ ໒ ແຫ່ງແກ່ພິກຂຸອົງດຽວ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ນະວະກຳວິຫານ ໒ ແຫ່ງ ແກ່ພິກຂຸອົງດຽວ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຮັບນະວະກຳແລ້ວມອບໃຫ້ພິກຂຸອື່ນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຮັບນະວະກຳແລ້ວມອບໃຫ້ຜູ້ອື່ນ ອົງໃດຮັບນະວະກຳແລ້ວມອບໃຫ້ຜູ້ອື່ນ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຮັບນະວະກຳແລ້ວກີດກັນເສນາສະນະຂອງສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຮັບນະວະກຳແລ້ວກີດກັນເສນາສະນະຂອງສົງ ອົງໃດກີດກັນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖືເອົາບ່ອນນອນຢ່າງດີແຫ່ງໜຶ່ງ"

ສະໄໝນັ້ນ ພິກຂຸທັງຫຼາຍໃຫ້ນະວະກຳແກ່ພິກຂຸຜູ້ຢູ່ນອກສີມາ ພິກຂຸທັງຫຼາຍຈຶ່ງ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ຄວນໃຫ້ນະວະກຳແກ່ພິກຂຸຜູ້ຢູ່ນອກ ສີມາ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຮັບນະວະກຳແລ້ວກົດກັນຢູ່ຕະຫຼອດເວລາ ພິກຂຸທັງຫຼາຍຈຶ່ງ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຮັບນະວະກຳແລ້ວກົດກັນຕະຫຼອດເວລາ ອົງໃດກົດກັນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ກົດກັນໄວ້ຊົ່ວ ໑ ເດືອນລະດູຝົນ ແຕ່ບໍ່ໃຫ້ກົດກັນໄວ້ຕະຫຼອດລະດູ"

ສະໄໝນັ້ນ ພິກຂຸທັງຫຼາຍຮັບນະວະກຳແລ້ວຫຼີກໄປແດ່ ສິກແດ່ ມໍຣະນະພາບແດ່ ປະຕິຍານເປັນສາມະເນນແດ່ ປະຕິຍານເປັນຜູ້ບອກຄືນສິກຂາແດ່ ປະຕິຍານເປັນຜູ້ຕ້ອງອັນຕິມະວັດຖຸ 'ແດ່ ປະຕິຍານເປັນຜູ້ວິກົນຈະລິດແດ່ ປະຕິຍານເປັນຜູ້ມີຈິດຟຸ້ງຊ່ານແດ່ ປະຕິຍານເປັນຜູ້ກະສັບກະສ່າຍຍ້ອນເວທະນາແດ່ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແດ່ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແດ່ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ຍອມສະຫຼະທິດຖິບາບແດ່ ປະຕິຍານເປັນບັນເດາະແດ່ ປະຕິຍານເປັນຄົນລັກເພດແດ່ ປະຕິຍານເປັນຜູ້ເຂົ້າຮີດເດຍຣະຖີແດ່ ປະຕິຍານເປັນສັດເດຍຣັດສານແດ່ ປະຕິຍານເປັນຜູ້ຂ້າບິດາແດ່ ປະຕິຍານເປັນຜູ້ຂ້າມານດາແດ່ ປະຕິຍານເປັນຜູ້ຂ້າພຣະອະຣະຫັນແດ່ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີແດ່ ປະຕິຍານເປັນຜູ້ເຮັດສົງໃຫ້ແຕກກັນແດ່ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດແດ່ ປະຕິຍານເປັນ ອຸພະໂຕພະຍັນຊະນະກະແດ່

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວຫຼີກໄປ ສົງເພິ່ງໃຫ້ນະວະກຳແກ່ພິກຂຸອື່ນດ້ວຍສັ່ງວ່າ "ນະວະກຳຂອງສົງຢ່າໄດ້ເສຍຫາຍ"

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວສິກ ຯລຯ ມໍຣະນະພາບ ປະຕິຍານເປັນສາມະເນນ ປະຕິຍານເປັນຜູ້ບອກຄືນສິກຂາ ປະຕິຍານເປັນຜູ້ຕ້ອງອັນຕິມະວັດຖຸ ປະຕິຍານເປັນຜູ້ວິກົນຈະລິດ ປະຕິຍານເປັນຜູ້ມີຈິດຟຸ້ງຊ່ານ ປະຕິຍານເປັນຜູ້ກະສັບກະສ່າຍຍ້ອນເວທະນາ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ສະຫຼະທິດຖິບາບ ປະຕິຍານເປັນບັນເດາະ ປະຕິຍານເປັນຄົນລັກເພດ ປະຕິຍານເປັນຜູ້

ເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ ປະຕິຍານເປັນຜູ້ຂ້າບິດາ ປະຕິຍານເປັນຜູ້ຂ້າມານດາ ປະຕິຍານເປັນຜູ້ຂ້າພຣະອະຣະຫັນ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີ ປະຕິຍານເປັນຜູ້ເຮັດສົງໃຫ້ແຕກກັນ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສົງເພິ່ງໃຫ້ນະວະກຳແກ່ພິກຂຸອື່ນດ້ວຍສັ່ງວ່າ "ນະວະກຳຂອງສົງຢ່າໄດ້ເສຍຫາຍ"

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວຫຼີກໄປເມື່ອຍັງເຮັດບໍ່ສຳເລັດ ສົງເພິ່ງມອບນະວະກຳໃຫ້ພິກຂຸອື່ນດ້ວຍສັ່ງວ່າ "ນະວະກຳຂອງສົງຢ່າໄດ້ເສຍຫາຍ"

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວສິກໄປເມື່ອຍັງເຮັດບໍ່ສຳເລັດ ฯລฯ ມໍຣະນະພາບ ฯລฯ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສົງເພິ່ງມອບນະວະກຳໃຫ້ພິກຂຸອື່ນ ດ້ວຍສັ່ງວ່າ "ນະວະກຳຂອງສົງຢ່າໄດ້ເສຍຫາຍ"

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວຫຼີກໄປ ເມື່ອເຮັດສຳເລັດແລ້ວ ນະວະກຳນັ້ນຕົກເປັນຂອງພິກຂຸນັ້ນເອງ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວສິກໄປເມື່ອເຮັດສຳເລັດແລ້ວ ฯລฯ ມໍຣະນະພາບ ປະຕິຍານເປັນສາມະເນນ ຜູ້ບອກຄືນສິກຂາ ຕ້ອງອັນຕິມະວັດຖຸ ສົງເປັນເຈົ້າຂອງ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວ ພໍເຮັດສຳເລັດກໍປະຕິຍານເປັນຜູ້ວິກົນຈະລິດ ປະຕິຍານເປັນຜູ້ມີຈິດຟຸ້ງຊ່ານ ປະຕິຍານເປັນຜູ້ກະສັບກະສ່າຍຍ້ອນເວທະນາ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ສະຫຼະທິດຖິບາບ ນະວະກຳນັ້ນຕົກເປັນຂອງພິກຂຸນັ້ນເອງ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບນະວະກຳແລ້ວ ພໍເຮັດສຳເລັດກໍປະຕິຍານເປັນບັນເດາະ ປະຕິຍານເປັນຄົນລັກເພດ ປະຕິຍານເປັນຜູ້ເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ ປະຕິຍານເປັນຄົນຂ້າບິດາ ປະຕິຍານເປັນຄົນຂ້າມານດາ ປະຕິຍານເປັນຄົນຂ້າພຣະອະຣະຫັນ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີ ປະຕິຍານເປັນຜູ້ເຮັດສົງໃຫ້ແຕກກັນ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສົງເປັນເຈົ້າຂອງ

# ອັນຍະຕະຣະປະຣິໂພຄະປະຕິກເຂປາທິ

## ວ່າດ້ວຍການຫ້າມໃຊ້ເສນາສະນະຜິດທີ່ເປັນຕົ້ນ

[໓໔໘] ສະໄໝນັ້ນ ພິກຂຸທັງຫຼາຍໄດ້ນໍາເສນາສະນະເຄື່ອງໃຊ້ສອຍປະຈໍາໃນວິຫານຂອງອຸປາສົກຄົນໜຶ່ງໄປໃຊ້ສອຍທີ່ອື່ນ ອຸປາສົກນັ້ນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະຜູ້ເປັນເຈົ້າທັງຫຼາຍ ຈຶ່ງນໍາເຄື່ອງໃຊ້ສອຍໃນບ່ອນແຫ່ງໜຶ່ງໄປໃຊ້ສອຍໃນບ່ອນອີກແຫ່ງໜຶ່ງນໍ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຄື່ອງໃຊ້ສອຍໃນບ່ອນແຫ່ງໜຶ່ງ ບໍ່ເພິ່ງນໍາ ໄປໃຊ້ສອຍໃນບ່ອນອີກແຫ່ງໜຶ່ງ ອົງໃດນໍາໄປໃຊ້ ຕ້ອງອາບັດທຸກກົດ"[໑]

## ເລື້ອງຊົງອະນຸຍາດໃຫ້ຢືມເສນາສະນະ

ສະໄໝນັ້ນ ພິກຂຸທັງຫຼາຍຢໍາເກງທີ່ຈະນໍາເສນາສະນະເຄື່ອງໃຊ້ສອຍໄປໂຮງອຸໂປສົດແດ່ທີ່ປະຊຸມແດ່ ຈຶ່ງນັ່ງເທິງພື້ນດິນ ເນື້ອໂຕແລະຈີວອນຈຶ່ງເປື້ອນຝຸ່ນ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນໍາໄປໃຊ້ໄດ້ຊົ່ວໄລຍະ"[໑]

## ເລື້ອງຊົງອະນຸຍາດໃຫ້ເກັບຮັກສາເສນາສະນະ

ສະໄໝນັ້ນ ວິຫານຫຼັງໃຫຍ່ຂອງສົງເກີດເປ່ເພ ພິກຂຸທັງຫຼາຍຢໍາເກງຢູ່ຈຶ່ງບໍ່ນໍາເສນາສະນະອອກໄປ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນໍາໄປເກັບຮັກສາໄວ້"

## ເລື້ອງຊົງອະນຸຍາດໃຫ້ແລກປ່ຽນ (ເລື້ອງທີ ໑)

ສະໄໝນັ້ນ ຜ້າກໍາພົນລາຄາແພງເຊິ່ງເປັນບໍຣິຂານປະຈໍາເສນາສະນະເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແລກປ່ຽນເພື່ອປະໂຫຍດ ແກ່ຜາຕິກໍາ"[໔]

## ເລື້ອງຊົງອະນຸຍາດໃຫ້ແລກປ່ຽນ(ເລື້ອງທີ ໘)

ສະໄໝນັ້ນ ຜ້າລາຄາແພງເຊິ່ງເປັນບໍຣິຂານປະຈຳເສນາສະນະເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແລກປ່ຽນເພື່ອປະໂຫຍດ ແກ່ຜາຕິກຳ"

## ເລື້ອງຊົງອະນຸຍາດຜ້າເຊັດຕີນ

ສະໄໝນັ້ນ ໜັງໝີເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດເປັນເຄື່ອງເຊັດຕີນ"

ສະໄໝນັ້ນ ເຄື່ອງເຊັດຕີນຊົງກົມເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດເປັນເຄື່ອງເຊັດຕີນ"

ສະໄໝນັ້ນ ຜ້າປ່ຽງນ້ອຍເກີດຂຶ້ນແກ່ສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນ

ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດເປັນຜ້າເຊັດຕີນ"

## ເລື້ອງຫ້າມພິກຂຸຕີນເປື້ອນຢຽບເສນາສະນະ

ສະໄໝນັ້ນ ພິກຂຸບໍ່ລ້າງຕີນຢຽບເສນາສະນະ ເສນາສະນະເສຍຫາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ລ້າງຕີນບໍ່ເພິ່ງຢຽບເສນາສະນະອົງໃດຢຽບ ຕ້ອງອາບັດທຸກກົດ"

## ເລື້ອງຫ້າມພິກຂຸຕີນປຽກຢຽບເສນາສະນະ

ສະໄໝນັ້ນ ພິກຂຸຕີນປຽກຢຽບເສນາສະນະ ເສນາສະນະເສຍຫາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຕີນປຽກບໍ່ເພິ່ງຢຽບເສນາສະນະ ອົງໃດຢຽບ ຕ້ອງອາບັດທຸກກົດ"

## ເລື້ອງຫ້າມພິກຂຸໃສ່ເກີບຢຽບເສນາສະນະ

ສະໄໝນັ້ນ ພິກຂຸໃສ່ເກີບຢຽບເສນາສະນະ ເສນາສະນະເສຍຫາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸໃສ່ເກີບຢຽບເສນາສະນະ ຕ້ອງອາບັດທຸກກົດ"

## ເລື້ອງຫ້າມພິກຂຸຖົ່ມນ້ຳລາຍເທິງພື້ນທີ່ເຮັດບໍຣິກຳ

ສະໄໝນັ້ນ ພິກຂຸທັງຫຼາຍຖົ່ມນ້ຳລາຍເທິງພື້ນທີ່ເຮັດບໍຣິກຳ ພື້ນຜິວເສຍຫາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຖົ່ມນ້ຳລາຍເທິງພື້ນທີ່ເຮັດບໍຣິກຳ ອົງໃດຖົ່ມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ງົ່ງ"

## ເລື້ອງຊົງອະນຸຍາດຜ້າພັນຕີນຕຽງແລະຕັ່ງ

ສະໄໝນັ້ນ ຕີນຕຽງແລະຕັ່ງຄູດພື້ນທີ່ເຮັດບໍຣິກຳ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າພັນ"

ສະໄໝນັ້ນ ພິກຂຸອີງຝາທີ່ເຮັດບໍຣິກຳ[9] ຄວາມງົດງາມເສຍໄປ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງອີງຝາທີ່ເຮັດບໍຣິກຳ ອົງໃດອີງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດພະນັກອີງ"

ພະນັກອີງສ່ວນລຸ່ມຄູດພື້ນ ສ່ວນເທິງຄູດຝາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຜ້າພັນທັງຂ້າງລຸ່ມ ແລະ ຂ້າງເທິງ"

## ເລື້ອງຊົງອະນຸຍາດໃຫ້ໃຊ້ປູຜ້ານອນ

ສະໄໝນັ້ນ ພິກຂຸທັງຫຼາຍລ້າງຕີນແລ້ວຢຳເກງທີ່ຈະນອນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ປູຜ້ານອນ"

## ສັງຄະພັດຕາທິອະນຸຊານະນາ
## ວ່າດ້ວຍຊົງອະນຸຍາດສັງຄະພັດເປັນຕົ້ນ

[໓໘໕] ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເມືອງອາລະວີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນຣາດຊະຄຶ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນຣາດຊະຄຶ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ໃນນະຄອນຣາດຊະຄຶນັ້ນ

ສະໄໝນັ້ນ ນະຄອນຣາດຊະຄຶເກີດອຶດຢາກ ປະຊາຊົນບໍ່ສາມາດຈະຈັດສັງຄະພັດ ແຕ່ປາຖະ ໜາຈັດອຸດເທສະພັດ ນິມັນຕະນະພັດ ສະລາກະພັດ ປັກຂິກະພັດ ອຸໂປສະຖິກະພັດ ປາຕິປະທິກະພັດ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສັງຄະພັດ ອຸດເທສະພັດ ນິມັນຕະນະພັດ ສະລາກະພັດ ປັກຂິກະພັດ ອຸໂປສະຖິກະພັດ ປາຕິປະທິກະພັດ"

## ພັດຕຸດເທສະກະສົມມຸດ

### ວ່າດ້ວຍການແຕ່ງຕັ້ງພຣະພັດຕຸດເທດ

[໓໘໖] ສະໄໝນັ້ນ ພວກພິກຂຸສັບພັກຄືຮັບພັດຕາຫານອັນປະນີດໄວ້ເພື່ອໂຕເອງ ໃຫ້ພັດຕາຫານບໍ່ດີແກ່ພິກຂຸທັງຫຼາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນພຣະພັດຕຸດເທດ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກອາຫານທີ່ແຈກແລະອາຫານທີ່ຍັງບໍ່ໄດ້ແຈກ

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ເປັນພັດຕຸດເທດ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ເປັນພັດຕຸດເທດ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນພັດຕຸດເທດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນພັດຕຸດເທດແລ້ວ ສົງເຫັນດ້ວຍ ຍ້ອນແບບນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

## ວິທີແຈກພັດ

ຄັ້ງນັ້ນ ພິກຂຸພັດຕຸດເທດທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາເພິ່ງແຈກພັດແບບໃດ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຂຽນຊື່ລົງໃນສະຫຼາກ ຫຼື ແຜ່ນຜ້າລວມກັນແລ້ວແຈກພັດ"

# ເສນາສະນະປັນຍາປະກາທິສົມມຸດ

## ວ່າດ້ວຍການແຕ່ງຕັ້ງພິກຂຸໃຫ້ເປັນເສນາສະນະປັນຍາປະກະເປັນຕົ້ນ

[໓໔໗] ສະໄໝນັ້ນ ສົງຍັງບໍ່ມີພິກຂຸຜູ້ເປັນເສນາສະນະປັນຍາປະກະ ໗ລ໗ ບໍ່ມີພິກຂຸຜູ້ຮັກສາເຮືອນຄັງ ບໍ່ມີພິກຂຸຜູ້ຮັບຈີວອນ ບໍ່ມີພິກຂຸຜູ້ແຈກຈີວອນ ບໍ່ມີພິກຂຸຜູ້ແຈກເຂົ້າຕົ້ມ ບໍ່ມີພິກຂຸຜູ້ແຈກໝາກໄມ້ ບໍ່ມີພິກຂຸຜູ້ແຈກຂອງຫຍ້ຳ ຂອງຫຍ້ຳທີ່ຍັງບໍ່ໄດ້ແຈກຍ່ອມເສຍຫາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນຜູ້ແຈກຂອງຫຍ້ຳ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກຂອງຫຍ້ຳທີ່ແຈກແລະຂອງຫຍ້ຳທີ່ຍັງບໍ່ໄດ້ແຈກ

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ຄື ເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວກໍເພິ່ງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງຫຍ້ຳ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງຫຍ້ຳ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງຫຍ້ຳ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ແຈກຂອງຫຍ້ຳ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

# ອັບປະມັດຕະກະວິດສັດຊະກະສົມມຸດ

## ວ່າດ້ວຍການແຕ່ງຕັ້ງພິກຂຸຜູ້ແຈກຂອງເລັກໜ້ອຍ

[໓໔໗] ສະໄໝນັ້ນ ສົງໄດ້ບໍຣິຂານເລັກ ໆ ໜ້ອຍ ໆ ໃນເຮືອນຄັງເຫຼືອເຟືອ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນຜູ້ແຈກຂອງເລັກ ໆ ໜ້ອຍ ໆ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລໍາອຽງຍ້ອນຫຼົງ
໔. ບໍ່ລໍາອຽງຍ້ອນຢ້ານ
໕. ຮູ້ຈັກຂອງເລັກ ໆ ໜ້ອຍ ໆ ທີ່ແຈກ ແລະທີ່ຍັງບໍ່ໄດ້ແຈກ

## ວິທີແຕ່ງຕັ້ງແລະກໍາມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກໍາມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງເລັກ ໆ ໜ້ອຍ ໆ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງເລັກ ໆ ໜ້ອຍ ໆ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ແຈກຂອງເລັກ ໆ ໜ້ອຍ ໆ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ແຈກຂອງເລັກ ໆ ໜ້ອຍ ໆ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງຂອງເລັກໜ້ອຍທີ່ຄວນແຈກ

ພິກຂຸຜູ້ແຈກຂອງເລັກ ໆ ໜ້ອຍ ໆ ເພິ່ງໃຫ້ເຂັມ ໑ ເຫຼັ້ມ ເພິ່ງໃຫ້ມີດ ເພິ່ງໃຫ້ເກີບ ເພິ່ງໃຫ້ສາຍແອວ ເພິ່ງໃຫ້ສາຍພາຍບາດ ເພິ່ງໃຫ້ຜ້າຕອງນໍ້າ ເພິ່ງໃຫ້ທີ່ຕອງນໍ້າ ເພິ່ງໃຫ້ຜ້າກຸສີ[໑] ເພິ່ງໃຫ້ຜ້າອັດທະກຸສີ[໒] ເພິ່ງໃຫ້ຜ້າມົນທົນ[໓] ເພິ່ງໃຫ້ຜ້າອັດທະມົນທົນ[໔] ເພິ່ງໃຫ້ຜ້າອະນຸວາດ[໕] ເພິ່ງໃຫ້ຜ້າປະຣິພັນ ຖ້າສົງມີເນີຍໃສ ນໍ້າມັນ ນໍ້າເຜິ້ງຫຼືນໍ້າອ້ອຍກໍຄວນໃຫ້ສັນໄດ້ໄລຍະໜຶ່ງ ຖ້າຕ້ອງການອີກກໍຄວນໃຫ້ອີກ

## ສາຕິຍັກຄາຫາປະກາທິສົມມຸດ

## ວ່າດ້ວຍການແຕ່ງຕັ້ງພິກຂຸຜູ້ແຈກຜ້າເປັນຕົ້ນ

[໓໔໙] ສະໄໝນັ້ນ ສົງຍັງບໍ່ມີພິກຂຸຜູ້ແຈກຜ້າ ฯລฯ ບໍ່ມີພິກຂຸຜູ້ແຈກບາດ ฯລฯ ບໍ່ມີພິກຂຸຜູ້ໃຊ້ຄົນວັດ ฯລฯ ບໍ່ມີພິກຂຸຜູ້ໃຊ້ສາມະເນນ ສາມະເນນທັງຫຼາຍທີ່ພິກຂຸບໍ່ໃຊ້ ຍ່ອມບໍ່ເຮັດວຽກ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນຜູ້ໃຊ້ສາມະເນນ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກວຽກທີ່ຄວນໃຊ້ແລະວຽກທີ່ຍັງບໍ່ໄດ້ໃຊ້

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ໃຊ້ສາມະເນນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ໃຊ້ສາມະເນນ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນຜູ້ໃຊ້ສາມະເນນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ໃຊ້ສາມະເນນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າ ຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ຕະຕິຍະພານະວານ ຈົບ**

**ເສນາສະນະຂັນທະກະທີ ໖ ຈົບ**

## ລວມເລື້ອງທີ່ມີໃນເສນາສະນະຂັນທະກະ

ເລື້ອງທີ່ພຣະຜູ້ມີພຣະພາກເຈົ້າຍັງບໍ່ໄດ້ຊົງບັນຍັດເສນາສະນະ
ພຣະສາວົກຂອງພຣະອົງຢູ່ຕາມປ່າແລະເຫງົ້າໄມ້ເປັນຕົ້ນນັ້ນ ໆ
ຕອນເຊົ້າມືດອອກມາຈາກທີ່ຢູ່ ເສດຖີຊາວນະຄອນຣາດຊະຄຶເຫັນແລ້ວ
ໄດ້ກ່າວແກ່ພິກຂຸທັງຫຼາຍດັ່ງນີ້ວ່າ ຂ້າພະເຈົ້າຈະໃຫ້ສ້າງວິຫານ
ພຣະຜູ້ເປັນເຈົ້າທັງຫຼາຍຈະຢູ່ບໍ

ພິກຂຸທັງຫຼາຍຂາບທູນຖາມພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເສນາສະນະ ໕ ຊະນິດ ຄື ວິຫານ ເຮືອນມຸງແຖບດຽວ ຜາສາດ ເຮືອນໂລ້ນ ຖໍ້າ ເສດຖີຊາວນະຄອນຣາດຊະຄຶສ້າງວິຫານຖວາຍ ໖໐ ຫຼັງ ເລື້ອງປະຊາຊົນສ້າງວິຫານ ເລື້ອງວິຫານບໍ່ມີບານປະຕູ ພິກຂຸບໍ່ລະວັງ ໆ ແມງງອດ ຂີ້ເຂັບຈຶ່ງເຂົ້າໄປ

ເລື້ອງພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດບານປະຕູ ວົງກົບ ຮູທີ່ຮັບເດືອຍປະຕູ ບ້ວງຂ້າງເທິງ ປ່ອງສຳລັບດຶງ ເຊືອກສຳລັບດຶງ ສາຍຍູ ໄມ້ຫົວລິງ ຫຼິ້ມ ກອນ ລູກກະແຈໂລຫະ ລູກກະແຈໄມ້ ລູກກະແຈເຂົາສັດ ຫຼິ້ມຍົນ ຊົງອະນຸຍາດຫຼັງຄາໂບກສາບດິນທັງພາຍໃນພາຍນອກ ປ່ອງຢ້ຽມມີລວດລາຍເຮັດເປັນແທ່ນ ປ່ອງຢ້ຽມມີຕາໜ່າງ ປ່ອງຢ້ຽມມີລູກກົງ ຜ້າຜືນນ້ອຍສຳລັບກັ້ນປ່ອງຢ້ຽມ ມ່ານປ່ອງຢ້ຽມ

ຊົງອະນຸຍາດຫຍ້າຮອງນັ່ງ ຕັ່ງໄມ້ ຕຽງສານ ຕຽງຊະນິດມີໄມ້ຂອບຕຽງສອດເຂົ້າໃນຕີນທີ່ຖິ້ມໄວ້ໃນປ່າຊ້າ ຕັ່ງມີໄມ້ຂອບຕຽງສອດເຂົ້າໃນຕີນ ຕຽງມີໄມ້ຂອບຕຽງຕິດກັບຕີນ ຕັ່ງມີໄມ້ຂອບຕິດກັບຕີນ ຕຽງມີຕີນດັ່ງກ້າມປູ ຕັ່ງມີຕີນດັ່ງກ້າມປູ ຕຽງມີຕີນຮອດໄມ້ຂອບຕຽງ ຕັ່ງມີຕີນຮອດໄມ້ຂອບ ມ້ານັ່ງສີ່ຫຼ່ຽມ ມ້ານັ່ງສີ່ຫຼ່ຽມສູງ ມ້ານັ່ງສີ່ຫຼ່ຽມສູງມີພະນັກ ໓ ດ້ານ ມ້ານັ່ງສີ່ຫຼ່ຽມມີພະນັກ ໓ ດ້ານຊະນິດສູງ

ຊົງອະນຸຍາດຕັ່ງຫວາຍ ຕັ່ງຫຸ້ມດ້ວຍຜ້າ ຕັ່ງຂາຊາຍ ຕັ່ງກ້ານໝາກຂາມປ້ອມ ແຜ່ນແປ້ນ ຕັ່ງ ຕັ່ງເຟືອງ

ເລື້ອງຊົງຫ້າມນອນເທິງຕຽງສູງ ເລື້ອງພິກຂຸນອນຕຽງຕ່ຳ ຖືກງູກັດຈຶ່ງຊົງອະນຸຍາດໄມ້ໜຸນຕີນຕຽງ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໄມ້ໜຸນຕີນຕຽງສູງ ໘ ນີ້ວ ເປັນຢ່າງຫຼາຍ

ຊົງອະນຸຍາດດ້າຍຖັກຕຽງ ຊົງອະນຸຍາດໃຫ້ເຈາະໂຕໄມ້ຂອບຕຽງແລ້ວ ຖັກເປັນຕາໝາກຣຸກ ຊົງອະນຸຍາດໃຫ້ເຮັດປ່ຽງຜ້າຜືນນ້ອຍ ໆ

ເປັນຜ້າປູພື້ນ ຊົງອະນຸຍາດໃຫ້ສາງນຸ່ນແລ້ວເຮັດເປັນໝອນ

ຊົງຫ້າມໃຊ້ໝອນຍາວຂະໜາດເຄິ່ງກາຍ (ໝອນຂ້າງ)
ເລື້ອງມະໂຫລະສົບເທິງຈອມພູ ຊົງອະນຸຍາດຟູກ ໕ ຊະນິດ
ຊົງອະນຸຍາດຜ້າສຳລັບໃຊ້ສອຍປະຈຳເສນາສະນະຫຸ້ມຟູກ
ຊົງອະນຸຍາດຕຽງຫຸ້ມຟູກແລະຕັ່ງຫຸ້ມຟູກ

ຟູກຍ້ອຍລົງຂ້າງລຸ່ມ ໂຈນລັກເອົາຜ້າຫຸ້ມຟູກໄປ
ຊົງອະນຸຍາດໃຫ້ຂຽນແຕ້ມໄວ້ ໃຫ້ເຮັດຕຳໜິດ້ວຍຮອຍນີ້ວມືໄວ້

ເລື້ອງທີ່ຢູ່ພວກເດຍຣະຖີມີສີຂາວແຕ່ພື້ນສີດຳ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດສີຂາວ ສີດຳ ສີເຫຼືອງໃນວິຫານ
ຊົງອະນຸຍາດດິນປິ່ນແກບ ດິນລະອຽດ ຢາງໄມ້
ແປ້ງປຽກ ດິນປິ່ນແກບ ແປ້ງໃນຜັກກາດ
ຂີ້ເຜີ້ງແຫຼວ ແປ້ງໜາເກີນໄປ ຊົງອະນຸຍາດໃຫ້ໃຊ້ຜ້າເຊັດອອກ
ພື້ນຫຍາບ ສີດຳບໍ່ເກາະຕິດ ຊົງອະນຸຍາດໃຫ້ໃສ່ດິນປິ່ນແກບ
ເຮັດໃຫ້ສີດຳເກາະຕິດ ຊົງອະນຸຍາດຢາງໄມ້ ນ້ຳຝາດ

ເລື້ອງພວກພິກຂຸສັບພັກຄີໃຫ້ຊ່າງແຕ້ມຮູບຈິດຕະກຳ
ເລື້ອງວິຫານມີພື້ນທີ່ຕ່ຳ ເລື້ອງດິນທີ່ຖົມພັງທະລາຍ
ເລື້ອງພິກຂຸຂຶ້ນລົງລຳບາກ ເລື້ອງພິກຂຸຂຶ້ນລົງພາດຕົກລົງມາ

ເລື້ອງວິຫານມີພື້ນເປັນລານໂລ່ງ
ຊົງອະນຸຍາດກັ້ນຝາເຄິ່ງໜຶ່ງ ຊົງອະນຸຍາດຫ້ອງພາຍໃນ ໓ ຊະນິດ
ຊົງອະນຸຍາດໃຫ້ກັ້ນຫ້ອງໄວ້ດ້ານໜຶ່ງໃນວິຫານນ້ອຍ

ເລື້ອງຕີນຝາວິຫານເປ່ເພ ຝາວິຫານຖືກຝົນສາດ
ເລື້ອງງູຕົກຈາກຫຼັງຄາມຸງຫຍ້າລົງມາທີ່ຄໍຂອງພິກຂຸ
ທ່ານຕົກໃຈຮ້ອງສຽງດັງ ຊົງອະນຸຍາດໄມ້ເດືອຍຕິດຝາ
ຣາວຈີວອນ ລະບຽງກັບແຜງເລື່ອນຝາຄ້ຳ

ເລື້ອງຊົງອະນຸຍາດຣາວສຳລັບຢຶດຂຶ້ນທຳສັນ
ຟືງຫຍ້າທີ່ມຸງທຳສັນດັ່ງກ່າວໃນຫີນຫຼັງຕົກທົ່ວ
ພິກຂຸປູຈີວອນເທິງພື້ນດິນກາງແຈ້ງ
ນ້ຳດື່ມຖືກແດດຈຶ່ງຮ້ອນ ຊົງອະນຸຍາດສາລານ້ຳດື່ມ

ບໍ່ມີພາຊະນະສຳລັບຕັກນ້ຳ

ເລື້ອງວິຫານບໍ່ມີຮົ້ວລ້ອມ ຊຸ້ມປະຕູບໍ່ມີ ບໍລິເວນເປັນຕົມ
ຊົງອະນຸຍາດສາລາໄຟ ເລື້ອງອາຣາມບໍ່ມີຮົ້ວລ້ອມ
ຊຸ້ມປະຕູດັ່ງກ່າວໃນຫົນຫຼັງບໍ່ມີ ຊົງອະນຸຍາດປູນຂາວ

ເລື້ອງອະນາຖະບິນດິກະຄະຫະບໍດີມີສັດທາໄປປ່າສີຕະວັນ ເຫັນທຳແລ້ວ
ຂາບທູນນິມົນພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງ
ໄປຈຳພັນສາທີ່ນະຄອນສາວັດຖີ
ລະຫວ່າງທາງທ່ານອະນາຖະບິນດິກະຄະຫະບໍດີໄດ້ຊັກຊວນປະຊາຊົນສ້າງອາຣາມ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດນະວະກຳໃນນະຄອນເວສາລີ

ເລື້ອງພວກພິກຂຸສັບພັກຄີລ່ວງໜ້າຟ້າວໄປຈອງເສນາສະນະ
ເລື້ອງໃຜຄວນໄດ້ພັດອັນເລີດ ຊົງສະແດງຕິດຕິຣິຍະພົມມະຈັນ
ຊົງສະແດງບຸກຄົນທີ່ບໍ່ຄວນໄຫວ້ ໑໐ ຈຳພວກ

ເລື້ອງພວກອັນເຕວາສິກຂອງພວກພິກຂຸສັບພັກຄີຈັບຈອງເສນາສະນະ
ເລື້ອງປະຊາຊົນຕົກແຕ່ງບ່ອນນັ່ງບ່ອນນອນສູງໃຫຍ່ໃນບໍລິເວນບ້ານ
ຕົກແຕ່ງຕຽງຕັ່ງຍັດນຸ່ນ

ພຣະຜູ້ມີພຣະພາກເຈົ້າສະເດັດນະຄອນສາວັດຖີ
ອະນາຖະບິນດິກະຄະຫະບໍດີຖວາຍອາຣາມ
ເກີດເຫດການວຸ່ນວາຍໃນໂຮງອາຫານ
ພວກພິກຂຸສັບພັກຄີບັງຄັບພິກຂຸເປັນໄຂ້ໃຫ້ຍ້າຍທີ່

ພວກພິກຂຸສັບພັກຄີຢຶດເອົາບ່ອນນອນດີ ໆ
ກີດກັນອາສະນະໄວ້ໂດຍອ້າງເລດ
ພວກພິກຂຸສັດຕະຣະສະວັກຄີຊ່ອມແປງວິຫານຢູ່ຈຳພັນສາໃນບ່ອນນັ້ນ
ພິກຂຸເປີກສາກັນວ່າໃຜຈະເພິ່ງຈັດແຈງໃຫ້ພິກຂຸຖືເສນາສະນະ
ພິກຂຸເຈົ້າໜ້າທີ່ຈັດແຈງໃຫ້ຖືເສນາສະນະເປີກສາກັນວ່າ
ຄວນໃຫ້ຖືເສນາສະນະແນວໃດ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ແຈກຕາມຈຳນວນບ່ອນນອນ
ຕາມຈຳນວນວິຫານ ຕາມຈຳນວນບໍລິເວນ
ຊົງອະນຸຍາດໃຫ້ແຈກສ່ວນເພີ່ມອີກ ເມື່ອບໍ່ປາຖະໜາກໍຢ່າໃຫ້

ພວກພິກຂຸໃຫ້ພິກຂຸຢູ່ນອກສີມາຖືເສນາສະນະ
ພວກພິກຂຸຫວງເສນາສະນະໄວ້ຕະຫຼອດເວລາ
ຊົງສະແດງການໃຫ້ຖືເສນາສະນະ ໓ ຢ່າງ
ທ່ານພຣະອຸປະນັນທະສາກະຍະບຸດຈອງເສນາສະນະ
ພຣະຜູ້ມີພຣະພາກເຈົ້າຊົງພັນນາຄຸນແຫ່ງພຣະວິໄນ

ພວກພິກຂຸຢືນຮຽນພຣະວິໄນ ຊົງອະນຸຍາດໃຫ້ນັ່ງເທິງອາສະນະ
ສະເໝີກັນຮຽນພຣະວິໄນ ພິກຂຸຫຼາຍອົງນັ່ງເທິງອາສະນະລະດັບດຽວກັນ
ເຮັດໃຫ້ຕຽງຫັກ ຊົງອະນຸຍາດໃຫ້ນັ່ງໄດ້ຕຽງລະ ໓ ອົງ ໔ ອົງ
ຊົງອະນຸຍາດໃຫ້ນັ່ງເທິງອາສະນະຍາວຮ່ວມກັບຜູ້ມີອາສະນະຕ່າງລະດັບ
ຊົງອະນຸຍາດໃຫ້ໃຊ້ສອຍຜາສາດມີລະບຽງ

ສົມເດັດພຣະໄອຍິກາຂອງພຣະເຈົ້າປະເສນທິໂກສົນທິວົງຄົດ
ເຄື່ອງກັບປິຍະພັນເປັນຈຳນວນຫຼາຍເກີດຂຶ້ນແກ່ສົງ
ພິກຂຸຈັດແຈງເສນາສະນະສົງຢູ່ບໍ່ໄກນະຄອນຮາດຊະຄຶ

ພຣະອັດສະຊິແລະພຣະປຸນັບພະສຸກະຢູ່ທີ່ກິຕາຄິຣີຊິນນະບົດ
ແບ່ງເສນາສະນະສົງ

ພິກຂຸຊາວເມືອງອາລະວີ ໃຫ້ນະວະກຳດ້ວຍອາການພຽງວາງກ້ອນດິນ
ສາບທາຝາ ຕິດຕັ້ງບານປະຕູ ຕິດສາຍຍູ ຕິດຕັ້ງວົງກົບ
ທາສີຂາວ ທາສີດຳ ທາສີເຫຼືອງ ມຸງຫຼັງຄາ ຜູກມັດຫຼັງຄາ
ຕິດໄມ້ຫຼົບຫຼັງຄາ ປະຕິສັງຂອນເສນາສະນະທີ່ຊຸດໂຊມ ຂັດຖູ
ໃຫ້ນະວະກຳ ໔໐-໕໐ ປີ ໃຫ້ໃນວິຫານທີ່ສ້າງສຳເລັດແລ້ວ
ຊົ່ວເວລາຄວັນໄຟ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸໃຫ້ນະວະກຳວິຫານທີ່ຍັງບໍ່ໄດ້ສ້າງ
ທີ່ສ້າງຄ້າງໄວ້ ໃຫ້ກວດເບິ່ງງານໃນວິຫານນ້ອຍແລ້ວໃຫ້ນະວະກຳ
໕-໖ ປີ ໃຫ້ກວດເບິ່ງງານໃນເຮືອນທີ່ມຸງແຖບດຽວ
ແລ້ວໃຫ້ນະວະກຳ ໗-໘ ປີ ໃຫ້ກວດເບິ່ງງານ
ໃນວິຫານຫຼືຜາສາດໃຫຍ່ ແລ້ວໃຫ້ນະວະກຳ ໑໐ ປີ ໑໔ ປີ

ພິກຂຸໃຫ້ນະວະກຳວິຫານທັງຫຼັງ ພິກຂຸໃຫ້ນະວະກຳ ໔ ແຫ່ງ
ແກ່ພິກຂຸອົງດຽວ ພິກຂຸຮັບນະວະກຳແລ້ວມອບໃຫ້ພິກຂຸອື່ນ

ພິກຂຸຮັບນະວະກຳແລ້ວກົດກັນເສນາສະນະສົງໄວ້
ພິກຂຸໃຫ້ນະວະກຳແກ່ພິກຂຸຜູ້ຢູ່ນອກສີມາ
ພິກຂຸຮັບເອົານະວະກຳແລ້ວຫວງໄວ້ຕະຫຼອດເວລາ
ພິກຂຸຮັບເອົານະວະກຳແລ້ວຫຼີກໄປ ສິກ ມໍຣະນະພາບ
ປະຕິຍານເປັນສາມະເນນ ປະຕິຍານເປັນຜູ້ບອກຄືນສິກຂາ
ປະຕິຍານເປັນຜູ້ຕ້ອງອັນຕິມະວັດຖຸ ປະຕິຍານເປັນຜູ້ວິກົນຈະລິດ
ປະຕິຍານເປັນຜູ້ມີຈິດຟຸ້ງຊ່ານ ປະຕິຍານເປັນຜູ້ກະສັບກະສ່າຍຍ້ອນເວທະນາ
ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ
ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ
ປະຕິຍານເປັນຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ສະຫຼະທິດຖິບາບ
ປະຕິຍານເປັນບັນເດາະ ປະຕິຍານເປັນຄົນລັກເພດ
ປະຕິຍານເປັນຜູ້ເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ
ປະຕິຍານເປັນຄົນຂ້າບິດາ ປະຕິຍານເປັນຄົນຂ້າມານດາ
ປະຕິຍານເປັນຄົນຂ້າພຣະອະຣະຫັນ
ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີ ປະຕິຍານເປັນຜູ້ເຮັດສົງໃຫ້ແຕກກັນ
ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ
ປະຕິຍານເປັນອຸພະໂຕພະຍັນຊະນະກະ ເພິ່ງມອບນະວະກຳແກ່ພິກຂຸອື່ນດ້ວຍສັ່ງວ່າ
ທ່ານຢ່າໃຫ້ຂອງສົງເສຍຫາຍ ເມື່ອຍັງບໍ່ສຳເລັດຄວນມອບໃຫ້ພິກຂຸອື່ນ

ເມື່ອເຮັດສຳເລັດແລ້ວຫຼີກໄປ ນະວະກຳເປັນຂອງພິກຂຸນັ້ນເອງ
ພິກຂຸສິກ ມໍຣະນະພາບ ປະຕິຍານເປັນສາມະເນນ ລາສິກຂາ
ເປັນປາຣາຊິກ ສົງເປັນເຈົ້າຂອງ ພິກຂຸວິກົນຈະລິດ
ມີຈິດຟຸ້ງຊ່ານ ກະສັບກະສ່າຍຍ້ອນເວທະນາ
ຖືກສົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ
ຍ້ອນບໍ່ເຮັດຄືນອາບັດ ຍ້ອນບໍ່ສະຫຼະທິດຖິບາບ
ນະວະກຳນັ້ນເປັນຂອງພິກຂຸນັ້ນເອງ ພິກຂຸປະຕິຍານເປັນບັນເດາະ
ເປັນຄົນລັກເພດ ເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ
ປະຕິຍານເປັນຄົນຂ້າບິດາມານດາ ປະຕິຍານເປັນຄົນຂ້າພຣະອະຣະຫັນ
ປະຕິຍານເປັນຄົນປະທຸດສະຮ້າຍພິກຂຸນີ
ປະຕິຍານເປັນຄົນທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ
ເປັນອຸພະໂຕພະຍັນຊະນະກະ ສົງເປັນເຈົ້າຂອງ

ເລື້ອງພິກຂຸນຳເສນາສະນະເຄື່ອງໃຊ້ສອຍປະຈຳວິຫານໄປໃຊ້ທີ່ອື່ນ ພວກພິກຂຸຢຳເກງທີ່ຈະນຳເສນາສະນະໄປໃຊ້ໃນໂຮງອຸໂປສົດ

ມະຫາວິຫານຂອງສົງເປ່ເພ ຊົງອະນຸຍາດໃຫ້ແລກປ່ຽນຜ້າກຳພົນ ເພື່ອປະໂຫຍດແກ່ຜາຕິກຳ ຊົງອະນຸຍາດໃຫ້ແລກປ່ຽນຜ້າລາຄາແພງ ເພື່ອປະໂຫຍດແກ່ຜາຕິກຳ ຊົງອະນຸຍາດໃຫ້ເຮັດໜັງໝີ ເປັນເຄື່ອງເຊັດຕີນ ຊົງອະນຸຍາດເຄື່ອງເຊັດຕີນຊົງກົມ ຊົງອະນຸຍາດໃຫ້ເຮັດຜ້າປ່ຽງນ້ອຍເປັນຜ້າເຊັດຕີນ

ພິກຂຸບໍ່ລ້າງຕີນຢຽບເສນາສະນະ ພິກຂຸຕີນປຽກ ຢຽບເສນາສະນະ ພິກຂຸໃສ່ເກີບຢຽບເສນາສະນະ

ພິກຂຸຖົ່ມນ້ຳລາຍເທິງພື້ນທີ່ເຮັດບໍຣິກຳ ຕີນຕຽງແລະຕີນຕັ່ງຄູດພື້ນ ພິກຂຸອີງຝາທີ່ເຮັດບໍຣິກຳ ພະນັກອີງຄູດພື້ນ

ພິກຂຸລ້າງຕີນແລ້ວຢຳເກງທີ່ຈະນອນ ເລື້ອງປະຊາຊົນບໍ່ສາມາດຈະຈັດສັງຄະພັດ ພວກພິກຂຸສັບພັກຄີໃຫ້ພັດຕາຫານບໍ່ດີແກ່ພິກຂຸທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ແຕ່ງຕັ້ງພຣະພັດຕຸດເທດ ພິກຂຸພັດຕຸດເທດປຶກສາກັນວ່າ ຈະແຈກພັດຕາຫານແນວໃດ ຊົງອະນຸຍາດໃຫ້ແຕ່ງຕັ້ງພິກຂຸເປັນເສນາສະນະປັນຍາປະກະ ພິກຂຸຜູ້ເປັນເຈົ້າໜ້າທີ່ຮັກສາເຮືອນຄັງ ພິກຂຸຜູ້ຮັບຈີວອນ ພິກຂຸຜູ້ແຈກຈີວອນ ພິກຂຸຜູ້ແຈກເຂົ້າຕົ້ມ ພິກຂຸຜູ້ແຈກໝາກໄມ້ ພິກຂຸຜູ້ແຈກຂອງຫຍ້ຳ ພິກຂຸຜູ້ແຈກຂອງເລັກ ໆ ໜ້ອຍ ໆ ພິກຂຸຜູ້ແຈກຜ້າ ພິກຂຸຜູ້ແຈກບາດ ພິກຂຸຜູ້ໃຊ້ຄົນວັດ ພິກຂຸຜູ້ໃຊ້ສາມະເນນ

ພຣະຜູ້ມີພຣະພາກເຈົ້າຜູ້ຊົງຄອບງຳສັບພະທຳ ຊົງຮູ້ແຈ້ງໂລກ ມີພຣະທະໄທເກື້ອກູນ ເປັນຜູ້ນຳປະເສີດ ຊົງອະນຸຍາດເສນາສະນະໄວ້ເພື່ອຫຼີບຫຼີກຢູ່ ເພື່ອຄວາມສຸກ ເພື່ອເພ່ງພິນິດ ແລະເພື່ອເຫັນແຈ້ງ ດັ່ງນີ້ແລ

**ເສນາສະນະຂັນທະກະ ຈົບ**

# ກ. ສັງຄະເພທະຂັນທະກະ

## ໑. ປະຖົມພານະວານ

### ສະສັກກະຍະປັບພັດຊາກະຖາ

### ວ່າດ້ວຍການບັນພະຊາຂອງເຈົ້າສາກະຍະ ໖ ອົງ

[໓໓໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອະນຸປິຍະນິຄົມຂອງພວກມັນລະກະສັດ ຄັ້ງນັ້ນ ພວກສາກະຍະກຸມານທີ່ມີຊື່ສຽງອອກບວດຕາມພຣະຜູ້ມີພຣະພາກເຈົ້າຜູ້ຊົງບວດແລ້ວ

ສະໄໝນັ້ນ ເຈົ້າມະຫານາມະສາກະຍະແລະເຈົ້າອະນຸຣຸດທະສາກະຍະທັງສອງເປັນອ້າຍນ້ອງກັນ ເຈົ້າອະນຸຣຸດທະສາກະຍະເປັນກະສັດຜູ້ສຸຂຸມາລະຊາດ ມີຜາສາດ ໓ ຫຼັງ ຄື ຜາສາດສຳລັບ ຢູ່ໃນລະດູໜາວ ໑ ຫຼັງ ຜາສາດສຳລັບຢູ່ໃນລະດູຮ້ອນ ໑ ຫຼັງ ຜາສາດສຳລັບຢູ່ ໃນລະດູຝົນ ໑ ຫຼັງ ເຈົ້າອະນຸຣຸດທະສາກະຍະນັ້ນໄດ້ຮັບການບຳລຸງປົນເປີດ້ວຍດົນຕີທີ່ມີເຫຼົ່າສະຕີລ້ວນຂັບກ່ອມຕະຫຼອດ ໔ ເດືອນ ໃນຜາສາດລະດູຝົນ ບໍ່ລົງມາທີ່ຜາສາດຊັ້ນລຸ່ມເລີຍ

ຕໍ່ມາ ເຈົ້າມະຫານາມະສາກະຍະໄດ້ຊົງດຳຣິດັ່ງນີ້ວ່າ "ເວລານີ້ພວກສາກະຍະກຸມານທີ່ມີຊື່ສຽງຕ່າງອອກບວດຕາມສະເດັດພຣະຜູ້ມີພຣະພາກເຈົ້າຜູ້ຊົງບວດແລ້ວ ແຕ່ຕະກູນຂອງເຮົາຍັງບໍ່ມີໃຜອອກຈາກເຮືອນ ບວດເປັນບັນພະຊິດ ຖ້າຈັ່ງໃດ ເຮົາຫຼືອະນຸຣຸດທະຄວນບວດ"

ລຳດັບນັ້ນ ເຈົ້າມະຫານາມະສາກະຍະເຂົ້າໄປຫາເຈົ້າອະນຸຣຸດທະສາກະຍະຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຕັດກັບເຈົ້າອະນຸຣຸດທະສາກະຍະດັ່ງນີ້ວ່າ "ເວລານີ້ພວກສາກະຍະກຸມານທີ່ມີຊື່ສຽງຕ່າງອອກບວດ ຕາມພຣະຜູ້ມີພຣະພາກເຈົ້າຜູ້ຊົງບວດແລ້ວ ແຕ່ຕະກູນຂອງເຮົາຍັງບໍ່ມີໃຜອອກຈາກເຮືອນ ບວດ ເປັນບັນພະຊິດເລີຍ ນ້ອງຈະບວດຫຼືວ່າອ້າຍຈະບວດ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "ຂ້ານ້ອຍເປັນສຸຂຸມາລະຊາດ ບໍ່ສາມາດອອກບວດໄດ້ ເຈົ້າອ້າຍຈົ່ງອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ເຈົ້າມະຫານາມະສາກະຍະຕັດວ່າ "ດີແລ້ວນ້ອງອະນຸຣຸດທະ ອ້າຍຈະສັ່ງສອນວິທີການຄອງເຮືອນແກ່ເຈົ້າເພື່ອຈະໄດ້ຄອງເຮືອນຕໍ່ໄປ ອັນດັບທຳອິດ ຜູ້ຄອງເຮືອນຕ້ອງໃຫ້ໄຖນາ ບັດແລ້ວໃຫ້ ຫວ່ານເຂົ້າ ບັດແລ້ວໃຫ້ໄຂນ້ຳເຂົ້າ ບັດແລ້ວໃຫ້ລະບາຍນ້ຳອອກ ບັດແລ້ວໃຫ້ລົກຫຍ້າ ເມື່ອແລ້ວໃຫ້ກ່ຽວເຂົ້າ ບັດແລ້ວໃຫ້ຂົນເຂົ້າ ບັດແລ້ວໃຫ້ຕັ້ງລອມ ບັດແລ້ວໃຫ້ນວດ ບັດແລ້ວ

ໃຫ້ສາງເຟືອງອອກ ບັດແລ້ວຝັດເຂົ້າລີບອອກ ບັດແລ້ວຝັດຄາຍອອກ ບັດແລ້ວໃຫ້ຂົນເກັບ ໃນເລົ້າ ເມື່ອພໍເຖິງລະດູຝົນກໍຕ້ອງເຮັດແນວນີ້ຕໍ່ເລື້ອຍໄປ"

ເຈົ້າອະນຸຣຸດທະສາກະຍະທູນຖາມວ່າ "ວຽກງານບໍ່ມີບ່ອນຈົບສິ້ນ ບ່ອນສຸດຂອງການ ເຮັດວຽກງານບໍ່ຜາກົດ ວຽກງານຈະສິ້ນໄປເມື່ອໃດ ບ່ອນສຸດຂອງວຽກງານຈັກຜາກົດເມື່ອໃດ ເມື່ອໃດນໍທີ່ພວກເຮົາຈັກວ່າງ ຈາກວຽກງານ ພຽບພ້ອມສົມບູນດ້ວຍກາມມະຄຸນ ໕ ບໍາລຸງປິນ ເປີຢູ່"

ເຈົ້າມະຫານາມະສາກະຍະຕັດຕອບວ່າ "ນ້ອງອະນຸຣຸດທະ ວຽກງານບໍ່ມີທີ່ຈົບສິ້ນ ບ່ອນ ສຸດຂອງ ວຽກງານບໍ່ຜາກົດ ໃນເມື່ອວຽກງານຍັງບໍ່ຈົບສິ້ນ ມານດາບິດາ ບັນພະບຸລຸດປູ່ຍ່າ ຕາ ຍາຍກໍພາກັນຕາຍຈາກໄປ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "ຖ້າເປັນແນວນັ້ນ ເຈົ້າອ້າຍຈົ່ງຮຽນຮູ້ເຖິງວິທີຄອງ ເຮືອນຈະດີກວ່າ ຂ້ານ້ອຍຈະອອກຈາກເຮືອນບວດເປັນບັນພະຊິດ"

ຈາກນັ້ນ ເຈົ້າອະນຸຣຸດທະສາກະຍະເຂົ້າໄປເຝົ້າພຣະມານດາຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຂາບທູນພຣະມານດາດັ່ງນີ້ວ່າ "ສະເດັດແມ່ ຂ້ານ້ອຍຢາກຈະອອກຈາກເຮືອນບວດເປັນບັນ ພະຊິດ ສະເດັດແມ່ໂຜດອະນຸຍາດໃຫ້ຂ້ານ້ອຍອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ເມື່ອເຈົ້າອະນຸຣຸດທະສາກະຍະຂາບທູນແນວນີ້ ພຣະມານດາຕັດຕອບເຈົ້າອະນຸຣຸດທະສາ ກະຍະດັ່ງນີ້ວ່າ "ລູກອະນຸຣຸດທະ ພວກເຈົ້າເປັນລູກ ໒ ຄົນ ເປັນທີ່ຮັກທີ່ພໍໃຈຂອງແມ່ເຫຼືອເກີນ

ເຖິງພວກເຈົ້າຈະຕາຍໄປ ແມ່ກໍບໍ່ປາຖະໜາຈະຈາກ ແລ້ວເປັນຫຍັງແມ່ຈະຍອມໃຫ້ພວກ ເຈົ້າຜູ້ຍັງມີຊີວິດຢູ່ອອກຈາກເຮືອນໄປບວດເປັນບັນພະຊິດນໍ"

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ເຈົ້າອະນຸຣຸດທະສາກະຍະກໍຂາບທູນພຣະມານດາດັ່ງນີ້ວ່າ "ສະເດັດແມ່ ລູກຢາກອອກຈາກເຮືອນບວດເປັນບັນພະຊິດ ສະເດັດແມ່ໂຜດອະນຸຍາດໃຫ້ຂ້ານ້ອຍອອກຈາກ ເຮືອນບວດເປັນບັນພະຊິດເທີ້ນ"

## ເລື່ອງພຣະເຈົ້າພັດທິຍະສາກະຍະ

ສະໄໝນັ້ນ ພຣະເຈົ້າພັດທິຍະສາກະຍະຄອງຣາດຊະສົມບັດຂອງຊາວສາກະຍະວົງ ພຣະອົງຊົງເປັນພຣະສະຫາຍຂອງເຈົ້າອະນຸຣຸດທະສາກະຍະ

ຄັ້ງນັ້ນ ພຣະມານດາຂອງເຈົ້າອະນຸຣຸດທະສາກະຍະຊົງດຳຣິວ່າ "ພຣະເຈົ້າພັດທິຍະສາກະຍະນີ້ ຄອງຣາດຊະສົມບັດຂອງຊາວສາກະຍະວົງ ຊົງເປັນພຣະສະຫາຍຂອງລູກອະນຸຣຸດທະ ພຣະອົງຈະບໍ່ ສາມາດສະເດັດອອກຈາກເຮືອນບວດເປັນບັນພະຊິດແນ່" ຈຶ່ງຕັດກັບເຈົ້າອະນຸຣຸດທະສາກະຍະດັ່ງນີ້ວ່າ "ລູກອະນຸຣຸດທະ ຖ້າພຣະເຈົ້າພັດທິຍະສາກະຍະຈະສະເດັດອອກຈາກເຮືອນບວດເປັນບັນພະຊິດດ້ວຍ ລູກກໍຈົ່ງບວດເທີ້ນ"

ຕໍ່ມາ ເຈົ້າອະນຸຣຸດທະສາກະຍະຈຶ່ງເຂົ້າໄປເຝົ້າພຣະເຈົ້າພັດທິຍະສາກະຍະຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ທູນພຣະເຈົ້າພັດທິຍະສາກະຍະດັ່ງນີ້ວ່າ "ເພື່ອນຮັກ ການບວດຂອງເຮົາກ່ຽວເນື່ອງກັບທ່ານ"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ການບວດຂອງທ່ານຈະກ່ຽວເນື່ອງກັບເຮົາ ບໍ່ກ່ຽວເນື່ອງກັບເຮົາກໍຊ່າງເທີ້ນ ເຮົາກັບທ່ານ ທ່ານຈົ່ງບວດຕາມສະບາຍເທີ້ນ"[໑]

ເຈົ້າອະນຸຣຸດທະສາກະຍະທູນວ່າ "ມາເທີ້ນ ເພື່ອນຮັກ ເຮົາທັງ ໒ ຈະອອກຈາກເຮືອນບວດ ເປັນບັນພະຊິດນຳກັນ"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍ ບໍ່ໄດ້ ເພື່ອນບວດຄົນດຽວເທີ້ນ ເຮົາຍິນດີຊ່ວຍເຫຼືອເລື້ອງທີ່ອາດຊ່ອຍໄດ້"

ເຈົ້າອະນຸຣຸດທະສາກະຍະທູນວ່າ "ພຣະມານດາຂອງເຮົາຮັບສັ່ງວ່າ ລູກອະນຸຣຸດທະ ຖ້າພຣະເຈົ້າພັດທິຍະສາກະຍະຈະສະເດັດອອກຈາກເຮືອນບວດເປັນບັນພະຊິດດ້ວຍ ລູກກໍຈົ່ງບວດເທີ້ນ ກໍເພື່ອນ ໄດ້ກ່າວວາຈານີ້ວ່າ ການບວດຂອງທ່ານຈະກ່ຽວເນື່ອງກັບເຮົາ ບໍ່ກ່ຽວເນື່ອງກັບເຮົາ ກໍຊ່າງເທີ້ນ ເຮົາກັບທ່ານ ທ່ານໄປບວດຕາມສະບາຍເທີ້ນ ມາເທີ້ນ ເພື່ອນຮັກ ເຮົາທັງ ໒ ຈະອອກຈາກເຮືອນ ບວດເປັນບັນພະຊິດນຳກັນ"

ສະໄໝນັ້ນ ປະຊາຊົນເວົ້າຈິງເຮັດຈິງ ພຣະເຈົ້າພັດທິຍະສາກະຍະຕັດກັບອະນຸຣຸດທະສາກະຍະ ດັ່ງນີ້ວ່າ "ເພື່ອນຮັກ ທ່ານໂຜດຖ້າຢູ່ຈັກ ໗ ປີເທີ້ນ ພໍພົ້ນ ໗ ປີ ເຮົາທັງ ໒ ຈະອອກຈາກເຮືອນບວດເປັນບັນພະຊິດນຳກັນ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "໗ ປີ ດົນເກີນໄປ ເຮົາບໍ່ສາມາດຈະຖ້າເຖິງ ໗ ປີໄດ້"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ໂຜດຖ້າຈັກ ໖ ປີ ຯລຯ ໕ ປີ ຯລຯ ໔ ປີ ຯລຯ ໓ ປີ ຯລຯ ໒ ປີ ຯລຯ ໑ ປີ ຯລຯ ເມື່ອລ່ວງ ໑ ປີ ເຮົາທັງ ໒ ຈະອອກຈາກເຮືອນບວດເປັນບັນພະຊິດນຳກັນ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "໑ ປີ ກໍຍັງດົນເກີນໄປ ເຮົາບໍ່ສາມາດຖ້າເຖິງ ໑ ປີໄດ້"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ທ່ານໂຜດຖ້າຈັກ ໗ ເດືອນ ພໍພົ້ນ ໗ ເດືອນ ເຮົາທັງ ໔ ຈະອອກຈາກເຮືອນບວດເປັນບັນພະຊິດນຳກັນ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "໗ ເດືອນກໍຍັງດົນເກີນໄປ ເຮົາບໍ່ສາມາດຖ້າເຖິງ ໗ ເດືອນໄດ້"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ທ່ານໂຜດຖ້າຈັກ ໖ ເດືອນ ໆລໆ ໕ ເດືອນ ໆລໆ ໔ ເດືອນ ໆລໆ ໓ ເດືອນ ໆລໆ ໔ ເດືອນ ໆລໆ ໑ ເດືອນ ໆລໆ ເຄິ່ງເດືອນ ພໍພົ້ນເຄິ່ງເດືອນ ເຮົາທັງ ໔ ຈະອອກຈາກເຮືອນບວດເປັນບັນພະຊິດນຳກັນ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "ເຄິ່ງເດືອນກໍຍັງດົນເກີນໄປ ເຮົາບໍ່ສາມາດຖ້າເຖິງເຄິ່ງເດືອນໄດ້"

ພຣະເຈົ້າພັດທິຍະສາກະຍະຕັດວ່າ "ເພື່ອນຮັກ ທ່ານໂຜດຖ້າຈັກ ໗ ມື້ເທີ້ນ ພໍໃຫ້ເຮົາໄດ້ມອບຣາດຊະສົມບັດແກ່ພວກລູກ ໆ ແລະຍາດພີ່ນ້ອງ"

ເຈົ້າອະນຸຣຸດທະສາກະຍະທູນວ່າ "ເພື່ອນຮັກ ໗ ມື້ບໍ່ດົນເກີນໄປ ເຮົາຈະຖ້າ"

## ເລື້ອງເຈົ້າສາກະຍະຊົງບວດ

[໓໓໑] ຄັ້ງນັ້ນ ພຣະເຈົ້າພັດທິຍະສາກະຍະ ເຈົ້າອະນຸຣຸດທະ ເຈົ້າອານົນ ເຈົ້າພະຄຸ ເຈົ້າກິມພິລະແລະເຈົ້າເທວະທັດ ກັບອຸບາລີເຊິ່ງເປັນຊ່າງຕັດຜົມ ລວມເປັນ ໗ ຄົນ ສະເດັດອອກພ້ອມດ້ວຍເສນາ ໔ ເຫຼົ່າ ຄືສະເດັດປະພາດຣາຊະອຸທະຍານພ້ອມເສນາ ໔ ເຫຼົ່າໃນຄັ້ງກ່ອນ

ທັງ ໖ ພຣະອົງນັ້ນສະເດັດໄປທ່າງໄກແລ້ວຮັບສັ່ງໃຫ້ເສນາກັບ ເຂົ້າຊາຍແດນຂອງເຈົ້າເມືອງອື່ນ ຊົງປົດເຄື່ອງປະດັບເອົາຜ້າຫໍ່ແລ້ວ ໄດ້ຕັດກັບອຸບາລີຊ່າງຕັດຜົມດັ່ງນີ້ ວ່າ "ອຸບາລີເຊີນທ່ານກັບເທີ້ນ ຊັບເຫຼົ່ານີ້ພໍລ້ຽງຊີບໄດ້"

ຂະນະເມື່ອອຸບາລີຊ່າງຕັດຜົມຈະກັບໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເຈົ້າສາກະຍະທັງຫຼາຍ ໂຫດຮ້າຍຫຼາຍ ຈະເພິ່ງໃຫ້ຂ້າເຮົາດ້ວຍເຂົ້າພຣະທະໄທໄປວ່າ ອຸບາລີນີ້ໃຫ້ພຣະກຸມານທັງຫຼາຍໜີໄປ ກໍພຣະສາກະຍະກຸມານເຫຼົ່ານີ້ຍັງອອກຈາກເຮືອນຊົງບວດເປັນບັນພະຊິດໄດ້ ເປັນຫຍັງເຮົາຈະບວດແດ່ບໍ່ໄດ້" ອຸບາລີຊ່າງຕັດຜົມນັ້ນຈຶ່ງແກ້ຫໍ່ເຄື່ອງປະດັບແລ້ວແຂວນສິ່ງຂອງໄວ້ເທິງຕົ້ນໄມ້ແລ້ວ ກ່າວວ່າ "ຜູ້ພົບເຫັນຈົ່ງນຳສິ່ງຂອງທີ່ເຮົາໃຫ້ແລ້ວໄປເທີ້ນ" ແລ້ວເຂົ້າໄປເຝົ້າສາກະຍະກຸມານ ເຫຼົ່ານັ້ນ ຮອດບ່ອນຢູ່ ສາກະຍະກຸມານເຫຼົ່ານັ້ນໄດ້ທອດພຣະເນດເຫັນອຸບາລີ

ກຳລັງຍ່າງມາແຕ່ໄກ ບັດແລ້ວໄດ້ຮັບສັ່ງກັບອຸບາລີຊ່າງຕັດຜົມດັ່ງນີ້ວ່າ "ນີ້ ອຸບາລີ ທ່ານກັບມາເຮັດຫຍັງ"

ອຸບາລີຊ່າງຕັດຜົມຈຶ່ງຂາບທູນວ່າ "ພຣະລູກເຈົ້າທັງຫຼາຍ ເມື່ອຂ້ານ້ອຍກຳລັງກັບ ໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເຈົ້າສາກະຍະທັງຫຼາຍໂຫດຮ້າຍຫຼາຍ ຈະເພິ່ງໃຫ້ຂ້າເຮົາດ້ວຍເຂົ້າພຣະຫະໄທໄປວ່າ ອຸບາລີນີ້ໃຫ້ພຣະກຸມານທັງຫຼາຍໜີໄປ ກໍພຣະສາກະຍະກຸມານເຫຼົ່ານີ້ຍັງອອກຈາກເຮືອນຊົງບວດເປັນບັນພະຊິດໄດ້ ເປັນຫຍັງເຮົາຈະບວດແດ່ບໍ່ໄດ້ ຂ້າແດ່ພຣະລູກເຈົ້າ ຂ້ານ້ອຍນັ້ນແກ້ຫໍ່ເຄື່ອງປະດັບແລ້ວແຂວນສິ່ງຂອງໄວ້ເທິງຕົ້ນໄມ້ແລ້ວກ່າວວ່າ ຜູ້ພົບເຫັນ ຈົ່ງນຳສິ່ງຂອງທີ່ເຮົາໃຫ້ແລ້ວໄປເທີ້ນ ກັບຈາກບ່ອນນັ້ນແລ້ວ"

ສາກະຍະກຸມານທັງຫຼາຍຕັດວ່າ "ທ່ານເຮັດດີແລ້ວທີ່ບໍ່ໄດ້ກັບໄປ ເຈົ້າສາກະຍະທັງຫຼາຍຜູ້ໂຫດຮ້າຍຈະເພິ່ງໃຫ້ຂ້າທ່ານ ດ້ວຍເຂົ້າໃຈວ່າ ອຸບາລີນີ້ໃຫ້ກຸມານທັງຫຼາຍໜີໄປ"

ຕໍ່ມາ ສາກະຍະກຸມານທັງຫຼາຍພາອຸບາລີຜູ້ເປັນຊ່າງຕັດຜົມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບນັ່ງທີ່ສົມຄວນ ເຈົ້າສາກະຍະທັງຫຼາຍຜູ້ປະທັບນັ່ງທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພຣະອົງເປັນເຈົ້າສາກະຍະຍັງມີຄວາມຖືໂຕ ອຸບາລີຜູ້ນີ້ເປັນຊ່າງຕັດຜົມຮັບໃຊ້ພວກຂ້າພຣະອົງມາດົນ ຂໍພຣະອົງຊົງໂຜດໃຫ້ເຂົາບວດກ່ອນ ພວກຂ້າພຣະອົງຈະອະພິວາດ ລຸກຕ້ອນຮັບ ກະທຳອັນຊະລີກຳ ສາມີຈິກຳແກ່ເຂົາ ເມື່ອເປັນແນວນີ້ຄວາມຖືໂຕວ່າເປັນສາກະຍະຂອງພວກຂ້າພຣະອົງຈັກບັນເທົາໄປ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງໂຜດໃຫ້ອຸບາລີຜູ້ເປັນຊ່າງຕັດຜົມບວດກ່ອນ ແລ້ວໃຫ້ສາກະຍະກຸມານບວດພາຍຫຼັງ ຕໍ່ມາ ໃນລະຫວ່າງພັນສານັ້ນເອງ ທ່ານພຣະພັດທິຍະໄດ້ບັນລຸວິດຊາ ໓ ທ່ານພຣະອະນຸຣຸດທະໄດ້ບັນລຸທິບພະຍະຈັກຂຸ ທ່ານພຣະອານົນໄດ້ບັນລຸໂສດາປັດຕິຜົນ ພຣະເທວະທັດໄດ້ລົດຊັ້ນປຸຖຸຊົນ

## ເລື້ອງພຣະພັດທິຍະເປ່ງອຸທານວ່າ "ສຸກນໍ"

[໓໓໔] ສະໄໝນັ້ນ ທ່ານພຣະພັດທິຍະຈະໄປໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປໃນສຸນຍາຄານກໍດີ ຍ່ອມເປ່ງອຸທານເນືອງ ໆ ວ່າ "ສຸກນໍ ສຸກນໍ" ຄັ້ງນັ້ນ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວອະພິວາດພຣະຜູ້ມີພຣະພາກເຈົ້າ ນັ່ງທີ່ສົມຄວນ ພິກຂຸເຫຼົ່ານັ້ນຜູ້ນັ່ງທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ທ່ານພຣະພັດທິຍະ ບໍ່ວ່າຈະໄປໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປໃນເຮືອນວ່າງກໍດີ ກໍເປ່ງ

ອຸທານເນືອງ ໆ ວ່າ ສຸກນໍ ສຸກນໍ ທ່ານພຣະພັດທິຍະບໍ່ຍິນດີປະພຶດພົມມະຈັນແນ່ ໆ ຫຼືຄົງຫວນ ຣະນຶກເຖິງສຸກໃນຣາດຊະສົມບັດຄັ້ງກ່ອນ ບໍ່ວ່າຈະໄປໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປໃນ ສຸນຍາຄານກໍດີ ຈຶ່ງເປ່ງອຸທານແນວນັ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງກັບພິກຂຸອົງໜຶ່ງວ່າ "ພິກຂຸ ທ່ານຈົ່ງໄປບອກ ພັດທິຍະວ່າພຣະສາດສະດາຣັບສັ່ງຫາທ່ານ"

ພິກຂຸນັ້ນທູນຮັບສະໜອງພຣະພຸດທະດຳຣັດແລ້ວເຂົ້າໄປຫາທ່ານພຣະພັດທິຍະຮອດ ບ່ອນຢູ່ ເມື່ອ ເຖິງແລ້ວໄດ້ກ່າວກັບທ່ານພຣະພັດທິຍະດັ່ງນີ້ວ່າ "ພຣະສາດສະດາຣັບສັ່ງຫາທ່ານ"

ທ່ານພຣະພັດທິຍະຮັບຄຳພິກຂຸນັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ພຣະຜູ້ມີພຣະພາກ ເຈົ້າໄດ້ຕັດກັບທ່ານພຣະພັດທິຍະຜູ້ນັ່ງແລ້ວ ທີ່ສົມຄວນດັ່ງນີ້ວ່າ "ພັດທິຍະ ໄດ້ຂ່າວວ່າ ທ່ານບໍ່ ວ່າຈະໄປໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປໃນສຸນຍາຄານກໍດີ ກໍເປ່ງອຸທານເນືອງ ໆ ວ່າ ສຸກນໍ ສຸກນໍ ແມ່ນບໍ?"

ທ່ານພຣະພັດທິຍະທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພັດທິຍະ ທ່ານເຫັນປະໂຫຍດອັນໃດ ບໍ່ວ່າຈະໄປ ໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປໃນສຸນຍາຄານກໍດີ ຈຶ່ງເປ່ງອຸທານເນືອງ ໆ ວ່າ ສຸກນໍ ສຸກນໍ"

ທ່ານພຣະພັດທິຍະຂາບທູນວ່າ "ສະໄໝເມື່ອຂ້າພຣະອົງເປັນພຣະຣາຊາ ໄດ້ຮັບການອາ ຮັກຂາຄຸ້ມຄອງຢ່າງດີທັງພາຍໃນວັງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍນອກວັງ ໄດ້ ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍໃນເມືອງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍ ນອກເມືອງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງໃນຊົນນະບົດ ໄດ້ຮັບການອາຮັກຂາ ຄຸ້ມ ຄອງຢ່າງດີທັງນອກຊົນນະບົດ ຂ້າພຣະອົງເຖິງຈະໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີແນວນີ້ ກໍ ຍັງຢ້ານ ຍັງຫວາດຫວັ່ນຢູ່ ສະດຸ້ງ ຕົກໃຈ ແຕ່ເວລານີ້ຂ້າພຣະອົງບໍ່ວ່າຈະໄປໃນປ່າກໍດີ ຈະໄປທີ່ ຂ່ວງໄມ້ກໍດີ ຈະໄປໃນສຸນຍາຄານກໍດີພຽງຜູ້ດຽວກໍບໍ່ຢ້ານ ບໍ່ຫວາດຫວັ່ນ ບໍ່ສະດຸ້ງຕົກໃຈແຕ່ ຢ່າງໃດເລີຍ ມີຄວາມໂລ່ງເບົາກາຍຢ່າງຍິ່ງ ຄອງຊີວິດດ້ວຍປັດໄຈທີ່ຜູ້ອື່ນໃຫ້ ມີຈິດອິດສະຫຼະ ຄືກວາງ ຂ້າພຣະອົງເຫັນປະໂຫຍດແນວນີ້ ບໍ່ວ່າຈະໄປໃນປ່າກໍດີ ຈະໄປທີ່ຂ່ວງໄມ້ກໍດີ ຈະໄປ ໃນສຸນຍາຄານກໍດີ ໗໘໗ ຈຶ່ງມັກຈະເປ່ງອຸທານເນືອງ ໆ ວ່າ ສຸກນໍ ສຸກນໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

ຜູ້ໃດບໍ່ມີກິເລດເປັນເຫດໃຫ້ກຳເຣິບພາຍໃນຈິດ
ແລະລ່ວງພົ້ນຄວາມເປັນພົບແລະອະພົບຕ່າງ ໆ ໄດ້ແລ້ວ
ທວຍເທບບໍ່ສາມາດແນມເຫັນຜູ້ນັ້ນ
ຜູ້ປາສະຈາກໄພ ມີຄວາມສຸກ ບໍ່ເສົ້າໂສກ

## ເທວະທັດຕະວັດຖຸ

## ວ່າດ້ວຍເລື່ອງຂອງພຣະເທວະທັດ

[໓໓໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອະນຸປິຍະນິຄົມຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນໂກສຳພີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນໂກສຳພີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ໃນນະຄອນໂກສຳພີນັ້ນ

ຄັ້ງນັ້ນ ພຣະເທວະທັດຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນໃນໃຈວ່າ "ເຮົາ ຈະເພິ່ງຍັງໃຜບໍໃຫ້ເຫຼື້ອມໃສ ເຊິ່ງເມື່ອເຂົາເຫຼື້ອມໃສເຮົາແລ້ວ ລາບສັກກາຣະຫຼວງຫຼາຍເພິ່ງເກີດຂຶ້ນ" ລຳດັບນັ້ນ ພຣະເທວະທັດໄດ້ມີຄວາມຄິດດັ່ງນີ້ວ່າ "ອະຊາດສັດຕູກຸມານນີ້ຍັງເປັນໜຸ່ມຈະມີຄວາມຈະເລີນຮຸ່ງເຮືອງຕໍ່ໄປ ຖ້າຈັ່ງໃດ ເຮົາເພິ່ງຍັງອະຊາດສັດຕູກຸມານນີ້ໃຫ້ເຫຼື້ອມໃສເມື່ອເຂົາເຫຼື້ອມໃສແລ້ວ ລາບສັກກາຣະຫຼວງຫຼາຍຈະເກີດຂຶ້ນ"

ລຳດັບນັ້ນ ພຣະເທວະທັດເກັບເສນາສະນະ ຖືບາດແລະຈີວອນຈາຣິກໄປທາງນະຄອນຣາດຊະຄື ຈົນເຖິງນະຄອນຣາດຊະຄືໂດຍລຳດັບ ຄັ້ງນັ້ນ ພຣະເທວະທັດໄດ້ແປງເພດເນຣະມິດຕົນເປັນກຸມານ ນ້ອຍເອົາງູພັນແອວຜາກົດເທິງພຣະເພົາ (ຕັກ) ຂອງອະຊາດສັດຕູກຸມານ

ຄັ້ງນັ້ນ ອະຊາດສັດຕູກຸມານຊົງຢ້ານ ຫວາດຫວັ່ນ ສະດຸ້ງ ຕົກພຣະຫະໄທ ພຣະເທວະທັດຈຶ່ງໄດ້ຖາມດັ່ງນີ້ວ່າ "ກຸມານ ທ່ານຢ້ານເຮົາບໍ"

ພຣະກຸມານຕັດວ່າ "ແມ່ນ ເຮົາຢ້ານ ທ່ານເປັນໃຜ"

ພຣະເທວະທັດຕອບວ່າ "ເຮົາຄືພຣະເທວະທັດ"

ພຣະກຸມານຕັດວ່າ "ຖ້າທ່ານເປັນພຣະຜູ້ເປັນເຈົ້າເທວະທັດກໍກັບເປັນຕາມເພດເດີມເທີ້ນ"

ຄັ້ງນັ້ນ ພຣະເທວະທັດປ່ຽນເພດກຸມານນ້ອຍ (ກັບເປັນພິກຂຸ) ຊົງສັງຄາຕິ ບາດ ແລະຈີວອນ ຢືນຢູ່ທາງໜ້າພຣະກຸມານ ລຳດັບນັ້ນ ພຣະກຸມານເຫຼື້ອມໃສຍິ່ງຍ້ອນອິດທິປາຕິຫານນີ້ ໄດ້ສະເດັດໄປທີ່ອຸປັດຖາກທັງເວລາຄ່ຳແລະເວລາເຊົ້າ ພ້ອມດ້ວຍຣາດຊະລົດ ໕໐໐ ຄັນ ໄດ້ນຳພັດຕາຫານ ໕໐໐ ຊຸດໄປນຳ

ຕໍ່ມາ ພຣະເທວະທັດຖືກລາບສັກກາຣະ ແລະຄວາມສັນເສີນຄອບງຳ ເກີດຄວາມຕ້ອງການດັ່ງນີ້ວ່າ "ເຮົາຈະປົກຄອງພິກຂຸສົງ" ພຣະເທວະທັດຈຶ່ງເສື່ອມຈາກລິດພ້ອມກັບເກີດ ຄວາມຄິດແນວນີ້

## ເລື້ອງກະກຸທະໂກລິຍະບຸດ

ສະໄໝນັ້ນ ບຸດເຈົ້າໂກລິຍະນາມວ່າກະກຸທະເປັນອຸປັດຖາກຂອງທ່ານພຣະມະຫາໂມກຄັນລານະ ສິ້ນຊີບໄດ້ບໍ່ດົນ ເຂົ້າເຖິງຊັ້ນກາຍະມະໂນໄມ໌ ຊັ້ນໃດຊັ້ນໜຶ່ງ ເປັນຜູ້ໄດ້ອັດຕະພາບໃຫຍ່ຄືຄາມເຂດໃນແຄວ້ນມະຄົດ ໒-໓ ໝູ່ ແຕ່ເຂົາກໍບໍ່ເຮັດຕົນແລະຜູ້ອື່ນໃຫ້ເດືອດຮ້ອນຍ້ອນການໄດ້ອັດຕະພາບນັ້ນ

ຄັ້ງນັ້ນ ກະກຸທະເທບພະບຸດໄດ້ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ເມື່ອເຖິງແລ້ວໄຫວ້ທ່ານພຣະມະຫາໂມກຄັນລານະແລ້ວຢືນຢູ່ທີ່ສົມຄວນ ກະກຸທະເທບພະບຸດຜູ້ຢືນຢູ່ທີ່ ສົມຄວນໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ "ທ່ານຜູ້ຈະເລີນພຣະເທວະທັດຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ເກີດຄວາມປາຖະໜາແນວນີ້ວ່າ ເຮົາຈະປົກຄອງພິກຂຸສົງ ທ່ານຜູ້ຈະເລີນ ພ້ອມກັບຈິດຕຸປະບາດ ພຣະເທວະທັດຈຶ່ງເສື່ອມຈາກລິດ" ກະກຸທະເທບພະບຸດເມື່ອກ່າວດັ່ງນີ້ແລ້ວ ໄດ້ໄຫວ້ທ່ານພຣະມະຫາໂມກຄັນລານະ ກະທຳປະທັກຂິນແລ້ວຫາຍໄປ ບ່ອນນັ້ນເອງ

ລຳດັບນັ້ນ ພຣະມະຫາໂມກຄັນລານະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້ານັ່ງທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະຜູ້ນັ່ງທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ບຸດຂອງເຈົ້າໂກລິຍະນາມວ່າກະກຸທະເປັນອຸປັດຖາກຂອງຂ້າພຣະອົງ ສິ້ນຊີບໄດ້ບໍ່ດົນ ເຂົ້າເຖິງຊັ້ນກາຍະມະໂນໄມຊັ້ນໃດຊັ້ນໜຶ່ງ ເປັນຜູ້ໄດ້ອັດຕະພາບໃຫຍ່ຄືຄາມເຂດຂອງແຄວ້ນມະຄົດ ໒-໓ ໝູ່ ແຕ່ເຂົາບໍ່ເຮັດຕົນແລະຜູ້ອື່ນໃຫ້ເດືອດຮ້ອນຍ້ອນການໄດ້ອັດຕະພາບນັ້ນ ຕໍ່ມາ ກະກຸທະເທບພະບຸດ ເຂົ້າໄປຫາຂ້າພຣະອົງຮອດບ່ອນຢູ່ໄຫວ້ແລ້ວຢືນຢູ່ທີ່ສົມຄວນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ທ່ານຜູ້ຈະເລີນ ພຣະເທວະທັດຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ເກີດຄວາມປາຖະໜາແນວນີ້ວ່າ ເຮົາຈະປົກຄອງພິກຂຸສົງ ພ້ອມກັບຈິດຕຸປະບາດ ພຣະເທວະທັດຈຶ່ງເສື່ອມຈາກລິດ ຂ້ານ້ອຍ ກະກຸທະເທບພະບຸດເມື່ອກ່າວດັ່ງນີ້ແລ້ວ ໄຫວ້ຂ້າພຣະອົງ ກະທຳປະທັກຂິນແລ້ວຫາຍໄປ ບ່ອນນັ້ນເອງ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂມກຄັນລານະ ທ່ານກຳນົດຮູ້ຈິດຂອງກະກຸທະເທບພະບຸດ ແລ້ວບໍວ່າ ກະກຸທະເທບພະບຸດກ່າວເລື້ອງໃດເລື້ອງໜຶ່ງ ເລື້ອງນັ້ນທັງໝົດຍ່ອມເປັນຈິງຕາມນັ້ນ ບໍ່ເປັນແນວອື່ນ"

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ "ຂ້າພຣະອົງກຳນົດຮູ້ຈິດຂອງກະກຸທະເທບພະບຸດ ດ້ວຍຈິດແລ້ວເຊື່ອວ່າ ກະກຸທະເທບພະບຸດກ່າວເລື້ອງໃດເລື້ອງໜຶ່ງ ເລື້ອງນັ້ນທັງໝົດຍ່ອມເປັນຈິງ ຕາມນັ້ນ ບໍ່ເປັນແນວອື່ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມກຄັນລານະ ທ່ານຈົ່ງຮັກສາວາຈານັ້ນ ໂມກຄັນລານະທ່ານຈົ່ງຮັກສາວາຈານັ້ນ ບັດນີ້ໂມຄະບຸຣຸດນັ້ນຈະເປີດເຜີຍຕົນດ້ວຍຕົນເອງອອກມາ"

# ປັນຈະສັດຖຸກະຖາ

## ວ່າດ້ວຍພຣະສາດສະດາ ໕ ຈຳພວກ

[໑໑໔] ໂມກຄັນລານະ ສາດສະດາ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ ຄື

໑. ສາດສະດາບາງທ່ານໃນໂລກນີ້ມີສີນບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກ ຮູ້ຈັກເຂົາແນວນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີສີນບໍ່ບໍລິສຸດ ແຕ່ປະຕິຍານ ວ່າເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ໂມກຄັນລານະ ພວກສາວົກຍ່ອມຮັກສາສາດສະດາແນວນີ້ໂດຍສີນ ແລະສາດສະດາແນວນີ້ກໍຫວັງ ການຮັກສາໂດຍສີນຈາກພວກສາວົກ

໒. ສາດສະດາບາງທ່ານໃນໂລກນີ້ມີອາຊີບບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີອາຊີບບໍລິສຸດ ອາຊີບຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແນວນີ້ວ່າ "ສາດສະດາທ່ານນີ້ມີອາຊີບບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີອາຊີບບໍລິສຸດ ອາຊີບຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ໂມກຄັນລານະ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍອາຊີບ ສາດສະດາແບບນີ້ກໍຫວັງການຮັກສາໂດຍອາຊີບຈາກພວກສາວົກ

໓. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີທຳມະເທດສະໜາບໍລິສຸດ ທຳມະເທດສະໜາຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດ ແຕ່ປະຕິຍານວ່າທຳມະເທດສະໜາຂອງຕົນບໍລິສຸດ ທຳມະເທດສະໜາຂອງຕົນບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ໂມກຄັນລານະ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍທຳມະເທດສະໜາ ສາດສະດາແບບນີ້ກໍຫວັງການຮັກສາໂດຍທຳມະເທດສະໜາຈາກພວກສາວົກ

໔. ສາດສະດາບາງທ່ານໃນໂລກນີ້ມີເວີຍຍາກະຣະນະບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີເວີຍຍາກະຣະນະບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາ ດ້ວຍກຳນັ້ນ"

ໂມກຄັນລານະ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍເວີຍຍາກະຣະນະ ສາດສະດາແບບນີ້ກໍຫວັງການຮັກສາໂດຍເວີຍຍາກະຣະນະຈາກພວກສາວົກ

໕. ສາດສະດາບາງທ່ານໃນໂລກນີ້ມີຍານທັດສະນະບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີຍານທັດສະນະບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງ

ບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄໍາເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກໍາໃດໄວ້ ກໍຈະຜາກົດໂຕອອກມາ ດ້ວຍກໍານັ້ນ"

ໂມກຄັນລານະ ພວກສາວົກຍ່ອມຮັກສາສາດສະດາແນວນີ້ໄວ້ໂດຍຍານທັດສະນະ ແລະສາດສະດາແນວນີ້ ກໍຫວັງການຮັກສາໂດຍຍານທັດສະນະຈາກພວກສາວົກ

ໂມກຄັນລານະ ສາດສະດາ ໕ ຈໍາພວກນີ້ແລ ມີຜາກົດຢູ່ໃນໂລກ

ໂມກຄັນລານະ ເຮົາມີສີນບໍລິສຸດ ຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຍ່ອມບໍ່ຮັກສາເຮົາໂດຍສີນ ແລະເຮົາກໍ ບໍ່ຫວັງການຮັກສາໂດຍສີນຈາກພວກສາວົກ

ໂມກຄັນລານະ ເຮົາມີອາຊີບບໍລິສຸດ ຯລຯ ເຮົາມີທໍາມະເທດສະໜາບໍລິສຸດ ຯລຯ ເຮົາມີເວີຍຍາກະຣະນະບໍລິສຸດ ຯລຯ ເຮົາມີຍານທັດສະນະບໍລິສຸດ ຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຍ່ອມບໍ່ຮັກສາເຮົາໄວ້ໂດຍຍານທັດສະນະ ແລະເຮົາກໍບໍ່ຫວັງການຮັກສາໂດຍຍານທັດສະນະຈາກພວກສາວົກ"

## ເລື້ອງລາບສັກກາຣະຍ່ອມຂ້າຄົນຊົ່ວ

[໓໓໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນໂກສໍາພີຕາມພຣະອັດທະຍາໄສແລ້ວສະເດັດ ຈາຣິກໄປໂດຍລໍາດັບ ຈົນເຖິງນະຄອນຣາດຊະຄຶ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ໃນນະຄອນຣາດຊະຄຶນັ້ນ

ຄັ້ງນັ້ນ ພິກຂຸຈໍານວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ພິກຂຸເຫຼົ່ານັ້ນຜູ້ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອະຊາດສັດຕູກຸມານສະເດັດໂດຍຣາດຊະລົດ ໕໐໐ ຄັນ ໄປບໍາລຸງພຣະເທວະທັດ ທັງເວລາຄໍ່າເວລາເຊົ້າ ແລະຮັບສັ່ງໃຫ້ນໍາພັດຕາຫານທີ່ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຍິນດີລາບສັກກາຣະແລະຄວາມສັນເສີນຂອງເທວະທັດເລີຍ ແມ່ນອະຊາດສັດຕູກຸມານຈັກສະເດັດໂດຍຣາດຊະລົດ ໕໐໐ ຄັນ ໄປບໍາລຸງເທວະທັດ ທັງເວລາຄໍ່າເວລາເຊົ້າ ແລະຈັກຮັບສັ່ງໃຫ້ນໍາພັດຕາຫານທີ່

ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດພຽງໃດ ເທວະທັດກໍເພິ່ງຫວັງຄວາມເສື່ອມໃນກຸສົນທຳທັງຫຼາຍພຽງນັ້ນ ຫວັງຄວາມຈະເລີນບໍ່ໄດ້໑

ພິກຂຸທັງຫຼາຍ ອະຊາດສັດຕູກຸມານຈະໄປບຳລຸງພຣະເທວະທັດໃນເວລາຄໍ່າເວລາເຊົ້າພ້ອມດ້ວຍຣາດຊະລົດ ໕໐໐ ຄັນ ຈະນຳພັດຕາຫານ ໕໐໐ ຊຸດໄປໄດ້ຈັກຈັກມື້ ພິກຂຸທັງຫຼາຍຄວາມເສື່ອມຈາກກຸສົນທຳເປັນອັນເທວະທັດຫວັງໄດ້ ຄວາມຈະເລີນຢ່າໄດ້ຫວັງ ລາບສັກກາຣະແລະສັນເສີນເກີດຂຶ້ນແກ່ເທວະທັດກໍເພື່ອຂ້າຕົນເອງ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຄວາມເສື່ອມ ຄືຄົນເອົາບີໝີທາທີ່ດັງໝານ້ອຍຮ້າຍ ໝານ້ອຍກໍຈະເພີ່ມຄວາມຮ້າຍຍິ່ງຂຶ້ນ

ພິກຂຸທັງຫຼາຍ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຂ້າຕົນເອງ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຄວາມເສື່ອມ ຄືຕົ້ນກ້ວຍຖອກປີເພື່ອຂ້າຕົນເອງ ຖອກປີເພື່ອຄວາມເສື່ອມ

ພິກຂຸທັງຫຼາຍ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຂ້າຕົນເອງ

ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຄວາມເສື່ອມ ຄືຕົ້ນໄຜ່ຕົກຂີເພື່ອຂ້າຕົນເອງ ຕົກຂີເພື່ອຄວາມເສື່ອມ

ພິກຂຸທັງຫຼາຍ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຂ້າຕົນເອງ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຄວາມເສື່ອມ ຄືຕົ້ນອໍ້ຕົກຂີ ເພື່ອຂ້າຕົນເອງ ຕົກຂີເພື່ອຄວາມເສື່ອມ

ພິກຂຸທັງຫຼາຍ ລາບສັກກາຣະແລະການສັນເສີນເກີດຂຶ້ນແກ່ເທວະທັດເພື່ອຂ້າຕົນເອງ ລາບສັກກາຣະແລະຄວາມສັນເສີນເກີດຂຶ້ນແກ່ເທວະທັດເພື່ອຄວາມເສື່ອມ ຄືແມ່ມ້າອັດສະດອນຖືພາເພື່ອຂ້າຕົນເອງ ຖືພາເພື່ອຄວາມເສື່ອມ

ພຣະຜູ້ມີພຣະພາກເຈົ້າເມື່ອຕັດດັ່ງນີ້ແລ້ວ ຈຶ່ງຕັດພຣະຄາຖາປະພັນວ່າ

"ໝາກກ້ວຍຂ້າຕົ້ນກ້ວຍ ຂີໄຜ່ຂ້າຕົ້ນໄຜ່
ດອກອໍ້ຂ້າຕົ້ນອໍ້ ລູກມ້າອັດສະດອນຂ້າແມ່ມ້າ ສັນໃດ
ສັກກາຣະຍ່ອມຂ້າຄົນຊົ່ວ ສັນນັ້ນ"

**ປະຖົມພານະວານ ຈົບ**

# ໘. ທຸຕິຍະພານະວານ

## ປະກາສະນີຍະກຳ

### ວ່າດ້ວຍສິ່ງເຮັດປະກາສະນີຍະກຳແກ່ພຣະເທວະທັດ

[໓໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຮ້ອມລ້ອມດ້ວຍບໍລິສັດໝູ່ໃຫຍ່ ປະທັບນັ່ງສະແດງ ທຳແກ່ບໍລິສັດເຊິ່ງມີພຣະຣາຊາປະທັບຢູ່ນຳ ຄັ້ງນັ້ນ ພຣະເທວະທັດລຸກຈາກອາສະນະຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເວລານີ້ພຣະຜູ້ມີພຣະພາກເຈົ້າຊົງພຣະຊະຣາພາບ ເປັນຜູ້ເຖົ້າສູງອາຍຸ ລ່ວງການຜ່ານໄວໄປໂດຍລຳດັບແລ້ວ ຂ້ານ້ອຍ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປ່ອຍວາງ ປະກອບຕົນຢູ່ໃນທຳສຳລັບຢູ່ເປັນສຸກໃນປັດຈຸບັນ ໂຜດມອບພິກຂຸສົງໃຫ້ຂ້າພຣະອົງເທີ້ນ ຂ້າພຣະອົງຈະປົກຄອງພິກຂຸສົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເລີຍເທວະທັດ ທ່ານຢ່າພໍໃຈທີ່ຈະປົກຄອງພິກຂຸສົງເລີຍ"

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ພຣະເທວະທັດກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເວລານີ້ພຣະຜູ້ມີພຣະພາກເຈົ້າຊົງພຣະຊະຣາພາບ ເປັນຜູ້ເຖົ້າສູງອາຍຸ ລ່ວງການຜ່ານໄວໄປໂດຍລຳດັບແລ້ວ ຂ້ານ້ອຍ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປ່ອຍວາງ ປະກອບຕົນຢູ່ໃນທຳສຳລັບຢູ່ເປັນສຸກໃນປັດຈຸບັນ ໂຜດມອບພິກຂຸສົງໃຫ້ຂ້າພຣະອົງເທີ້ນ ຂ້າພຣະອົງຈະປົກຄອງພິກຂຸສົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເທວະທັດ ແມ່ນແຕ່ສາຣີບຸດແລະໂມກຄັນລານະເຮົາຍັງບໍ່ມອບ ພິກຂຸສົງໃຫ້ ເຮົາຈະມອບພິກຂຸສົງໃຫ້ທ່ານເຊິ່ງເປັນຄົນຕ່ຳຊ້າ ບໍຣິໂພກປັດໄຈຄືກືນນ້ຳລາຍໄດ້ແນວໃດນໍ"

ຂະນະນັ້ນ ພຣະເທວະທັດຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງຮຸກຮານເຮົາທ່າມກາງບໍລິສັດທີ່ມີ ພຣະຣາຊາປະທັບຢູ່ນຳ ດ້ວຍພຣະດຳຣັດວ່າເປັນຜູ້ບໍຣິໂພກປັດໄຈຄືກືນນ້ຳລາຍ ຊົງຍ້ອງຍໍແຕ່ພຣະສາຣີບຸດແລະພຣະໂມກຄັນລານະ" ຈຶ່ງໂກດ ບໍ່ພໍໃຈ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວກະທຳປະທັກຂິນຈາກໄປ ນີ້ເປັນການຜູກອາຄາດຄັ້ງທຳອິດໃນພຣະຜູ້ມີພຣະພາກເຈົ້າ ຂອງພຣະເທວະທັດ

## ປະກາສະນິຍະກຳ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງເຮັດປະກາສະນິຍະກຳໃນນະຄອນຣາດຊະຄືແກ່ເທວະທັດໂດຍປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼືພຣະສົງເປັນແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ

## ວິທີເຮັດປະກາສະນິຍະກຳແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງເຮັດປະກາສະນິຍະກຳແນວນີ້ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດ ໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໓໔໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງເຮັດປະກາສະນິຍະກຳໃນນະຄອນຣາດຊະຄືແກ່ພຣະເທວະທັດ ໂດຍປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງເຮັດປະກາສະນິຍະກຳໃນນະຄອນຣາດຊະຄືແກ່ພຣະ ເທວະທັດ ໂດຍປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າ ສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ ທ່ານອົງໃດເຫັນດ້ວຍກັບການເຮັດປະກາສະນິຍະກຳແກ່ພຣະເທວະທັດ ໂດຍປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າ ສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດ ບໍ່ເຫັນດ້ວຍທ່ານອົງນັ້ນ ເພິ່ງທັກທ້ວງ

ສົງເຮັດປະກາສະນິຍະກຳໃນນະຄອນຣາດຊະຄືແກ່ພຣະເທວະທັດແລ້ວ ໂດຍປະກາດວ່າເມື່ອ ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ

ເພິ່ງເຫັນວ່າ ສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໓໓໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບທ່ານພຣະສາຣີບຸດວ່າ "ສາຣີບຸດ ຖ້າເປັນແນວນັ້ນ ທ່ານຈົ່ງເຮັດປະກາສະນີຍະກຳໃນນະຄອນຣາດຊະຄຶແກ່ເທວະທັດເທີ້ນ"

ພຣະສາຣີບຸດຂາບທູນວ່າ "ແຕ່ກ່ອນຂ້າພຣະອົງກ່າວຍ້ອງຍໍພຣະເທວະທັດໃນນະຄອນ ຣາດຊະຄຶວ່າ ໂຄທິບຸດມີລິດຫຼາຍ ໂຄທິບຸດມີອານຸພາບຫຼາຍ ຂ້າພຣະອົງຈະເຮັດປະກາສະນີຍະ ກຳໃນນະຄອນຣາດຊະຄຶແກ່ພຣະເທວະທັດແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ທ່ານກ່າວຍ້ອງຍໍເທວະທັດຕາມຄວາມເປັນຈິງ ບໍ່ແມ່ນບໍວ່າໂຄທິບຸດມີລິດຫຼາຍ ໂຄທິບຸດມີອານຸພາບຫຼາຍ"

ທ່ານພຣະສາຣີບຸດຂາບທູນວ່າ "ຈິງແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ທ່ານກໍຈົ່ງເຮັດປະກາສະນີຍະກຳໃນນະຄອນ ຣາດຊະຄຶແກ່ເທວະທັດ ຕາມຄວາມເປັນຈິງແນວນັ້ນຄືກັນ" ທ່ານພຣະສາຣີບຸດທູນຮັບສະໜ ອງພຣະພຸດທະດຳຣັດແລ້ວ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວ ນັ້ນ ສົງຈົ່ງແຕ່ງຕັ້ງສາຣີບຸດເພື່ອເຮັດປະກາສະນີຍະກຳໃນນະຄອນຣາດຊະຄຶແກ່ເທວະທັດ ໂດຍ ປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະ ເທວະທັດປະພຶດສິ່ງໃດດ້ວຍກາຍ ວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼືພຣະສົງເປັນ ແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ເບື້ອງຕົ້ນ ເພິ່ງຂໍຮ້ອງພຣະສາຣີບຸດ ບັດແລ້ວພິກ ຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງທ່ານພຣະສາຣີບຸດ ເພື່ອເຮັດປະກາສະນີຍະກຳໃນນະຄອນຣາດຊະຄຶແກ່ພຣະເທວະທັດ ໂດຍປະກາດວ່າ "ແຕ່ກ່ອນ ພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງ ໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າ ສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ" ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພຣະສາຣີບຸດເພື່ອເຮັດປະກາສະນີຍະກຳໃນນະຄອນຣາດຊະຄືແກ່ພຣະເທວະທັດ ໂດຍປະກາດວ່າ "ແຕ່ກ່ອນພຶດຕິກຳຂອງພຣະເທວະທັດ ເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ" ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພຣະສາຣີບຸດເພື່ອເຮັດປະກາສະນີຍະກຳໃນນະຄອນຣາດຊະຄືແກ່ພຣະເທວະທັດ ໂດຍປະກາດວ່າ "ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງ ເປັນແນວນັ້ນ ເພິ່ງເຫັນວ່າ ສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ" ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງທ່ານພຣະສາຣີບຸດແລ້ວ ເພື່ອເຮັດປະກາສະນີຍະກຳໃນນະຄອນຣາດຊະຄືແກ່ພຣະເທວະທັດ ໂດຍປະກາດວ່າ "ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດ" ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ເມື່ອພຣະສາຣີບຸດໄດ້ຮັບແຕ່ງຕັ້ງແລ້ວຈຶ່ງເຂົ້າໄປນະຄອນຣາດຊະຄື ພ້ອມດ້ວຍພິກຂຸຫຼາຍອົງ ເຮັດປະກາສະນີຍະກຳພຣະເທວະທັດ ໂດຍປະກາດວ່າ "ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ເພິ່ງເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່າສິ່ງນັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດເອງ"

ຄົນທັງຫຼາຍໃນນະຄອນຣາດຊະຄືທີ່ບໍ່ສັດທາ ບໍ່ເຫຼື້ອມໃສ ມີຄວາມຮູ້ບໍ່ດີ ກ່າວແນວນີ້ ວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ເປັນຄົນຣິດສະຫຍາ ຣິດສະຫຍາລາບສັກກາຣະຂອງພຣະເທວະທັດ" ສ່ວນພວກທີ່ມີສັດທາ ມີຄວາມເຫຼື້ອມໃສ ມີຄວາມຮູ້ດີ ກໍກ່າວແນວນີ້ວ່າ "ເລື້ອງນີ້ຄົງບໍ່ແມ່ນເລື້ອງເລັກໜ້ອຍ ຍ້ອນພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ເຮັດປະກາສະນີຍະກຳໃນນະຄອນຣາດຊະຄື ແກ່ພຣະເທວະທັດ"

# ອະຊາຕະສັດຕຸກຸມາຣະວັດຖຸ

## ວ່າດ້ວຍເລື້ອງອະຊາດສັດຕູກຸມານ

[໓໓໙] ຄັ້ງນັ້ນ ພຣະເທວະທັດເຂົ້າໄປຫາອະຊາດສັດຕູກຸມານຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ກ່າວກັບອະຊາດສັດຕູກຸມານດັ່ງນີ້ວ່າ "ພຣະກຸມານ ແຕ່ກ່ອນມະນຸດທັງຫຼາຍມີອາຍຸຍືນ ບັດນີ້ ມີອາຍຸສັ້ນ ການທີ່ພຣະອົງຈະເພິ່ງສິ້ນພະຊົນເມື່ອຍັງເປັນພຣະກຸມານ ເປັນເລື້ອງທີເປັນໄປໄດ້ ຖ້າເປັນແນວນັ້ນ ພຣະອົງຈົ່ງປົງພະຊົນພຣະຊະນົກແລ້ວເປັນພຣະຣາຊາ ອາດຕະມາກໍຈະປົງພຣະຊົນພຣະຜູ້ມີພຣະພາກເຈົ້າແລ້ວເປັນພຣະພຸດທະເຈົ້າ"

ຄັ້ງນັ້ນ ອະຊາດສັດຕູກຸມານດຳຣິວ່າ "ພຣະຜູ້ເປັນເຈົ້າເທວະທັດມີລິດຫຼາຍ ມີອານຸພາບຫຼາຍ ພຣະຜູ້ເປັນເຈົ້າເທວະທັດຈະຕ້ອງຮູ້" ມື້ໜຶ່ງໄດ້ເນັບກຼິດແນບພຣະເພົາ ຊົງຢ້ານ ຫວາດຫວັ່ນ ສະດຸ້ງ ຕົກພຣະຫະໄທ ສະເດັດເຂົ້າໄປໃນພະຣາດຊະວັງຢ່າງຟັ່ງຟ້າວເວລາກາງເວັນ

ພວກມະຫາອຳໝາດທີ່ເຝົ້າປະຕູພະຣາດຊະວັງແນມເຫັນອະຊາດສັດຕູກຸມານມີອາການຢ້ານ ຫວາດ ຫວັ່ນ ສະດຸ້ງ ຕົກພຣະຫະໄທສະເດັດເຂົ້າໄປໃນຣາດຊະວັງຢ່າງຟັ່ງຟ້າວເວລາກາງເວັນຈຶ່ງໄດ້ຈັບໄວ້ ມະຫາອຳໝາດເຫຼົ່ານັ້ນກວດພົ້ກຼິດເນັບຢູ່ທີ່ພຣະເພົາ ຈຶ່ງທູນຖາມອະຊາດສັດຕູກຸມານດັ່ງນີ້ວ່າ "ພຣະອົງມີປະສົງຈະເຮັດຫຍັງ ຂ້ານ້ອຍ"

ອະຊາດສັດຕູກຸມານຕັດຕອບວ່າ "ເຮົາປະສົງຈະປົງພະຊົນພຣະຊະນົກ"
ພວກມະຫາອຳໝາດທູນຖາມວ່າ "ພຣະອົງຖືກໃຜຍຸຍົງ"
ອະຊາດສັດຕູກຸມານຕັດຕອບວ່າ "ພຣະຜູ້ເປັນເຈົ້າເທວະທັດ"

ມະຫາອຳໝາດລາງພວກລົງມະຕິແນວນີ້ວ່າ "ຄວນປົງພະຊົນພຣະກຸມານ ຂ້າພຣະເທວະທັດ ແລະຂ້າພິກຂຸທັງໝົດ"

ມະຫາອຳໝາດລາງພວກລົງມະຕິແນວນີ້ວ່າ "ບໍ່ຄວນຂ້າພິກຂຸທັງຫຼາຍ ຍ້ອນພວກພິກຂຸບໍ່ມີຄວາມຜິດອັນໃດ ຄວນປົງພະຊົນພຣະກຸມານແລະຂ້າພຣະເທວະທັດທໍ່ນັ້ນ"

ມະຫາອຳໝາດລາງພວກລົງມະຕິແນວນີ້ວ່າ "ບໍ່ຄວນປົງພະຊົນພຣະກຸມານ ແລະບໍ່ຄວນຂ້າພຣະເທວະທັດ ທັງບໍ່ຄວນຂ້າພິກຂຸທັງຫຼາຍ ແຕ່ຄວນນຳເລື້ອງນີ້ໄປຊາບທູນພຣະຣາຊາ ໃຫ້ຊົງຊາບ ພວກເຮົາຈະປະຕິບັດຕາມທີ່ພຣະຣາຊາຮັບສັ່ງ"

ລຳດັບນັ້ນ ມະຫາອຳມາດເຫຼົ່ານັ້ນຄຸມອະຊາດສັດຕູກຸມານໄປເຝົ້າພຣະເຈົ້າພິມພິສານຈອມທັບ ມະຄົດຣັດຮອດບ່ອນຢູ່ ເມື່ອເຖິງແລ້ວຂາບທູນເລື້ອງນັ້ນໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດຊົງຊາບ

ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດຖາມວ່າ "ທ່ານທັງຫຼາຍ ພວກມະຫາອຳມາດລົງມະຕິກັນແນວໃດ"

ພວກມະຫາອຳມາດຂາບທູນວ່າ "ພຣະອົງຜູ້ຈະເລີນ ມະຫາອຳມາດລາງພວກລົງມະຕິແນວນີ້ວ່າ ຄວນປົງພະຊົນພຣະກຸມານ ຂ້າພຣະເທວະທັດ ແລະຂ້າພິກຂຸທັງໝົດ ມະຫາອຳມາດລາງພວກລົງມະຕິແນວນີ້ວ່າ ບໍ່ຄວນຂ້າພິກຂຸທັງຫຼາຍ ຍ້ອນພວກພິກຂຸບໍ່ມີຄວາມຜິດອັນໃດ ຄວນປົງພະຊົນພຣະກຸມານແລະຂ້າພຣະເທວະທັດທໍ່ນັ້ນ ມະຫາອຳມາດລາງພວກລົງມະຕິແນວນີ້ວ່າ ບໍ່ຄວນປົງພະຊົນພຣະກຸມານ ແລະບໍ່ຄວນຂ້າພຣະເທວະທັດ ທັງບໍ່ຄວນຂ້າພິກຂຸທັງຫຼາຍ ແຕ່ຄວນນຳເລື້ອງນີ້ໄປຂາບທູນພຣະຣາຊາໃຫ້ຊົງຮັບຮູ້ ພວກເຮົາຈະປະຕິບັດຕາມທີ່ພຣະຣາຊາຮັບສັ່ງ"

ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດວ່າ "ທ່ານທັງຫຼາຍ ພຣະພຸດທະ ພຣະທຳ ຫຼື ພຣະສົງຈະກ່ຽວອັນໃດ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ເຮັດປະກາສະນີຍະກຳໃນນະຄອນຣາດຊະຄຶ ແກ່ພຣະເທວະທັດໂດຍປະກາດວ່າ ແຕ່ກ່ອນພຶດຕິກຳຂອງພຣະເທວະທັດເປັນແນວໜຶ່ງ ເວລານີ້ ເປັນອີກແນວໜຶ່ງ ພຣະເທວະທັດປະພຶດສິ່ງໃດດ້ວຍກາຍວາຈາ ບໍ່ຄວນເຫັນວ່າພຣະພຸດທະ ພຣະທຳ ຫຼື ພຣະສົງເປັນແນວນັ້ນ ເພິ່ງເຫັນວ່ານັ້ນເປັນເລື້ອງສ່ວນໂຕຂອງພຣະເທວະທັດກ່ອນແລ້ວບໍ່ແມ່ນບໍ"

ບັນດາອຳມາດເຫຼົ່ານັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຮັບສັ່ງໃຫ້ຖອດຍົດພວກທີ່ລົງມະຕິແນວນີ້ວ່າ "ຄວນປົງພະຊົນພຣະກຸມານ ຂ້າພຣະເທວະທັດ ແລະຂ້າພິກຂຸທັງໝົດ" ຊົງລຸດຕຳແໜ່ງພວກທີ່ລົງມະຕິແນວນີ້ວ່າ "ບໍ່ຄວນຂ້າພິກຂຸທັງຫຼາຍ ຍ້ອນພວກພິກຂຸບໍ່ມີຄວາມຜິດອັນໃດ ຄວນປົງພະຊົນພຣະກຸມານແລະຂ້າພຣະເທວະທັດທໍ່ນັ້ນ" ຊົງເລື່ອນຕຳແໜ່ງພວກທີ່ລົງມະຕິແນວນີ້ວ່າ "ບໍ່ຄວນປົງພະຊົນພຣະກຸມານ ບໍ່ຄວນຂ້າພຣະເທວະທັດ ທັງບໍ່ຄວນຂ້າພິກຂຸທັງຫຼາຍ ແຕ່ຄວນນຳເລື້ອງນີ້ໄປຂາບທູນພຣະຣາຊາໃຫ້ຊົງຮັບຮູ້ ພວກເຮົາຈະປະຕິບັດຕາມທີ່ພຣະຣາຊາຮັບສັ່ງ"

ຕໍ່ມາ ພຣະເຈົ້າພິມພິສານຈອມທັບມະຄົດຣັດຮັບສັ່ງຖາມອະຊາດສັດຕູກຸມານວ່າ "ລູກຕ້ອງ ການຂ້າພໍ່ເພື່ອອັນໃດ"

ອະຊາດສັດຕູກຸມານຂາບທູນວ່າ "ຂ້າພຣະອົງຕ້ອງການຣາດຊະສົມບັດ ຂ້ານ້ອຍ"

ພຣະເຈົ້າພິມພິສານຈອມທັບມະຄິດຣັດຕັດວ່າ "ຖ້າລູກຕ້ອງການຣາດຊະສົມບັດ ຣາດຊະສົມບັດ ກໍເປັນຂອງລູກ" ແລ້ວຊົງມອບຣາດຊະສົມບັດແກ່ອະຊາດສັດຕູກຸມານ

## ອະພິມາຣະເປສະນະ

## ວ່າດ້ວຍພຣະເທວະທັດສົ່ງຄົນໄປລອບປົງພະຊົນພຣະຜູ້ມີພຣະພາກເຈົ້າ

[໓໔໐] ຄັ້ງນັ້ນ ພຣະເທວະທັດເຂົ້າໄປເຝົ້າອະຊາດສັດຕູກຸມານຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຖວາຍພຣະພອນອະຊາດສັດຕູກຸມານດັ່ງນີ້ວ່າ "ຂໍຖວາຍພຣະພອນ ຂໍພຣະອົງໂຜດສັ່ງໃຊ້ຣາດຊະບຸຣຸດປົງພະຊົນພຣະສະມະນະໂຄດົມ"

ຄັ້ງນັ້ນ ອະຊາດສັດຕູກຸມານສັ່ງຣາດຊະບຸຣຸດທັງຫຼາຍວ່າ "ພວກທ່ານຈົ່ງປະຕິບັດຕາມຄໍາສັ່ງ ຂອງພຣະຜູ້ເປັນເຈົ້າເທວະທັດ"

ຕໍ່ມາ ພຣະເທວະທັດສັ່ງບຸຣຸດຄົນໜຶ່ງວ່າ "ພຣະສະມະນະໂຄດົມປະທັບຢູ່ທີ່ນັ້ນ ທ່ານຈົ່ງໄປປົງພະຊົນພຣະອົງແລ້ວກັບມາທາງນີ້" ແລ້ວຊຸ່ມບຸຣຸດໄວ້ແຄມທາງ ໒ ຄົນດ້ວຍສັ່ງວ່າ "ພວກທ່ານຈົ່ງຂ້າຄົນທີ່ຍ່າງມາທາງນີ້ພຽງລໍາພັງ ແລ້ວມາທາງນີ້" ຊຸ່ມບຸຣຸດໄວ້ແຄມທາງອີກ ໔ ຄົນດ້ວຍສັ່ງວ່າ "ພວກທ່ານຈົ່ງຂ້າຄົນ ໒ ຄົນທີ່ຍ່າງມາທາງນີ້ ແລ້ວມາທາງນີ້" ຊຸ່ມບຸຣຸດໄວ້ແຄມທາງອີກ ໘ ຄົນດ້ວຍສັ່ງວ່າ "ພວກທ່ານຈົ່ງຂ້າຄົນ ໔ ຄົນທີ່ຍ່າງມາທາງນີ້ແລ້ວ ມາທາງນີ້" ຊຸ່ມບຸຣຸດໄວ້ແຄມທາງອີກ ໑໖ ຄົນດ້ວຍສັ່ງວ່າ "ພວກທ່ານຈົ່ງຂ້າຄົນ ໘ ຄົນທີ່ຍ່າງ ມາທາງນີ້ ແລ້ວມາທາງນີ້"

## ພຣະຜູ້ມີພຣະພາກເຈົ້າຊົງສະແດງອະນຸປຸບພີກະຖາ

ຄັ້ງນັ້ນ ບຸຣຸດຄົນໜຶ່ງນັ້ນຖືດາບແລະໂລ່ພາຍທະນູ ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຢືນຢ້ານ ຫວາດຫວັ່ນ ສະດຸ້ງ ຕົກໃຈຈົນໂຕແຂງບໍ່ຫ່າງຈາກ ພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບບຸຣຸດນັ້ນຜູ້ຢືນຢ້ານ ຫວາດຫວັ່ນ ສະດຸ້ງ ຕົກໃຈ ຈົນໂຕແຂງວ່າ "ມາເທີ້ນ ທ່ານຢ່າຢ້ານເລີຍ"

ລໍາດັບນັ້ນ ບຸຣຸດນັ້ນວາງດາບແລະໂລ່ປົດທະນູວາງໄວ້ ສ່ວນຂ້າງໜຶ່ງແລ້ວເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າ ແລ້ວຊົບຫົວແທບພຣະບາດທັງສອງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ກະທໍາຄວາມຜິດ ຍ້ອນຄວາມໂງ່ຈ້າເບົາປັນຍາ ທີ່ມີ

ຈິດຄິດປະທຸດສະຮ້າຍ ຄິດຈະປົງພະຊົນ ຈຶ່ງເຂົ້າມາທີ່ນີ້ ຂໍພຣະອົງໂຜດ ປະທານອະໄພໂທດແກ່ຂ້າພຣະອົງ ເພື່ອສັງລວມຕໍ່ໄປເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າຈັ່ງຊັ້ນ ການທີ່ທ່ານໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າ ເບົາປັນຍາ ທີ່ມີຈິດຄິດປະທຸດສະຮ້າຍຄິດຈະປົງພະຊົນຈຶ່ງເຂົ້າມາທີ່ນີ້ ຍ້ອນເຫດທີ່ທ່ານເຫັນຄວາມຜິດເປັນຄວາມຜິດແລ້ວແກ້ໄຂໃຫ້ຖືກຕ້ອງ ຂໍ້ນັ້ນເຮົາຍອມຮັບ ຍ້ອນການທີ່ບຸກຄົນເຫັນຄວາມຜິດເປັນຄວາມຜິດແລ້ວແກ້ໄຂໃຫ້ຖືກຕ້ອງແລະສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນວິໄນ ຂອງພຣະອະຣິຍະ" ຈາກນັ້ນຊົງສະແດງອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ)
໓. ສັກຄະກະຖາ (ເລື້ອງສະຫວັນ)
໔. ກາມາທີນະວະກະຖາ (ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ)
໕. ເນກຂຳມານິສັງສະກະຖາ (ເລື້ອງອານິສົງແຫ່ງການອອກຈາກກາມ)ແກ່ບຸຣຸດນັ້ນ

ເມື່ອຊົງຮູ້ວ່າບຸຣຸດນັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ບຸຣຸດນັ້ນ ບ່ອນນັ້ນແລວ່າ "ສິ່ງໃດ ສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນ ທຳມະດາ" ປຽບຄືຜ້າຂາວສະອາດປາສະຈາກມົນທິນຄວນໄດ້ຮັບນ້ຳຍ້ອມໄດ້ເປັນຢ່າງດີ

ເມື່ອບຸຣຸດນັ້ນໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນ ມ່ວນຫຼາຍພຣະຜູ້ມີພຣະພາກເຈົ້າປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບບຸຣຸດນັ້ນດັ່ງນີ້ວ່າ "ທ່ານຢ່າໄປທາງນັ້ນ ຈົ່ງໄປທາງນີ້" ແລ້ວສົ່ງເຂົາໄປທາງອື່ນ

ຄັ້ງນັ້ນ ບຸຣຸດອີກ ໔ ຄົນນັ້ນເປີກສາກັນວ່າ "ເປັນຫຍັງນໍບຸຣຸດຄົນໜຶ່ງນັ້ນຈຶ່ງມາຊ້າ" ແລ້ວຍ່າງສວນທາງໄປ ໄດ້ພົບພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ຂ່ວງໄມ້ແຫ່ງໜຶ່ງ ບັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະນຸປຸບພິກະຖາແກ່ເຂົາທັງສອງ ຯລຯ

ຄັ້ງນັ້ນ ບຸຣຸດ ໔ ຄົນນັ້ນເຫັນທຳແລ້ວ ຯລຯ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງ ຊັດເຈນມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳພວກຂ້າພຣະອົງວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບບຸຣຸດເຫຼົ່ານັ້ນດັ່ງນີ້ວ່າ "ພວກທ່ານຢ່າໄປທາງນັ້ນ ຈົ່ງໄປທາງນີ້" ແລ້ວຊົງສົ່ງພວກເຂົາໄປທາງອື່ນ

ຄັ້ງນັ້ນ ບຸຣຸດອີກ ໔ ຄົນ ຯລຯ ຄັ້ງນັ້ນ ບຸຣຸດອີກ ໙ ຄົນ ຯລຯ

ຄັ້ງນັ້ນ ບຸຣຸດອີກ ໑໙ ຄົນເປີກສາກັນວ່າ "ເປັນຫຍັງນໍ ບຸຣຸດ ໙ ຄົນນັ້ນຈຶ່ງມາຊ້າ" ແລ້ວຍ່າງສວນທາງໄປ ໄດ້ພົບພຣະຜູ້ມີພຣະພາກເຈົ້າປະທັບນັ່ງ ຂ່ວງໄມ້ແຫ່ງໜຶ່ງ ບັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະນຸປຸບພິກະຖາແກ່ບຸຣຸດເຫຼົ່ານັ້ນ ຄືຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ) ຯລຯ

ຄັ້ງນັ້ນ ບຸຣຸດ ໑໙ ຄົນນັ້ນເຫັນທຳແລ້ວ ຯລຯ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງ ພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນ ມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳພວກຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບບຸຣຸດເຫຼົ່ານັ້ນດັ່ງນີ້ວ່າ "ພວກທ່ານຢ່າໄປທາງນັ້ນ ຈົ່ງໄປທາງນີ້" ແລ້ວຊົງສົ່ງພວກເຂົາໄປທາງອື່ນ

ຕໍ່ມາ ບຸຣຸດຄົນໜຶ່ງນັ້ນເຂົ້າໄປຫາພຣະເທວະທັດຮອດບ່ອນຢູ່ ແລ້ວໄດ້ກ່າວກັບພຣະເທວະທັດດັ່ງນີ້ວ່າ "ຂ້ານ້ອຍບໍ່ສາມາດປົງພະຊົນພຣະຜູ້ມີພຣະພາກເຈົ້າໄດ້ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ"

ພຣະເທວະທັດຕອບວ່າ "ຢ່າເລີຍທ່ານ ທ່ານຢ່າປົງພະຊົນພຣະສະມະນະໂຄດົມເລີຍ ເຮົາຈະລົງມືປົງພະຊົນພຣະສະມະນະໂຄດົມເອງ"

# ໂລຫິຕຸບປາທະກະກຳ

## ວ່າດ້ວຍພຣະເທວະທັດທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ

[໓໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈົງກົມຢູ່ ທີ່ຮົ່ມເງົາພູຄິດຊະກູດ ຄັ້ງນັ້ນ ພຣະເທວະທັດຂຶ້ນພູຄິດຊະກູດກິ້ງສິລາກ້ອນໃຫຍ່ ດ້ວຍໝາຍໃຈວ່າ "ເຮົາຈະປົງພະຊົນພຣະຜູ້ມີພຣະພາກເຈົ້າດ້ວຍກ້ອນສິລານີ້" ຍອດພູ ໒ ຂ້າງມາບັນຈົບກັນຮັບສິລາກ້ອນນັ້ນໄວ້ ເກັດສິລາຟົ້ງຈາກກ້ອນສິລານັ້ນໄປກະທົບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ຈົນພຣະໂລຫິດຫໍ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງແຫງນພຣະພັກ ໄດ້ຕັດກັບພຣະເທວະທັດດັ່ງນີ້ວ່າ "ໂມຄະບຸຣຸດ ທ່ານສັ່ງສົມສິ່ງທີ່ບໍ່ແມ່ນບຸນໄວ້ຫຼາຍທີ່ມີຈິດຄິດຮ້າຍ ຄິດຂ້າ ກະທຳໂລຫິດຂອງຕະຖາຄົດໃຫ້ຫໍ້" ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຂໍ້ທີ່ເທວະທັດຜູ້ມີຈິດຄິດຮ້າຍ ຄິດຂ້າ ກະທຳໂລຫິດຂອງຕະຖາຄົດໃຫ້ຫໍ້ ນີ້ເປັນອະນັນຕະຣິຍະກຳຂໍ້ທີ ໑ ທີ່ເທວະທັດສັ່ງສົມໄວ້"

ພິກຂຸທັງຫຼາຍໄດ້ສະດັບຂ່າວວ່າ "ພຣະເທວະທັດວາງແຜນປົງພະຊົນພຣະຜູ້ມີພຣະພາກເຈົ້າ" ຈຶ່ງພາກັນຍ່າງຈົງກົມຢູ່ຮອບ ໆ ວິຫານຂອງພຣະຜູ້ມີພຣະພາກເຈົ້າ ກະທຳການສາທະຍາຍສຽງດັງອຶກກະທຶກກຶກກ້ອງເພື່ອອາຮັກຂາປ້ອງກັນຄຸ້ມຄອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຊົງສະດັບສຽງສາທະຍາຍສຽງດັງອຶກກະທຶກກຶກກ້ອງ ຈຶ່ງຮັບສັ່ງຖາມທ່ານພຣະອານົນວ່າ "ອານົນ ຍ້ອນເຫດໃດ ສຽງສາທະຍາຍນັ້ນຈຶ່ງດັງອຶກກະທຶກກຶກກ້ອງ" ທ່ານພຣະອານົນຈຶ່ງຂາບທູນວ່າ "ພຣະອົງຜູ້ຈະເລີນ ພິກຂຸທັງຫຼາຍໄດ້ສະດັບຂ່າວວ່າ ພຣະເທວະທັດ ວາງແຜນປົງພະຊົນພຣະຜູ້ມີພຣະພາກເຈົ້າ ຈຶ່ງພາກັນຍ່າງຈົງກົມຢູ່ຮອບ ໆ ວິຫານຂອງພຣະຜູ້ມີພຣະພາກເຈົ້າກະທຳການສາທະຍາຍສຽງດັງອຶກກະທຶກກຶກກ້ອງເພື່ອອາຮັກຂາປ້ອງກັນຄຸ້ມຄອງ ພຣະຜູ້ມີພຣະພາກເຈົ້າ ສຽງສາທະຍາຍນັ້ນຈຶ່ງດັງອຶກກະທຶກກຶກກ້ອງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງໄປບອກພິກຂຸເຫຼົ່ານັ້ນວ່າ ພຣະສາດສະດາຮັບສັ່ງຫາພວກທ່ານ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ເມື່ອ ແລ້ວແຈ້ງໃຫ້ຮູ້ວ່າ "ພຣະສາດສະດາຮັບສັ່ງຫາທ່ານທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄຳຂອງ

ທ່ານ ພຣະອານົນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ພິກຂຸທັງຫຼາຍ ບໍ່ແມ່ນຖານະ ບໍ່ແມ່ນ ໂອກາດ ທີ່ຈະປົງຊີວິດຕະຖາຄົດດ້ວຍຄວາມພະຍາຍາມຂອງຜູ້ອື່ນ ພຣະຕະຖາຄົດທັງຫຼາຍຍ່ອມບໍ່ ປະຣິນິບພານດ້ວຍຄວາມພະຍາຍາມຂອງຜູ້ອື່ນ"

## ເລື້ອງສາດສະດາ ໕ ຈຳພວກ

### ພິກຂຸທັງຫຼາຍ ສາດສະດາ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ ຄື

໑. ສາດສະດາບາງທ່ານໃນໂລກນີ້ມີສີນບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກ ຮູ້ຈັກເຂົາແນວນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີສີນບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດ ບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ພິກຂຸທັງຫຼາຍ ພວກສາວົກຍ່ອມຮັກສາສາດສະດາແນວນີ້ໂດຍສີນ ແລະສາດສະດາແນວນີ້ກໍຫວັງ ການຮັກສາໂດຍສີນຈາກພວກສາວົກ

໒. ສາດສະດາບາງທ່ານໃນໂລກນີ້ມີອາຊີບບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີອາຊີບບໍລິສຸດ ອາຊີບຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແນວນີ້ວ່າ "ສາດສະດາທ່ານນີ້ມີອາຊີບບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີອາຊີບບໍລິສຸດ ອາຊີບຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະ ປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ພິກຂຸທັງຫຼາຍ ພວກສາວົກຍ່ອມຮັກສາສາດສະດາແນວນີ້ໄວ້ໂດຍອາຊີບ ສາດສະດາແນວນີ້ກໍຫວັງ ການຮັກສາໂດຍອາຊີບຈາກພວກສາວົກ

໓. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີທຳມະເທດສະໜາບໍລິສຸດ ທຳມະເທດສະໜາຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດ ແຕ່ປະຕິຍານວ່າທຳມະເທດສະໜາຂອງຕົນບໍລິສຸດ ທຳມະເທດສະໜາຂອງຕົນບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍ ພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ພິກຂຸທັງຫຼາຍ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍທຳມະເທດສະໜາ ສາດສະດາແບບນີ້ກໍຫວັງການຮັກສາໂດຍທຳມະເທດສະໜາຈາກພວກສາວົກ

໔. ສາດສະດາບາງທ່ານໃນໂລກນີ້ມີເວີຍຍາກະຣະນະບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີເວີຍຍາກະຣະນະບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີ ເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ທ່ານເຮັດກຳໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກຳນັ້ນ"

ພິກຂຸທັງຫຼາຍ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍເວີຍຍາກະຣະນະ ສາດສະດາແບບນີ້ກໍຫວັງການຮັກສາໂດຍເວີຍຍາກະຣະນະຈາກພວກສາວົກ

໕. ສາດສະດາບາງທ່ານໃນໂລກນີ້ມີຍານທັດສະນະບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີຍານທັດສະນະບໍ່ບໍລິສຸດ ແຕ່ປະຕິຍານວ່າເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລຶຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ອັນໜຶ່ງ ສາດສະດານັ້ນຍ້ອງຍໍພວກເຮົາດ້ວຍຈີ

ວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດ ບໍຣິຂານ ທ່ານເຮັດກໍາໃດໄວ້ ກໍຈະຜາກົດໂຕອອກມາດ້ວຍກໍານັ້ນ"

ພິກຂຸທັງຫຼາຍ ພວກສາວົກຍ່ອມຮັກສາສາດສະດາແບບນີ້ໄວ້ໂດຍຍານທັດສະນະ ແລະສາດສະດາແບບນີ້ກໍຫວັງການຮັກສາໂດຍຍານທັດສະນະຈາກພວກສາວົກ

ພິກຂຸທັງຫຼາຍ ສາດສະດາ ໕ ຈໍາພວກນີ້ແລ ມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ເຮົາມີສີນບໍລິສຸດ ຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຍ່ອມບໍ່ຮັກສາເຮົາໂດຍສີນ ແລະເຮົາກໍ ບໍ່ຫວັງການຮັກສາໂດຍສີນຈາກພວກສາວົກ

ພິກຂຸທັງຫຼາຍ ເຮົາມີອາຊີບບໍລິສຸດ ຯລຯ ເຮົາມີທໍາມະເທດສະໜາບໍລິສຸດ ຯລຯ ເຮົາມີເວີຍຍາກະຣະນະບໍລິສຸດ ຯລຯ ເຮົາມີຍານທັດສະນະບໍລິສຸດ ຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ" ພວກສາວົກຍ່ອມບໍ່ຮັກສາເຮົາໄວ້ໂດຍຍານທັດສະນະ ແລະເຮົາກໍບໍ່ຫວັງການຮັກສາໂດຍຍານທັດສະນະຈາກພວກສາວົກ"

ພິກຂຸທັງຫຼາຍ ບໍ່ແມ່ນຖານະ ບໍ່ແມ່ນໂອກາດ ທີ່ຈະປົງຊີວິດຕະຖາຄົດດ້ວຍຄວາມພະຍາຍາມ ຂອງຜູ້ອື່ນ ພຣະຕະຖາຄົດທັງຫຼາຍຍ່ອມບໍ່ປະຣິນິບພານດ້ວຍຄວາມພະຍາຍາມຂອງຜູ້ອື່ນ ພິກຂຸທັງຫຼາຍ ພວກທ່ານຈົ່ງໄປຢູ່ຕາມທີ່ເດີມ ພຣະຕະຖາຄົດທັງຫຼາຍເປັນຜູ້ທີ່ບໍ່ຕ້ອງອາຣັກຂາ"

## ນາລາຄີຣິເປສະນະ

## ວ່າດ້ວຍພຣະເທວະທັດປ່ອຍຊ້າງນາລາຄີຣີ

[໓໔໘] ສະໄໝນັ້ນ ໃນນະຄອນຣາດຊະຄຶມີຊ້າງຊື່ນາລາຄີຣີດຸຮ້າຍ ມັກຂ້າຄົນ ຄັ້ງນັ້ນພຣະເທວະທັດເຂົ້າໄປໃນນະຄອນຣາດຊະຄຶແລ້ວໄປທີ່ໂຮງຊ້າງ ໄດ້ກ່າວກັບພວກນາຍຄວານຊ້າງດັ່ງນີ້ ວ່າ "ພວກເຮົາເປັນພຣະຍາດຂອງພຣະຣາຊາ ສາມາດຈະແຕ່ງຕັ້ງຜູ້ຢູ່ໃນຕໍາແໜ່ງຕໍ່າໄວ້ໃນຕໍາແໜ່ງສູງ ສາມາດເພີ່ມເບ້ຍລ້ຽງແດ່ ເງີນເດືອນແດ່ ທ່ານທັງຫຼາຍ ເອົາແບບນີ້ເວລາພຣະສະມະນະໂຄດົມສະເດັດມາທາງຮ່ອມນີ້ ພວກທ່ານຈົ່ງປ່ອຍຊ້າງນາລາຄີຣີນີ້ເຂົ້າໄປ

"

## ພວກນາຍຄວານຊ້າງຮັບຄຳພຣະເທວະທັດແລ້ວ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນ ສະເດັດ ເຂົ້າໄປໃນນະຄອນຣາດຊະຄຶພ້ອມພິກຂຸຫຼາຍອົງ ສະເດັດດຳເນີນເຖິງຮ່ອມນັ້ນ ພວກຄວານຊ້າງ ແນມເຫັນພຣະຜູ້ມີພຣະພາກເຈົ້າສະເດັດດຳເນີນເຖິງຮ່ອມນັ້ນ ບັດແລ້ວຈຶ່ງປ່ອຍຊ້າງນາລາຄີຣີເຂົ້າໄປ

ຊ້າງນາລາຄີຣີແນມເຫັນພຣະຜູ້ມີພຣະພາກເຈົ້າສະເດັດດຳເນີນມາແຕ່ໄກ ບັດແລ້ວຈຶ່ງຊູງວງ ຫູຊັນ ຫາງຊີ້ ແລ່ນກົງໄປທີ່ພຣະຜູ້ມີພຣະພາກເຈົ້າ ພິກຂຸເຫຼົ່ານັ້ນເຫັນຊ້າງນາລາຄີຣີແລ່ນມາແຕ່ໄກ ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຊ້າງນາລາຄີຣີນີ້ດຸຮ້າຍຫຍາບຄາຍຫຼາຍ ມັກຂ້າຄົນ ກຳລັງກົງມາທາງຮ່ອມນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະເດັດກັບເທີ້ນ ຂ້ານ້ອຍຂໍພຣະສຸດຄົດເຈົ້າໂຜດສະເດັດກັບເທີ້ນ”

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ມາເທີ້ນ ພວກທ່ານຢ່າຢ້ານໄປເລີຍ ພິກຂຸ ທັງຫຼາຍ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ຈະປົງຊີວິດຕະຖາຄົດດ້ວຍຄວາມພະຍາຍາມຂອງຜູ້ອື່ນ ພິກຂຸທັງຫຼາຍ ພຣະຕະຖາຄົດທັງຫຼາຍຈະບໍ່ປະຣິນິບພານດ້ວຍຄວາມພະຍາຍາມຂອງຜູ້ອື່ນ”

ແມ່ນເທື່ອທີ ໔ ພິກຂຸເຫຼົ່ານັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ພິກຂຸເຫຼົ່ານັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຊ້າງນາລາຄີຣີນີ້ ດຸຮ້າຍຫຍາບຄາຍຫຼາຍ ມັກຂ້າຄົນ ກຳລັງກົງມາທາງຮ່ອມນີ້ ຂໍພຣະຜູ້ມີພຣະພາກເຈົ້າສະເດັດກັບເທີ້ນ ຂ້ານ້ອຍ ຂໍພຣະສຸດຄົດເຈົ້າໂຜດສະເດັດກັບເທີ້ນ”

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ມາເທີ້ນ ພວກທ່ານຢ່າຢ້ານໄປເລີຍ ພິກຂຸ ທັງຫຼາຍ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ຈະປົງຊີວິດຕະຖາຄົດດ້ວຍຄວາມພະຍາຍາມຂອງຜູ້ອື່ນ ພິກຂຸທັງຫຼາຍ ພຣະຕະຖາຄົດທັງຫຼາຍຈະບໍ່ປະຣິນິບພານດ້ວຍຄວາມພະຍາຍາມຂອງຜູ້ອື່ນ”

ເວລານັ້ນ ຄົນທັງຫຼາຍພາກັນຂຶ້ນໄປເທິງຜາສາດແດ່ ເຮືອນໂລ້ນແດ່ ເທິງຫຼັງຄາແດ່ ໃນກຸ່ມຄົນພວກນັ້ນ ບັນດາຄົນທີ່ບໍ່ສັດທາ ບໍ່ເຫຼື້ອມໃສ ມີຄວາມຮູ້ບໍ່ດີ ກ່າວແນວນີ້ວ່າ “ພວກເຮົາເອີຍ ພຣະມະຫາສະມະນະໂຄດົມຮູບງາມຈະຖືກຊ້າງຂ້າ” ສ່ວນບັນດາຄົນທີ່ມີສັດທາ ເຫຼື້ອມໃສ ເປັນບັນດິດ ມີຄວາມຮູ້ ກ່າວແນວນີ້ວ່າ “ພວກເຮົາເອີຍ ບໍດົ່ງວຖ້າເບິ່ງສົງຄາມລະຫວ່າງ ພຣະພຸດທະເຈົ້າກັບຊ້າງ”

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງແຜ່ເມດຕາຈິດໄປທີ່ຊ້າງນາລາຄີຣີ ລຳດັບນັ້ນ ຊ້າງນາລາຄີຣີໄດ້ສຳຜັດກະແສເມດຕາຈິດຂອງພຣະຜູ້ມີພຣະພາກເຈົ້າ ຈຶ່ງລຸດງວງລົງແລ້ວເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າ ຢືນຢູ່ກົງພຣະພັກ ພຣະຜູ້ມີພຣະພາກເຈົ້າຊົງຍົກພຣະຫັດຂວາລູບກະພອງຊ້າງນາລາຄີຣີ ພ້ອມຕັດສອນຊ້າງນາລາຄີຣີດ້ວຍພຣະຄາຖາທັງຫຼາຍວ່າ

ກຸນຊອນເອີຍ ເຈົ້າຢ່າຄິດເຂົ້າມາທຳຮ້າຍພຣະພຸດທະເຈົ້າ
ກຸນຊອນເອີຍ ການຄິດເຂົ້າມາທຳຮ້າຍພຣະພຸດທະເຈົ້າທັງຫຼາຍ
ເປັນເຫດແຫ່ງຄວາມທຸກ
ກຸນຊອນເອີຍ ຜູ້ຂ້າພຣະພຸດທະເຈົ້າ
ຈາກຊາດນີ້ໄປສູ່ຊາດໜ້າຈະບໍ່ມີສຸກຄະຕິພູມເລີຍ
ເຈົ້າຢ່າມົວເມົາ ຢ່າຜະໝາດ
ຍ້ອນຄົນຜູ້ຜະໝາດແລ້ວຍ່ອມບໍ່ໄປສຸກຄະຕິ
ເຈົ້ານີ້ແລ້ວຈັກກະທຳເຫດໃຫ້ເຈົ້າເດີນທາງໄປສຸກຄະຕິ

ທັນໃດນັ້ນ ຊ້າງນາລາຄີຣີເອົາງວງສູບລະອອງທຸລີທີ່ໃກ້ພຣະບາດຂອງພຣະຜູ້ມີພຣະພາກເຈົ້າ

ແລ້ວພົ່ນລົງເທິງກະໝ່ອມ (ຂອງຕົນ) ຫຍໍ້ໂຕຖອຍອອກໄປຊົ່ວໄລຍະເຫັນພຣະອົງ ລຳດັບນັ້ນ ຊ້າງນາລາຄີຣີໄດ້ກັບໄປທີ່ໂຮງຊ້າງຢືນຢູ່ທີ່ເດີມ ກໍຊ້າງນາລາຄີຣີໄດ້ຮັບການເຝິກແລ້ວແນວນັ້ນ

ສະໄໝນັ້ນ ຄົນທັງຫຼາຍພາກັນຂັບຮ້ອງຄາຖານີ້ວ່າ

ຄົນເຝິກຊ້າງແລະຄົນເຝິກມ້າລາງພວກ
ມີໄມ້ຄ້ອນ ຂໍແລະແສ້ຈຶ່ງຈະເຝິກໄດ້
ພຣະພຸດທະເຈົ້າຜູ້ປະສົບພຣະຄຸນຍິ່ງໃຫຍ່
ບໍ່ຕ້ອງໃຊ້ໄມ້ຄ້ອນ ບໍ່ຕ້ອງໃຊ້ອາວຸດຊົງເຝິກຊ້າງໄດ້ເລີຍ[១]

ຄົນທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະເທວະທັດນີ້ເປັນຄົນບາບ ເປັນຄົນບໍ່ມີບຸນ ຍ້ອນໄດ້ພະຍາຍາມປົງພະຊົນພຣະສະມະນະໂຄດົມຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້" ລາບສັກກາຣະຂອງພຣະເທວະທັດຈຶ່ງເສື່ອມສິ້ນໄປ ສ່ວນລາບສັກກາຣະ ຂອງພຣະຜູ້ມີພຣະພາກເຈົ້າກັບຈະເລີນຍິ່ງຂຶ້ນ

# ປັນຈະວັດຖຸຍາຈະນະກາ

## ວ່າດ້ວຍພຣະເທວະທັດຂາບທູນຂໍວັດຖຸ ໕ ປະການ

[໓໔໓] ສະໄໝນັ້ນ ພຣະເທວະທັດພ້ອມກັບບໍລິສັດເສື່ອມລາບສັກກາຣະ ຈຶ່ງພາກັນອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນນໍ ພັດຕາຫານທີ່ດີໃຜຈະບໍ່ພໍໃຈ ພັດຕາຫານແຊບໃຜຈະບໍ່ມັກນໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດ ພ້ອມກັບບໍລິສັດຈຶ່ງທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ ຯລຯ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພຣະເທວະທັດວ່າ "ເທວະທັດ ໄດ້ຂ່າວວ່າ ທ່ານພ້ອມກັບບໍລິສັດທ່ຽວອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນແມ່ນບໍ?"

ພຣະເທວະທັດທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດໂພຊະນະທີ່ຄົນ ໓ ຄົນ ເພື່ອບໍຣິໂພກໃນຕະກູນທັງຫຼາຍແກ່ພິກຂຸທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໓ ປະການ ຄື

໑. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໒. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ
໓. ເພື່ອອະນຸເຄາະຕະກູນ

ດ້ວຍຫວັງວ່າ ພິກຂຸທີ່ປາຖະໜາຊົ່ວຢ່າອາໄສພັກພວກເຮັດສິ່ງໃຫ້ແຕກກັນ (ພິກຂຸ) ສັນຄະນະໂພຊະນະ ເພື່ອປັບອາບັດຕາມທຳ"[១]

ຄັ້ງນັ້ນ ພຣະເທວະທັດເຂົ້າໄປຫາພຣະໂກກາລິກະ ພຣະກະຕະໂມຣະກະຕິດສະກະ ພຣະຂັນທະເທວີບຸດ ພຣະສະມຸດທັດຕະ ຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ກ່າວກັບທ່ານເຫຼົ່ານັ້ນ

ດັ່ງນີ້ວ່າ "ມາເທີ້ນ ທ່ານທັງຫຼາຍ ພວກເຮົາຈະທຳລາຍສົງ ທຳລາຍຈັກຂອງພຣະສະມະນະໂຄດົມ"

ເມື່ອພຣະເທວະທັດກ່າວແນວນີ້ ພຣະໂກກາລິກະໄດ້ກ່າວກັບພຣະເທວະທັດດັ່ງນີ້ວ່າ

"ທ່ານພຣະສະມະນະໂຄດົມມີລິດທານຸພາບຫຼາຍ ພວກເຮົາຈະທຳລາຍສົງ ທຳລາຍຈັກຂອງພຣະສະມະນະໂຄດົມ ໄດ້ແນວໃດ"

ພຣະເທວະທັດກ່າວວ່າ "ມາເທີ້ນທ່ານທັງຫຼາຍ ພວກເຮົາຈະເຂົ້າໄປເຝົ້າພຣະສະມະນະໂຄດົມ ແລ້ວທູນຂໍວັດຖຸ ໕ ປະການວ່າ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມ ມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ຂ້າພຣະອົງຂໍປະທານອະໂຣກາດດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາແລະຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ"

ພຣະສະມະນະໂຄດົມຈະບໍ່ຊົງອະນຸຍາດວັດຖຸ ໕ ປະການນີ້ແນ່ ພວກເຮົາຈະໃຊ້ວັດຖຸ ໕ ປະການນີ້ຊັກຊວນໃຫ້ປະຊາຊົນເຊື່ອຖື" ທ່ານເຫຼົ່ານັ້ນເປີກສາກັນວ່າ "ພວກເຮົາສາມາດທີ່ຈະໃຊ້ວັດຖຸ ໕ ປະການເຫຼົ່ານັ້ນທຳລາຍສົງ ທຳລາຍຈັກຂອງພຣະສະມະນະໂຄດົມໄດ້ ຍ້ອນຍັງມີພວກມະນຸດທີ່ເຫຼື້ອມໃສໃນການປະຕິບັດແບບເຄັ່ງຄັດ"

ຄັ້ງນັ້ນ ພຣະເທວະທັດພ້ອມກັບບໍລິສັດໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ເມື່ອ ເຖິງແລ້ວໄດ້ຖວາຍອະພິວາດແລ້ວນັ່ງລົງທີ່ສົມຄວນ ຂາບທູນວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະ ພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການ

ໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຂ້າພຣະອົງ ຂໍປະທານອະໂຣກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນ ມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາແລະຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍເທວະທັດ ພິກຂຸອົງໃດປາຖະໜາກໍຈົ່ງຢູ່ປ່າເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຢູ່ໃນບໍລິເວນບ້ານເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງທ່ຽວບິນທະບາດເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຍິນດີກິດນິມົນເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຖືຜ້າບັງສຸກຸນເທີ້ນ ພິກຂຸອົງໃດປາຖະໜາກໍຈົ່ງຍິນດີຜ້າຄະຫະບໍດີເທີ້ນ ເທວະທັດ ເຮົາອະນຸຍາດຖືເສນາສະນະຕາມເຫງົ້າໄມ້ ໘ ເດືອນທໍ່ນັ້ນ ເຮົາອະນຸຍາດປາແລະຊີ້ນທີ່ບໍລິສຸດດ້ວຍອາການ ໓ ຢ່າງ ຄື

໑. ບໍ່ໄດ້ເຫັນ
໒. ບໍ່ໄດ້ຍິນ
໓. ບໍ່ໄດ້ນຶກສົງໄສ"

ຄັ້ງນັ້ນ ພຣະເທວະທັດລ່າເລີງດີໃຈວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດວັດຖຸ ໕ ປະການ ເຫຼົ່ານີ້" ພ້ອມກັບບໍລິສັດລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

## ພຣະເທວະທັດໂຄສະນາວັດຖຸ ໕ ປະການ

ສະໄໝນັ້ນ ພຣະເທວະທັດພ້ອມກັບບໍລິສັດເຂົ້າໄປໃນເມືອງຣາດຊະຄຶ ໃຊ້ວັດຖຸ ໕ ປະການ ຊັກຊວນໃຫ້ປະຊາຊົນເຊື່ອຖືດ້ວຍກ່າວວ່າ "ພວກເຮົາເຂົ້າໄປເຝົ້າພຣະສະມະນະໂຄດົມທູນຂໍວັດຖຸ ໕ ຢ່າງນີ້ວ່າ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ

ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ວັດຖຸ ໕ ປະການເຫຼົ່ານີ້ ກໍເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນ ໂດຍປະການຕ່າງ ໆ ຂ້າພຣະອົງຂໍປະທານອະໂຣກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນ ມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາແລະຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ

ແຕ່ພຣະສະມະນະໂຄດົມບໍ່ຊົງອະນຸຍາດວັດຖຸ ໕ ປະການເຫຼົ່ານັ້ນ ພວກເຮົາຈິ່ງສະມາທານປະພຶດຕາມວັດຖຸ ໕ ປະການເຫຼົ່ານີ້ເທີ້ນ"

ບັນດາປະຊາຊົນເຫຼົ່ານັ້ນ ພວກທີ່ບໍ່ສັດທາ ບໍ່ເຫຼື້ອມໃສ ມີຄວາມຮູ້ບໍ່ດີ ກ່າວວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ປະພຶດກຳຈັດກິເລດ ປະພຶດເຄັ່ງຄັດ ສ່ວນພຣະສະມະນະໂຄດົມມັກຫຼາຍ ດຳຣິເພື່ອຄວາມມັກຫຼາຍ"

ສ່ວນພວກມີສັດທາ ເຫຼື້ອມໃສ ເປັນບັນດິດ ສະຫຼຽວສະຫຼາດ ມີຄວາມຮູ້ດີ ກໍຕຳໜິປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກຂອງພຣະຜູ້ມີພຣະພາກເຈົ້ານໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກ ນ້ອຍ ຯລຯ ຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະເທວະທັດຈຶ່ງພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກນໍ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພຣະເທວະທັດວ່າ "ເທວະທັດ ໄດ້ຂ່າວວ່າ ທ່ານພຽນພະຍາຍາມເພື່ອທຳລາຍສົງ ເພື່ອທຳລາຍຈັກແມ່ນບໍ?"

ພຣະເທວະທັດທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ຢ່າເລີຍເທວະທັດ ທ່ານຢ່າພໍໃຈການທຳລາຍສົງ ຍ້ອນການທຳລາຍສົງ ມີໂທດໜັກ ຜູ້ໃດທຳລາຍສົງທີ່ພ້ອມພຽງກັນ ຜູ້ນັ້ນຈະປະສົບໂທດດົນ ຕະຫຼອດກັບ ຖືກໄຟໄໝ້ໃນນະຮົກດົນຕະຫຼອດກັບ ສ່ວນຜູ້ໃດເຮັດສົງຜູ້ແຕກກັນແລ້ວໃຫ້ ພ້ອມພຽງກັນ ຍ່ອມປະສົບບຸນອັນປະເສີດ ຍ່ອມບັນເທີງໃນສະຫວັນຕະຫຼອດກັບ ຢ່າເລີຍເທວະ ທັດ ທ່ານຢ່າພໍໃຈການທຳລາຍສົງ ຍ້ອນການທຳລາຍສົງ ມີໂທດໜັກ"

ຕໍ່ມາເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນ ທະບາດໃນນະຄອນຣາດຊະຄຶ ພຣະເທວະທັດພົບທ່ານພຣະອານົນກຳລັງທ່ຽວບິນທະບາດຈຶ່ງເຂົ້າ ໄປຫາ ແລ້ວໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ເຮົາຈະ ເຮັດອຸໂປສົດ ຈະເຮັດສັງຄະກຳ ແຍກຈາກພຣະຜູ້ມີພຣະພາກເຈົ້າ ແຍກຈາກພິກຂຸສົງ"

ເມື່ອພຣະອານົນທ່ຽວບິນທະບາດສັນສຳເລັດແລ້ວ ກັບຈາກບິນທະບາດ ຫຼັງຈາກສັນພັດ ຕາຫານແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂໍປະທານ ອະໄຣກາດ ໃນເວລາເຊົ້າ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະ ບາດໃນນະຄອນຣາດຊະຄຶ ພຣະເທວະທັດພົບຂ້າພຣະອົງກຳລັງທ່ຽວບິນທະບາດຈຶ່ງເຂົ້າມາຫາ ຂ້າພຣະອົງ ແລ້ວໄດ້ກ່າວດັ່ງນີ້ວ່າ ທ່ານອານົນ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ເຮົາຈະເຮັດອຸໂປສົດ ຈະ ເຮັດສັງຄະກຳ ແຍກຈາກພຣະຜູ້ມີພຣະພາກເຈົ້າ ແຍກຈາກພິກຂຸສົງ ມື້ນີ້ພຣະເທວະທັດຈະ ທຳລາຍສົງ ຂ້ານ້ອຍ"

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊາບເລື້ອງນັ້ນ ຈຶ່ງຊົງເປ່ງພຣະອຸທານໃນເວລານັ້ນວ່າ

"ກຳດີ ຄົນດີເຮັດໄດ້ງ່າຍ
ກຳດີ ຄົນຊົ່ວເຮັດໄດ້ຍາກ
ກຳຊົ່ວ ຄົນຊົ່ວເຮັດໄດ້ງ່າຍ
ກຳຊົ່ວ ພຣະອະຣິຍະທັງຫຼາຍເຮັດໄດ້ຍາກ"

**ທຸຕິຍະພານະວານ ຈົບ**

# ໓. ຕະຕິຍະພານະວານ

## ສັງຄະເພທະກະຖາ

## ວ່າດ້ວຍການທຳລາຍສົງ

## ພຣະເທວະທັດຊັກຊວນພຣະວັດຊີບຸດ ໕໐໐ ອົງເຂົ້າເປັນພັກພວກ

[໓໔໔] ເມື່ອເຖິງມື້ອຸໂປສົດ ພຣະເທວະທັດລຸກຈາກອາສະນະ ປະກາດໃຫ້ພິກຂຸຈັບສະຫຼາກ ດ້ວຍກ່າວວ່າ "ທ່ານທັງຫຼາຍ ພວກເຮົາເຂົ້າໄປເຝົ້າພຣະສະມະນະໂຄດົມ ທູນຂໍວັດຖຸ ໕ ປະການ ວ່າ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ໆລໆ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ພຣະອົງຜູ້ຈະເລີນ ວັດຖຸ ໕ ປະການເຫຼົ່ານີ້ກໍເປັນໄປເພື່ອຄວາມມັກໜ້ອຍ ໆລໆ ການຜາຣົບຄວາມພຽນ ພຣະອົງຜູ້ຈະເລີນ ຂ້າພຣະອົງ ຂໍປະທານອະໂຣກາດ ດັ່ງນີ້

໑. ພິກຂຸທັງຫຼາຍຄວນຢູ່ປ່າຕະຫຼອດຊີວິດ ພິກຂຸອົງໃດເຂົ້າບ້ານ ພິກຂຸອົງນັ້ນ ມີໂທດ
໒. ພິກຂຸທັງຫຼາຍຄວນທ່ຽວບິນທະບາດຕະຫຼອດຊີວິດ ພິກຂຸອົງໃດຍິນດີກິດນິມົນ ພິກຂຸອົງນັ້ນມີໂທດ
໓. ພິກຂຸທັງຫຼາຍຄວນຖືຜ້າບັງສຸກຸນຕະຫຼອດຊີວິດ ພິກຂຸອົງໃດຍິນດີຜ້າຄະຫະບໍດີ ພິກຂຸອົງນັ້ນມີໂທດ
໔. ພິກຂຸທັງຫຼາຍຄວນຢູ່ເຫງົ້າໄມ້ຕະຫຼອດຊີວິດ ພິກຂຸອົງໃດອາໄສທີ່ມຸງທີ່ບັງ ພິກຂຸອົງນັ້ນມີໂທດ
໕. ພິກຂຸທັງຫຼາຍບໍ່ຄວນສັນປາແລະຊີ້ນຕະຫຼອດຊີວິດ ພິກຂຸອົງໃດສັນປາແລະຊີ້ນ ພິກຂຸອົງນັ້ນມີໂທດ

ແຕ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດວັດຖຸ ໕ ປະການເຫຼົ່ານັ້ນ ກໍພວກເຮົາຈັ່ງສະມາທານປະພຶດຕາມວັດຖຸ ໕ ປະການເຫຼົ່ານັ້ນ ທ່ານອົງໃດເຫັນດ້ວຍກັບວັດຖຸ ໕ ປະການເຫຼົ່ານີ້ ທ່ານອົງນັ້ນຈົ່ງຈັບສະຫຼາກ"

ສະໄໝນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີປະມານ ໕໐໐ ອົງ ເປັນພຣະບວດໃໝ່ ບໍ່ຮອບຮູ້ພຣະທຳວິໄນ ພິກຂຸເຫຼົ່ານັ້ນຈັບສະຫຼາກຍ້ອນເຂົ້າໃຈວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້

ເປັນສັດຖຸສາດ" ຄັ້ງນັ້ນແລ ພຣະເທວະທັດທຳລາຍສົງແລ້ວພາພິກຂຸປະມານ ໕໐໐ ອົງ ເດີນທາງໄປທາງຄະຍາສີສະປະເທດ

ຕໍ່ມາ ພຣະສາຣີບຸດແລະພຣະໂມກຄັນລານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ບັດແລ້ວທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະເທວະທັດທຳລາຍສົງ ພາພິກຂຸປະມານ ໕໐໐ ອົງເດີນທາງໄປທາງຄະຍາສີສະປະເທດແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດໂມກຄັນລານະ ພວກທ່ານຈະຕ້ອງມີຄວາມກະລຸນາ ພິກຂຸຜູ້ບວດໃໝ່ເຫຼົ່ານັ້ນແດ່ບໍ່ແມ່ນບໍ ພວກທ່ານຈົ່ງໄປເທີ້ນກ່ອນທີ່ພິກຂຸເຫຼົ່ານັ້ນຈະເສື່ອມເສຍ"

ພິກຂຸຜູ້ເຖຣະທັງສອງທູນຮັບສະໜອງພຣະພຸດທະດຳຣັດແລ້ວ ລຸກຈາກອາສະນະຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວເດີນທາງໄປຄະຍາສີສະປະເທດ

## ພິກຂຸອົງໜຶ່ງເຂົ້າໃຈຜິດ

ຂະນະນັ້ນ ພິກຂຸອົງໜຶ່ງຢືນຮ້ອງໄຫ້ຢູ່ບໍ່ໄກພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸນັ້ນດັ່ງນີ້ວ່າ "ພິກຂຸ ທ່ານຮ້ອງໄຫ້ເຮັດຫຍັງ"

ພິກຂຸນັ້ນ ຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະສາຣີບຸດກັບພຣະໂມກຄັນລານະຜູ້ເປັນ ພຣະອັກຄະຣະສາວົກຂອງພຣະອົງໄປສຳນັກພຣະເທວະທັດ ພໍໃຈຄຳສອນຂອງພຣະເທວະທັດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ບໍ່ແມ່ນຖານະ ບໍ່ແມ່ນໂອກາດ ທີ່ສາຣີບຸດແລະໂມກຄັນລານະ ຈະພໍໃຈຄຳສອນຂອງເທວະທັດ ສາຣີບຸດ ແລະໂມກຄັນລານະນັ້ນໄປເພື່ອແນະນຳພິກຂຸທັງຫຼາຍ ໃຫ້ເຂົ້າໃຈ"

## ພຣະອັກຄະຣະສາວົກພາພິກຂຸ ໕໐໐ ອົງກັບ

[໓໔໕] ຄັ້ງນັ້ນ ພຣະເທວະທັດມີບໍລິສັດໝູ່ໃຫຍ່ອ້ອມລ້ອມນັ່ງສະແດງທຳຢູ່ ແນມເຫັນພຣະສາຣີບຸດແລະພຣະໂມກຄັນລານະມາແຕ່ໄກ ບັດແລ້ວຈຶ່ງກ່າວກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພວກທ່ານເຫັນບໍ ທຳອັນເຮົາກ່າວດີແລ້ວເຖິງຂະໜາດພຣະສາຣີບຸດ ແລະພຣະໂມກຄັນລານະອັກຄະຣະສາວົກຂອງພຣະສະມະນະໂຄດົມຍັງພາກັນມາຫາເຮົາ ພໍໃຈທຳຂອງເຮົາ"

ເມື່ອພຣະເທວະທັດກ່າວແນວນີ້ ພຣະໂກກາລິກະໄດ້ກ່າວດັ່ງນີ້ວ່າ "ທ່ານເທວະທັດ ທ່ານຢ່າຟ້າວວາງໃຈພຣະສາຣີບຸດແລະພຣະໂມກຄັນລານະ ພຣະສາຣີບຸດແລະພຣະໂມກຄັນລານະມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ"

ພຣະເທວະທັດກ່າວວ່າ "ທ່ານຢ່າຄິດເຊັ່ນນັ້ນ ພຣະສາຣີບຸດແລະພຣະໂມກຄັນລານະນັ້ນມາດີ ຍ້ອນພໍໃຈທຳຂອງເຮົາ"

ບັດນັ້ນ ພຣະເທວະທັດເຊື້ອເຊີນທ່ານພຣະສາຣີບຸດດ້ວຍອາສະນະເຄິ່ງໜຶ່ງວ່າ "ມາເທີ້ນທ່ານ ສາຣີບຸດ ນິມົນທ່ານນັ່ງເທິງອາສະນະນີ້"

ທ່ານພຣະສາຣີບຸດຫ້າມວ່າ "ຢ່າເລີຍທ່ານ" ແລ້ວຖືເອົາອາສະນະໜຶ່ງນັ່ງທີ່ສົມຄວນ ແມ່ນທ່ານພຣະມະຫາໂມກຄັນລານະກໍຖືເອົາອາສະນະໜຶ່ງນັ່ງທີ່ສົມຄວນ

ຄັ້ງນັ້ນ ພຣະເທວະທັດຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາສິ້ນຣາຕີໄປຫຼວງຫຼາຍ ໄດ້ເຊື້ອເຊີນທ່ານພຣະສາຣີບຸດວ່າ "ທ່ານສາຣີບຸດ ພິກຂຸສົງຍັງບໍ່ງ່ວງ ທ່ານສາຣີບຸດທຳມີກະຖາຂອງທ່ານພິກຂຸທັງຫຼາຍເຂົ້າໃຈງ່າຍ ແຕ່ເຮົາເມື່ອຍຫຼັງ ເຮົາຈັກເນີ້ງພັກ"

ທ່ານພຣະສາຣີບຸດຮັບຄຳພຣະເທວະທັດ ຈາກນັ້ນພຣະເທວະທັດປູສັງຄາຕິ ໔ ຊັ້ນ ນອນໂດຍຂ້າງເບື້ອງຂວາ ພຣະເທວະທັດນັ້ນອິດເມື່ອຍຈົນເຜີສະຕິບໍ່ຮູ້ສຶກໂຕ ບຶດດຽວກໍຫຼັບໄປ

ລຳດັບນັ້ນ ທ່ານພຣະສາຣີບຸດກ່າວຕັກເຕືອນພ່ຳສອນພິກຂຸທັງຫຼາຍດ້ວຍທຳມີກະຖາ ທີ່ເປັນອະນຸສາສະນີປະກອບດ້ວຍອາເທສະນາປາຕິຫານ°ທ່ານພຣະໂມກຄັນລານະກ່າວຕັກເຕືອນພ່ຳສອນດ້ວຍທຳມີກະຖາທີ່ເປັນອະນຸສາສະນີປະກອບດ້ວຍອິດທິປາຕິຫານ

ຄັ້ງນັ້ນແລ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ພິກຂຸທັງຫຼາຍຜູ້ໄດ້ຮັບການກ່າວຕັກເຕືອນພ່ຳສອນດ້ວຍທຳມີກະຖາທີ່ເປັນອະນຸສາສະນີປະກອບດ້ວຍອາເທສະນາປາຕິຫານຈາກພຣະສາຣີບຸດແລະດ້ວຍທຳມີກະຖາທີ່ເປັນອະນຸສາສະນີປະກອບດ້ວຍອິດທິປາຕິຫານຈາກພຣະໂມກຄັນລານະວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ"

ຕໍ່ມາ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ "ທ່ານທັງຫຼາຍ ພວກເຮົາຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຜູ້ພໍໃຈທຳຂອງພຣະຜູ້ມີພຣະພາກເຈົ້ານັ້ນຈິ່ງມາ"

ລຳດັບນັ້ນ ພຣະສາຣີບຸດແລະພຣະໂມກຄັນລານະພາພິກຂຸປະມານ ໕໐໐ ອົງໄປພຣະເວລຸວັນ

ເວລານັ້ນ ພຣະໂກກາລິກະປຸກພຣະເທວະທັດໃຫ້ລຸກຂຶ້ນດ້ວຍຄຳວ່າ "ທ່ານເທວະທັດ ລຸກຂຶ້ນເທີ້ນ ພຣະສາຣີບຸດກັບພຣະໂມກຄັນລານະພາພິກຂຸໄປໝົດແລ້ວ ທ່ານເທວະທັດ ເຮົາບອກທ່ານແລ້ວບໍ່ແມ່ນບໍວ່າ ຢ່າໄວ້ໃຈພຣະສາຣີບຸດແລະພຣະໂມກຄັນລານະ ພຣະສາຣີບຸດແລະພຣະໂມກຄັນລານະມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດຄວາມປາຖະໜາຊົ່ວ"

ຂະນະນັ້ນໂລຫິດອຸ່ນ ໆ ກໍພຸ່ງອອກຈາກປາກຂອງພຣະເທວະທັດໃນບ່ອນນັ້ນເອງ

ຕໍ່ມາ ພຣະສາຣີບຸດແລະພຣະໂມກຄັນລານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ທ່ານພຣະສາຣີບຸດໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍປະທານພຣະວະໂຣກາດ ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງ ເພິ່ງອຸປະສົມບົດໃໝ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເລີຍ ສາຣີບຸດ ທ່ານຢ່າພໍໃຈໃຫ້ພິກຂຸທີ່ປະພຶດຕາມພິກຂຸຜູ້ທຳລາຍສົງອຸປະສົມບົດໃໝ່ເລີຍ ສາຣີບຸດ ຖ້າເປັນແນວນັ້ນ ທ່ານຈົ່ງໃຫ້ພິກຂຸທີ່ປະພຶດຕາມພິກຂຸຜູ້ທຳລາຍສົງສະແດງອາບັດຖຸນລັດໄຈ ສາຣີບຸດ ກໍເທວະທັດປະຕິບັດຕໍ່ທ່ານແນວໃດ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະເທວະທັດປະຕິບັດຄືພຣະຜູ້ມີ ພຣະພາກ ຄື ຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຮື່ນເຣີງດ້ວຍທຳມີກະຖາສິ້ນຣາຕີຫຼວງຫຼາຍແລ້ວໄດ້ເຊື້ອເຊີນຂ້າພຣະອົງວ່າ ທ່ານສາຣີບຸດ ພິກຂຸສົງຍັງບໍ່ງ່ວງ ທ່ານສາຣີບຸດ ທຳມີກະຖາຂອງທ່ານພິກຂຸທັງຫຼາຍເຂົ້າໃຈງ່າຍ ແຕ່ເຮົາເມື່ອຍຫຼັງ ເຮົາຈັກເນີ້ງພັກ"

[໓໘໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍເລື້ອງເຄີຍມີມາແລ້ວ ມີສະໃຫຍ່ແຫ່ງໜຶ່ງຢູ່ຊາຍປ່າ ຝູງຊ້າງອາໄສຢູ່ໃກ້ ໆ ສະນັ້ນ ຊ້າງເຫຼົ່ານັ້ນລົງໄປໃນສະເອົາງວງລົກເຫງົ້າແລະຮາກບົວ ລ້າງໃຫ້ສະອາດຈົນບໍ່ມີຕົມແລ້ວຫຍໍ້າກິນເຫງົ້າແລະຮາກບົວ ເຫງົ້າແລະຮາກບົວເປັນອາຫານບຳລຸງຜິວພັນແລະກຳລັງຂອງຊ້າງເຫຼົ່ານັ້ນ ຍ້ອນເຫດນັ້ນ ຊ້າງເຫຼົ່ານັ້ນຈຶ່ງບໍ່ລົ້ມບໍໄດ້ຮັບທຸກປາງຕາຍ ພິກຂຸທັງຫຼາຍ ສ່ວນລູກຊ້າງທັງຫຼາຍເຮັດຄືຊ້າງໃຫຍ່ພາກັນລົງສະນັ້ນ ເອົາງວງລົກເຫງົ້າແລະຮາກບົວແລ້ວບໍ່ລ້າງໃຫ້ສະອາດຫຍໍ້າກິນທັງທີ່ມີຕົມເຫງົ້າແລະຮາກບົວຈຶ່ງບໍ່ບຳລຸງຜິວພັນແລະກຳລັງຂອງລູກຊ້າງເຫຼົ່ານັ້ນ ລູກຊ້າງເຫຼົ່ານັ້ນຈຶ່ງລົ້ມແລະໄດ້ຮັບທຸກປາງຕາຍ ພິກຂຸທັງຫຼາຍ ເທວະທັດເຮັດເອົາແບບເຮົາ ຈະເສຍຊີວິດຢ່າງໜ້າສົມເພດ" ແລ້ວໄດ້ຕັດປະພັນຄາຖາວ່າ

"ເທວະທັດເຮັດເອົາແບບເຮົາຈະເສຍຊີວິດ ຢ່າງໜ້າສົມເພດ
ຄືລູກຊ້າງຫຍໍ້າກິນເຫງົ້າບົວເປື້ອນຕົມແລ້ວຈຶ່ງລົ້ມໄປ

ຍ້ອນເຮັດເອົາແບບຊ້າງໃຫຍ່ທີ່ຂຸດດິນຫຍ້ຳກິນເຫງົ້າບົວ
ຫຼີ້ນຢູ່ໃນສະໃຫຍ່ ສັນນັ້ນ

## ຄຸນສົມບັດຂອງທູດ

[໓໘໗] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍຄຸນສົມບັດ ໘ ຢ່າງ ຄວນເຮັດໜ້າທີ່ທູດໄດ້ ຄຸນສົມບັດ ໘ ຢ່າງ ຄື

໑. ຮູ້ຈັກຟັງ
໒. ສາມາດເວົ້າໃຫ້ຜູ້ອື່ນຟັງໄດ້
໓. ໃຝ່ສຶກສາ
໔. ຊົງຈຳໄດ້ດີ
໕. ເປັນຜູ້ຮູ້ໄດ້ເຂົ້າໃຈຊັດແຈ້ງ
໖. ສາມາດເວົ້າໃຫ້ຜູ້ອື່ນເຂົ້າໃຈໄດ້
໗. ສະຫຼາດໃນສິ່ງທີ່ເປັນປະໂຫຍດ ແລະ
໘. ບໍ່ກໍ່ຄວາມວິວາດຜິດຖຽງ ບໍ່ເປັນປະໂຫຍດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍຄຸນສົມບັດ ໘ ຢ່າງ ຄວນເຮັດໜ້າທີ່ທູດໄດ້
ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍຄຸນສົມບັດ ໘ ຢ່າງ ຄື

໑. ຮູ້ຈັກຟັງ
໒. ສາມາດເວົ້າໃຫ້ຜູ້ອື່ນຟັງໄດ້
໓. ໃຝ່ສຶກສາ
໔. ຊົງຈຳໄດ້ດີ
໕. ເປັນຜູ້ຮູ້ໄດ້ເຂົ້າໃຈຊັດແຈ້ງ
໖. ສາມາດເວົ້າໃຫ້ຜູ້ອື່ນເຂົ້າໃຈໄດ້
໗. ສະຫຼາດໃນສິ່ງທີ່ເປັນປະໂຫຍດແລະ
໘. ບໍ່ກໍ່ຄວາມວິວາດຜິດຖຽງບໍ່ເປັນປະໂຫຍດ

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍຄຸນສົມບັດ ໘ ຢ່າງ ຄວນເຮັດໜ້າທີ່ທູດໄດ້

ພິກຂຸຜູ້ເຂົ້າສູ່ຊຸມຊົນທີ່ໂຕ້ຖຽງກັນຢ່າງຮຸນແຮງກໍບໍ່ສະທົກສະທ້ານ
ບໍ່ເຮັດຄຳເວົ້າໃຫ້ເສຍຫາຍ ບໍ່ປົກປິດຂ່າວສານ
ຊີ້ແຈ່ງຢ່າງບໍ່ມີຂໍ້ສົງໄສ ຖືກຍ້ອນຖາມກໍບໍ່ໂກດ
ພິກຂຸຜູ້ມີລັກສະນະເຊັ່ນນັ້ນແລຄວນເຮັດໜ້າທີ່ທູດໄດ້

## ພຣະເທວະທັດຖືກອະສັດທຳ ໘ ຢ່າງຄອບງຳ

[໓໔໗] ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ຢ່າງຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອະສັດທຳ ໘ ຢ່າງ ຄື

໑. ເທວະທັດຖືກລາບຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຊົ່ວກັບ ແກ້ໄຂບໍ່ໄດ້

໒. ເທວະທັດຖືກຄວາມເສື່ອມລາບຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໓. ເທວະທັດຖືກຍົດຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໔. ເທວະທັດຖືກຄວາມເສື່ອມຍົດຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໕. ເທວະທັດຖືກສັກກາຣະຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໖. ເທວະທັດຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ຈັກໄປເກີດໃນອະບາຍຈັກໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໗. ເທວະທັດຖືກຄວາມປາຖະໜາຊົ່ວຄອບງຳຍ່ຳຍີຈິດ ຈັກໄປເກີດໃນອະບາຍຈັກໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໘. ເທວະທັດຖືກຄວາມທີ່ມີມິດຊົ່ວຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ຢ່າງເຫຼົ່ານີ້ແລຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

[໓໔໙] ພິກຂຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ເພິ່ງຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນຢູ່ ฯລฯ ຍົດທີ່ເກີດຂຶ້ນ ฯລฯ ຄວາມເສື່ອມຍົດທີ່ເກີດຂຶ້ນ ฯລฯ ສັກກາຣະທີ່ເກີດຂຶ້ນ ฯລฯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ฯລฯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ฯລฯ ຄວາມທີ່ມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດອັນໃດ ຈຶ່ງເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ເພິ່ງຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນ ฯລฯ ຍົດທີ່ເກີດຂຶ້ນ ฯລฯ ຄວາມເສື່ອມຍົດທີ່ເກີດຂຶ້ນ

ຯລຯ ສັກກາຣະທີ່ເກີດຂື້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂື້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂື້ນ ຯລຯ ຄວາມທີ່ມີມິດຊົ່ວທີ່ເກີດຂື້ນຢູ່

ພິກຂຸທັງຫຼາຍ ຍ້ອນເມື່ອພິກຂຸບໍ່ຄອບງຳລາບທີ່ເກີດຂື້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນທັງຫຼາຍເພິ່ງເກີດຂື້ນ ແຕ່ເມື່ອພິກຂຸນັ້ນຄອບງຳລາບທີ່ເກີດຂື້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນທັງຫຼາຍຍ່ອມບໍ່ມີແກ່ພິກຂຸນັ້ນ

ພິກຂຸທັງຫຼາຍ ຍ້ອນເມື່ອພິກຂຸບໍ່ຄອບງຳຄວາມເສື່ອມລາບທີ່ເກີດຂື້ນຢູ່ ຯລຯ ຍົດທີ່ເກີດຂື້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂື້ນ ຯລຯ. ສັກກາຣະທີ່ເກີດຂື້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂື້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂື້ນ ຯລຯ ຄວາມທີ່ມີມິດຊົ່ວທີ່ເກີດຂື້ນຢູ່ ອາສະວະແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນທັງຫຼາຍເພິ່ງເກີດຂື້ນ ແຕ່ເມື່ອພິກຂຸນັ້ນຄອບງຳຄວາມທີ່ມີມິດຊົ່ວທີ່ເກີດຂື້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນທັງຫຼາຍຍ່ອມບໍ່ມີແກ່ພິກຂຸນັ້ນ

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດນີ້ແລ ຈຶ່ງເພິ່ງຄອບງຳລາບທີ່ເກີດຂື້ນຢູ່ ຯລຯ ຄວາມເສື່ອມລາບທີ່ເກີດຂື້ນ ຯລຯ ຍົດທີ່ເກີດຂື້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂື້ນ ຯລຯ ສັກກາຣະທີ່ເກີດຂື້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂື້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂື້ນ ຯລຯ ຄວາມທີ່ມີມິດຊົ່ວທີ່ເກີດຂື້ນຢູ່

ພິກຂຸທັງຫຼາຍ ຍ້ອນແນວນັ້ນພວກທ່ານເພິ່ງສຶກສາແນວນີ້ວ່າ ພວກເຮົາຈະຄອບງຳລາບທີ່ເກີດຂື້ນຢູ່ ຄວາມເສື່ອມລາບທີ່ເກີດຂື້ນ ຯລຯ ຍົດທີ່ເກີດຂື້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂື້ນ ຯລຯ ສັກກາຣະທີ່ເກີດຂື້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂື້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂື້ນ ຯລຯ ຄວາມທີ່ມີມິດຊົ່ວທີ່ເກີດຂື້ນຢູ່ ພິກຂຸທັງຫຼາຍ ພວກທ່ານເພິ່ງສຶກສາແນວນີ້ແລ

## ພຣະເທວະທັດຖືກອະສັດທຳ ໓ ຢ່າງຄອບງຳ

[໓໕໐] ¹ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໓ ຢ່າງຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

## ອະສັດທຳ ໓ ຢ່າງ ຄື

໑. ຄວາມປາຖະໜາຊົ່ວ

໒. ຄວາມທີ່ມີມິດຊົ່ວ

໓. ການໄດ້ບັນລຸຄຸນວິເສດຂັ້ນຕ່ຳແລ້ວເຊົາຢູ່ເຄິ່ງກາງ

## ນິຄົມຄາຖາ

ໃຜ ໆ ຢ່າໄດ້ເກີດເປັນຄົນປາຖະໜາຊົ່ວ
ບໍ່ວ່າໃນການໃດ ໆ ໃນໂລກ
ທ່ານທັງຫຼາຍຈົ່ງຮູ້ຈັກເທວະທັດວ່າມີຄະຕິຄືກັບຄົນປາຖະໜາຊົ່ວ
ເທວະທັດເປັນທີ່ຍ້ອງຍໍກັນວ່າເປັນບັນດິດ
ເປັນທີ່ຮູ້ກັນວ່າ ໄດ້ອົບຮົມຕົນແລ້ວ ເຮົາໄດ້ຟັງມາວ່າ
ເທວະທັດຄືກັບວ່າຮຸ່ງເຮືອງຢູ່ດ້ວຍຍົດ ເທວະທັດນັ້ນສັ່ງສົມຄວາມຜະໝາດ
ບຽດບຽນຕະຖາຄົດນັ້ນ ຈຶ່ງຕ້ອງໄປເກີດໃນນະຮົກອະເວຈີ
ມີປະຕູ ໔ ດ້ານ ເປັນຕາຢ້ານ
ຜູ້ໃດປະທຸດສະຮ້າຍຕໍ່ຜູ້ບໍ່ປະທຸດສະຮ້າຍຕອບ
ຜູ້ບໍ່ເຮັດກຳຊົ່ວ ບາບຍ່ອມຖືກຕ້ອງສະເພາະຜູ້ນັ້ນທໍ່ນັ້ນ
ຜູ້ມີຈິດປະທຸດສະຮ້າຍ ບໍ່ມີຄວາມເອື້ອເຟື້ອ
ຜູ້ໃດບຽດບຽນຕະຖາຄົດຜູ້ສະເດັດໄປດີ ມີພຣະທະໄທສະງົບ

ດ້ວຍການກ່າວຕຳໜິ ການຕຳໜິພຣະອົງຍ່ອມຟັງບໍ່ຂຶ້ນ
ປຽບຄືຜູ້ທີ່ຕັ້ງໃຈປະທຸດສະຮ້າຍມະຫາສະມຸດ
ດ້ວຍຢາພິດຈຳນວນເປັນໝໍ້ ເຂົາບໍ່ອາດປະທຸດສະຮ້າຍໄດ້
ຍ້ອນມະຫາສະມຸດເປັນຕາຢ້ານ
ພິກຂຸຜູ້ດຳເນີນຕາມມັກຄາຂອງພຣະພຸດທະເຈົ້າ
ຫຼືພຣະສາວົກເພິ່ງເຖິງຄວາມສິ້ນທຸກໄດ້
ບັນດິດເຮັດພຣະພຸດທະເຈົ້າຫຼືພຣະສາວົກ
ໃຫ້ເປັນກັນລະຍານະມິດແລະຄົບຫາທ່ານເຫຼົ່ານັ້ນ"

## ອຸປາລິປັນຫາ
## ວ່າດ້ວຍປັນຫາຂອງພຣະອຸບາລີ
## ສັງຄະຣາຊີ

[໓໕໑] ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບັດແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ທີ່ຮຽກວ່າ ສັງຄະຣາຊີ ສັງຄະຣາຊີ (ຄວາມຮ້າວຮານແຫ່ງສົງ) ດ້ວຍ

ອາການພຽງໃດຈຶ່ງເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ (ຄວາມແຕກແຫ່ງສົງ) ກໍແລະດ້ວຍອາການພຽງໃດ ຈຶ່ງເປັນທັງ ສັງຄະຣາຊີແລະສັງຄະເພດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ

໑. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໑ ອົງ ອີກຝ່າຍໜຶ່ງ ມີພິກຂຸ ໒ ອົງ ອົງທີ ໔ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ ຈັດເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

໒. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໒ ອົງ ອີກຝ່າຍໜຶ່ງ ກໍມີ ໒ ອົງ ອົງທີ ໕ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ກໍຈັດເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

໓. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໒ ອົງ ອີກຝ່າຍໜຶ່ງມີ ໓ ອົງ ອົງທີ ໖ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ກໍຈັດເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

໔. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໓ ອົງ ອີກຝ່າຍໜຶ່ງກໍມີ ໓ ອົງ ອົງທີ ໗ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ກໍຈັດເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

໕. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໓ ອົງ ອີກຝ່າຍໜຶ່ງມີ ໔ ອົງ ອົງທີ ໘ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ກໍຈັດເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

໖. ອຸບາລີ ຝ່າຍໜຶ່ງ ມີພິກຂຸ ໔ ອົງ ອີກຝ່າຍໜຶ່ງກໍມີ ໔ ອົງ ອົງທີ ໙ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ແນວນີ້ຈັດເປັນທັງສັງຄະຣາຊີ ແລະສັງຄະເພດ

໗. ພິກຂຸ ໙ ອົງ ຫຼື ຫຼາຍກວ່າ ໙ ອົງ ຈັດເປັນທັງສັງຄະຣາຊີ ແລະສັງຄະເພດ

ອຸບາລີ ພິກຂຸນີທຳລາຍສົງບໍ່ໄດ້ ໄດ້ແຕ່ພະຍາຍາມທຳລາຍ ສິກຂະມານາ ທຳລາຍສົງບໍ່ໄດ້ ຯລຯ ສາມະເນນທຳລາຍສົງບໍ່ໄດ້ ຯລຯ ສາມະເນຣີທຳລາຍສົງບໍ່ໄດ້ ຯລຯ ອຸປາສົກທຳລາຍສົງບໍ່ໄດ້ ຯລຯ ອຸປາສິກາກໍທຳລາຍ ສົງບໍ່ໄດ້ ໄດ້ແຕ່ພະຍາຍາມທຳລາຍ

ອຸບາລີ ປະກະຕັດຕະພິກຂຸຜູ້ມີສັງວາດສະເໝີກັນ ຢູ່ໃນສະມານສີມາຍ່ອມທຳລາຍສົງໄດ້

# ສັງຄະເພດ
## ເລື້ອງທີ່ເຮັດໃຫ້ສົງແຕກກັນ ໑໘ ປະການ

[໓໕໔] ພຣະອຸບາລີທູນຖາມວ່າ "ທີ່ພຣະອົງຕັດວ່າ ສັງຄະເພດ ສັງຄະເພດ ສົງຈະເປັນຜູ້ແຕກກັນດ້ວຍເຫດທໍ່ໃດນໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸບາລີ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ ເປັນທຳ

໒. ສະແດງທຳວ່າ ເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ ເປັນວິໄນ

໔. ສະແດງວິໄນວ່າ ບໍ່ແມ່ນວິໄນ

໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້ວ່າ ຕະຖາຄົດໄດ້ພາສິດໄວ້ໄດ້ຕັດໄວ້

໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ໄດ້ຕັດໄວ້ວ່າ ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້

໗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ ຕະຖາຄົດໄດ້ປະພຶດມາ

໘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດໄດ້ປະພຶດມາວ່າ ຕະຖາຄົດບໍ່ໄດ້ປະພຶດມາ

໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ ຕະຖາຄົດໄດ້ບັນຍັດໄວ້

໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ ຕະຖາຄົດບໍ່ໄດ້ບັນຍັດໄວ້

໑໑. ສະແດງອະນາບັດວ່າ ເປັນອາບັດ

໑໒. ສະແດງອາບັດວ່າ ເປັນອະນາບັດ

໑໓. ສະແດງອາບັດເບົາວ່າ ເປັນອາບັດໜັກ

໑໔. ສະແດງອາບັດໜັກວ່າ ເປັນອາບັດເບົາ

໑໕. ສະແດງອາບັດທີ່ມີສ່ວນເຫຼືອວ່າ ເປັນອາບັດທີ່ບໍ່ມີສ່ວນເຫຼືອ

໑໖. ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າ ເປັນອາບັດທີ່ມີສ່ວນເຫຼືອ

໑໗. ສະແດງອາບັດຊົ່ວຫຍາບວ່າ ເປັນອາບັດບໍ່ຊົ່ວຫຍາບ

໑໘. ສະແດງອາບັດບໍ່ຊົ່ວຫຍາບວ່າ ເປັນອາບັດຊົ່ວຫຍາບ

ພິກຂຸເຫຼົ່ານັ້ນຍ່ອມແຍກພວກອອກມາ ປະກາດໂຕດ້ວຍເຫດ ໑໘ ຢ່າງນີ້ ແຍກກັນເຮັດອຸໂປສົດ ແຍກກັນເຮັດປະວາຣະນາ ແຍກກັນເຮັດສັງຄະກຳ

ອຸບາລີ ສົງຈະເປັນຜູ້ແຕກກັນດ້ວຍເຫດທໍ່ນີ້ແລ

# ສັງຄະສາມັກຄີ

[໓໕໓] ພຣະອຸບາລີທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສັງຄະສາມັກຄີ ສັງຄະສາມັກຄີ ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທໍ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ ເປັນອະທຳ
໒. ສະແດງທຳວ່າ ເປັນທຳ
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ ບໍ່ແມ່ນວິໄນ
໔. ສະແດງວິໄນວ່າ ເປັນວິໄນ
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້ວ່າ ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ໄດ້ຕັດໄວ້ວ່າ ຕະຖາຄົດໄດ້ພາສິດໄວ້ໄດ້ຕັດໄວ້
໗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ ຕະຖາຄົດບໍ່ໄດ້ປະພຶດມາ
໘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດໄດ້ປະພຶດມາວ່າ ຕະຖາຄົດໄດ້ປະພຶດມາ
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ ຕະຖາຄົດບໍ່ໄດ້ບັນຍັດໄວ້
໑໐. ສະແດງສິ່ງທີ່ຕະຖາຄົດບັນຍັດໄວ້ວ່າ ຕະຖາຄົດໄດ້ບັນຍັດໄວ້
໑໑. ສະແດງອະນາບັດວ່າ ເປັນອະນາບັດ
໑໒. ສະແດງອາບັດວ່າ ເປັນອາບັດ
໑໓. ສະແດງອາບັດເບົາວ່າ ເປັນອາບັດເບົາ
໑໔. ສະແດງອາບັດໜັກວ່າ ເປັນອາບັດໜັກ
໑໕. ສະແດງອາບັດມີສ່ວນເຫຼືອວ່າ ເປັນອາບັດມີສ່ວນເຫຼືອ
໑໖. ສະແດງອາບັດບໍ່ມີສ່ວນເຫຼືອວ່າ ເປັນອາບັດບໍ່ມີສ່ວນເຫຼືອ
໑໗. ສະແດງອາບັດຊົ່ວຫຍາບວ່າ ເປັນອາບັດຊົ່ວຫຍາບ
໑໘. ສະແດງອາບັດບໍ່ຊົ່ວຫຍາບວ່າ ເປັນອາບັດບໍ່ຊົ່ວຫຍາບ

ພິກຂຸເຫຼົ່ານັ້ນຍ່ອມບໍ່ແຍກພວກອອກມາປະກາດໂຕດ້ວຍເຫດ ໑໘ ຢ່າງນີ້ ບໍ່ແຍກກັນເຮັດອຸໂປສົດ ບໍ່ແຍກກັນເຮັດປະວາຣະນາ ບໍ່ແຍກກັນເຮັດສັງຄະກຳ

ອຸບາລີ ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທໍ່ນີ້ແລ"

[໓໕໔] ¹ພຣະອຸບາລີຂາບທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ທຳລາຍສົງຜູ້ພ້ອມ ພຽງກັນ ຈະປະສົບຜົນແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ທຳລາຍສົງຜູ້ພ້ອມພຽງກັນນັ້ນ ຍ່ອມປະສົບຜົນຊົ່ວຮ້າຍ ຊົ່ວກັບ ຖືກໄຟໄໝ້ໃນນະຣົກຕະຫຼອດກັບ

## ນິຄົມຄາຖາ

ພິກຂຸຜູ້ທຳລາຍສົງໃຫ້ແຕກກັນ ຍິນດີການແຕກກັນ
ຕັ້ງຢູ່ໃນອະທຳ ເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຣົກຕະຫຼອດກັບ
ພາດຈາກນິບພານອັນເປັນແດນກະເສມຈາກໂຍຄະ ສະເຫວີຍຜົນກຳ
ຢູ່ໃນນະຣົກຕະຫຼອດກັບ ຍ້ອນທຳລາຍສົງທີ່ສາມັກຄີກັນໃຫ້ແຕກແຍກກັນ"

ພຣະອຸບາລີທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພິກຂຸເຮັດສົງທີ່ແຕກກັນໃຫ້ພ້ອມພຽງກັນ ຈະປະສົບຜົນແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸເຮັດສົງທີ່ແຕກກັນໃຫ້ພ້ອມພຽງກັນ ຍ່ອມປະສົບບຸນອັນປະເສີດ ບັນເທິງໃນສະຫວັນຕະຫຼອດກັບ

## ນິຄົມຄາຖາ

ຄວາມພ້ອມພຽງຂອງສົງ ເປັນເຫດໃຫ້ເກີດສຸກ
ແລະບຸກຄົນຜູ້ອະນຸເຄາະສົງຜູ້ພ້ອມພຽງກັນແລ້ວ
ຜູ້ຍິນດີໃນຄວາມພ້ອມພຽງກັນ ຕັ້ງຢູ່ໃນທຳ
ຍ່ອມບໍ່ພາດຈາກທຳອັນເປັນແດນກະເສມຈາກໂຍຄະ
ຍ່ອມບັນເທິງໃນສະຫວັນຕະຫຼອດກັບ ຍ້ອນສະມານສົງໃຫ້ສາມັກຄີກັນ"
ພິກຂຸຜູ້ທຳລາຍສົງຕ້ອງໄປເກີດໃນອະບາຍ

[໓໕໕] ພຣະອຸບາລີທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ມີຢູ່ບໍທີ່ພິກຂຸຜູ້ທຳລາຍສົງຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ມີຢູ່ທີ່ພິກຂຸຜູ້ທຳລາຍສົງຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້"

ພຣະອຸບາລີທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ມີຢູ່ບໍທີ່ພິກຂຸຜູ້ທຳລາຍສົງບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຣົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ມີຢູ່ທີ່ພິກຂຸຜູ້ທຳລາຍສົງບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້"

ພຣະອຸບາລີທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ທຳລາຍສົງ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸໃນທຳວິໄນນີ້ ສະແດງອະທຳວ່າເປັນທຳ ມີຄວາມເຫັນອະທຳນັ້ນວ່າເປັນອະທຳ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ເຊື່ອງຄວາມເຫັນ ເຊື່ອງຄວາມເຫັນຖືກ ເຊື່ອງຄວາມພໍໃຈ ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ອີກແນວໜຶ່ງ ພິກຂຸສະແດງອະທຳວ່າ ເປັນທຳ ມີຄວາມເຫັນທຳນັ້ນວ່າ ເປັນອະທຳ ມີຄວາມເຫັນຄວາມແຕກກັນວ່າເປັນທຳ ເຊື່ອງຄວາມເຫັນ ເຊື່ອງຄວາມເຫັນຖືກ ເຊື່ອງຄວາມພໍໃຈ ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ອີກແນວໜຶ່ງ ພິກຂຸສະແດງອະທຳວ່າ ເປັນທຳ ມີຄວາມເຫັນອະທຳນັ້ນ ວ່າເປັນອະທຳ ບໍ່ແນ່ໃຈຄວາມແຕກກັນ ເຊື່ອງຄວາມເຫັນ ເຊື່ອງຄວາມເຫັນຖືກ ເຊື່ອງຄວາມພໍໃຈ ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ອີກແນວໜຶ່ງ ພິກຂຸສະແດງອະທຳວ່າ ເປັນທຳ ມີຄວາມເຫັນອະທຳນັ້ນ ວ່າເປັນທຳ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ຯລຯ ມີຄວາມເຫັນອະທຳນັ້ນວ່າ ເປັນທຳ ບໍ່ແນ່ໃຈໃນຄວາມແຕກກັນ ຯລຯ ບໍ່ແນ່ໃຈໃນອະທຳນັ້ນ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ຯລຯ ບໍ່ແນ່ໃຈໃນອະທຳນັ້ນ ມີຄວາມເຫັນຄວາມແຕກກັນວ່າເປັນທຳ ຯລຯ ບໍ່ແນ່ໃຈໃນອະທຳນັ້ນ ບໍ່ແນ່ໃຈໃນຄວາມແຕກກັນ ເຊື່ອງຄວາມເຫັນ ເຊື່ອງຄວາມເຫັນຖືກ ເຊື່ອງຄວາມພໍໃຈ ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ອີກແນວໜຶ່ງ ພິກຂຸສະແດງທຳວ່າ ເປັນອະທຳ ຯລຯ ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ ເປັນວິໄນ ສະແດງວິໄນວ່າ ບໍ່ແມ່ນວິໄນ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້ວ່າ ຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້ ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ ຕະຖາຄົດໄດ້ປະພຶດມາ ຯລຯ ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດປະພຶດມາວ່າ ຕະຖາຄົດບໍ່ໄດ້ປະພຶດມາ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ ຕະຖາຄົດໄດ້ບັນຍັດໄວ້ ສະແດງສິ່ງທີ່ຕະຖາຄົດບັນຍັດໄວ້ ວ່າ ຕະຖາຄົດບໍ່ໄດ້ບັນຍັດໄວ້ ສະແດງອະນາບັດວ່າ ເປັນອາບັດ ສະແດງອາບັດວ່າ ເປັນອະນາບັດ ສະແດງອາບັດເບົາວ່າ ເປັນອາບັດໜັກ ສະແດງອາບັດໜັກວ່າ ເປັນອາບັດເບົາ ສະແດງອາບັດ ມີສ່ວນເຫຼືອວ່າ ເປັນອາບັດບໍ່ມີສ່ວນເຫຼືອ ສະແດງອາບັດບໍ່ມີສ່ວນເຫຼືອວ່າ ເປັນອາບັດມີສ່ວນເຫຼືອ ສະແດງອາບັດຊົ່ວຫຍາບວ່າ ເປັນອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບ ວ່າເປັນອາບັດຊົ່ວຫຍາບ ມີຄວາມເຫັນທຳນັ້ນວ່າເປັນອະທຳ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ຯລຯ ມີຄວາມເຫັນທຳນັ້ນວ່າເປັນອະທຳ ມີຄວາມເຫັນຄວາມແຕກກັນວ່າ ເປັນທຳ ມີຄວາມເຫັນທຳນັ້ນວ່າເປັນອະທຳ ບໍ່ແນ່ໃຈຄວາມແຕກກັນ ມີຄວາມເຫັນອະທຳນັ້ນວ່າເປັນທຳ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ມີຄວາມເຫັນທຳນັ້ນວ່າເປັນອະທຳ ບໍ່ແນ່ໃຈຄວາມແຕກກັນ ບໍ່ແນ່ໃຈທຳນັ້ນ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ບໍ່ແນ່ໃຈອະທຳນັ້ນ ມີຄວາມເຫັນຄວາມແຕກກັນວ່າເປັນອະທຳ ບໍ່ແນ່ໃຈອະທຳນັ້ນ ບໍ່ແນ່ໃຈຄວາມແຕກກັນ ເຊື່ອງຄວາມເຫັນ ເຊື່ອງຄວາມເຫັນຖືກ ເຊື່ອງຄວາມພໍໃຈ ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້"

## ພິກຂຸຜູ້ທຳລາຍສົງບໍ່ຕ້ອງໄປເກີດໃນອະບາຍ

ພຣະອຸບາລີຂາບທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພິກຂຸຜູ້ທຳລາຍສົງບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸໃນທຳວິໄນນີ້ ສະແດງອະທຳວ່າເປັນທຳມີຄວາມເຫັນອະທຳນັ້ນວ່າເປັນທຳ ມີຄວາມເຫັນຄວາມແຕກກັນວ່າເປັນທຳ ບໍ່ເຊື່ອງຄວາມເຫັນ ບໍ່ເຊື່ອງຄວາມເຫັນຖືກ ບໍ່ເຊື່ອງຄວາມພໍໃຈ ບໍ່ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້ ອຸບາລີ ພິກຂຸຜູ້ທຳລາຍສົງນີ້ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ອີກປະການໜຶ່ງ ພິກຂຸສະແດງທຳວ່າ ເປັນອະທຳ ໆລໆ ອາບັດຊົ່ວຫຍາບ ວ່າເປັນອາບັດບໍ່ຊົ່ວຫຍາບ ມີຄວາມເຫັນທຳນັ້ນວ່າເປັນທຳ ມີຄວາມເຫັນຄວາມແຕກກັນວ່າເປັນທຳ ບໍ່ເຊື່ອງຄວາມເຫັນ ບໍ່ເຊື່ອງຄວາມເຫັນຖືກ ບໍ່ເຊື່ອງຄວາມພໍໃຈ ບໍ່ເຊື່ອງຄວາມປະສົງ ປະກາດໃຫ້ຈັບສະຫຼາກວ່າ ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ ພວກທ່ານຈົ່ງຈັບສະຫຼາກນີ້ ຈົ່ງພໍໃຈສະຫຼາກນີ້

ອຸບາລີ ພິກຂຸຜູ້ທຳລາຍສົງແນວນີ້ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຣົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້"

**ຕະຕິຍະພານະວານ ຈົບ**

**ສັງຄະເພທະຂັນທະກະທີ ໗ ຈົບ**

## ລວມເລື້ອງທີມີໃນສັງຄະເພທະຂັນທະກະ

ເລື້ອງເຈົ້າສາກະຍະຜູ້ມີຊື່ສຽງອອກບວດຂະນະທີ່ພຣະຜູ້ມີພຣະພາກເຈົ້າ
ປະທັບທີ່ອະນຸປິຍະນິຄົມ ເຈົ້າອະນຸຣຸດທະສາກະຍະຜູ້ສຸຂຸມາລະຊາດ
ບໍ່ປາຖະໜາຈະຊົງບວດ ເຈົ້າມະຫານາມຜູ້ອ້າຍຈຶ່ງສອນວິທີໄຖນາ
ຫວ່ານເຂົ້າ ໄຂນ້ຳເຂົ້າ ລະບາຍນ້ຳອອກ ລົກຫຍ້າ
ກ່ຽວເຂົ້າ ຂົນເຂົ້າ ຕັ້ງລອມ ນວດເຂົ້າ ສາງເຟືອງ
ຝັດເຂົ້າລີບ ຝັດຄາຍອອກ ຂົນຂຶ້ນສາງ

ເຈົ້າອະນຸຣຸດທະຈຶ່ງຕັດສິນໃຈອອກບວດ ຍ້ອນຊົງເຫັນວຽກງານ
ບໍ່ມີທີ່ຈົບສິ້ນ ແມ່ນມານດາບິດາ ປູ່ຍ່າຕາຍາຍຈະຕາຍໄປໝົດ

ພຣະເຈົ້າພັດທິຍະສາກະຍະ ເຈົ້າອະນຸຣຸດທະສາກະຍະ ເຈົ້າອານົນ
ເຈົ້າພະຄຸ ເຈົ້າກິມພິລະ ຖືໂຕວ່າເປັນສາກະຍະວົງ
ເພື່ອຈະຕັດມານະຈຶ່ງຍອມໃຫ້ອຸບາລີບວດກ່ອນ

ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນໂກສຳພີ
ພຣະເທວະທັດເຮັດກຳຊົ່ວຊາມ ເສື່ອມຈາກລິດ
ກະກຸທະໂກລິຍະເທບພະບຸດເຂົ້າໄປແຈ້ງຂ່າວແກ່ພຣະມະຫາໂມກຄັນລານະ
ສົງລົງປະກາສະນີຍະກຳພຣະເທວະທັດ
ອະຊາດສັດຕູກຸມານຖືກພຣະເທວະທັດຍຸຍົງໃຫ້ປົງພະຊົນພຣະຊະນົກ

ພຣະເທວະທັດສົ່ງບຸຣຸດໄປລອບປົງພະຊົນພຣະຜູ້ມີພຣະພາກເຈົ້າແຕ່ບໍ່ສຳເລັດ
ພຣະເທວະທັດກິ້ງສິລາຫວັງຈະປົງພະຊົນພຣະຜູ້ມີພຣະພາກເຈົ້າດ້ວຍຕົນເອງ
ສັ່ງໃຫ້ຄົນປ່ອຍຊ້າງນາລາຄີຣີເພື່ອທຳຮ້າຍພຣະຜູ້ມີພຣະພາກເຈົ້າ
ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງບັນຍັດໂພຊະນະທີ່ຄົນ ໓ ຄົນເພິ່ງບໍຣິໂພກ
ຍ້ອນອຳນາດປະໂຫຍດ ໓ ຢ່າງ
ຕໍ່ຈາກນັ້ນ ພຣະເທວະທັດທູນຂໍວັດຖຸ ໕ ປະການ
ພະຍາຍາມທຳລາຍສົງ ການທຳລາຍສົງມີໂທດໜັກ

ພຣະເທວະທັດທຳລາຍສົງ ຊັກຊວນພິກຂຸ ໕໐໐ ອົງເຂົ້າເປັນພັກ
ພວກພາໜີໄປຢູ່ທີ່ຄະຍາສີສະປະເທດ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້
ພຣະສາຣີບຸດແລະພຣະໂມກຄັນລານະໄປພາພິກຂຸ ໕໐໐ ອົງກັບ
ໃຫ້ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງສະແດງອາບັດຖຸນລັດໄຈ

## ເລື້ອງອົງ ໘ ມີ ໓ ເລື້ອງ ຄື

໑. ພິກຂຸຜູ້ຄວນເປັນທູດມີຄຸນສົມບັດ ໘ ຢ່າງ
໒. ພຣະສາຣີບຸດປະກອບດ້ວຍຄຸນສົມບັດຂອງທູດ ໘ ຢ່າງ
໓. ພຣະເທວະທັດຖືກອະສັດທຳ ໘ ຢ່າງຄອບງຳ

ພຣະເທວະທັດຖືກອະສັດທຳ ໓ ຢ່າງຄອບງຳ
ເລື້ອງອາການທີ່ຮຽກວ່າ “ສັງຄະຣາຊີ” “ສັງຄະເພດ”

**ສັງຄະເພທະຂັນທະກະ ຈົບ**

# ໘. ວັດຕະຂັນທະກະ

## ໑. ອາຄັນຕຸກະວັດຕະກະຖາ

### ວ່າດ້ວຍຂໍ້ວັດປະຕິບັດ ຂອງພິກຂຸຜູ້ຈອນມາ

[໓໕໖] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະຄະຫະບໍດີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸອາຄັນຕຸກະໃສ່ເກີບເຂົ້າສູ່ອາຣາມແດ່ ກັ້ງຄັນຮົ່ມເຂົ້າສູ່ອາຣາມແດ່ ປົກຫົວເຂົ້າສູ່ອາຣາມແດ່ ພາດຈີວອນເທິງຫົວເຂົ້າ ສູ່ອາຣາມແດ່ ໃຊ້ນ້ຳດື່ມລ້າງຕີນແດ່ ບໍ່ຍອມໄຫວ້ພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ແກ່ພັນສາກວ່າແດ່ ບໍ່ຖາມເຖິງເສນາສະນະແດ່

ພິກຂຸອາຄັນຕຸກະອົງໜຶ່ງ ຖອດຫຼົ້ມວິຫານທີ່ບໍ່ມີຄົນຢູ່ແລ້ວຍູ້ບານປະຕູເຂົ້າໄປຢ່າງແຮງ ງູຕົກຈາກເບື້ອງເທິງລົງມາທີ່ຄໍຂອງພິກຂຸນັ້ນ ທ່ານຕົກໃຈຢ້ານຮ້ອງຂຶ້ນສຸດສຽງ ພິກຂຸ ທັງຫຼາຍຟ້າວເຂົ້າໄປຖາມພິກຂຸນັ້ນດັ່ງນີ້ວ່າ “ທ່ານ ທ່ານຮ້ອງເປັນຫຍັງ”
ພິກຂຸນັ້ນຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພິກຂຸອາຄັນຕຸກະທັງຫຼາຍຈຶ່ງໃສ່ເກີບເຂົ້າສູ່ອາຣາມແດ່ ກັ້ງຄັນຮົ່ມເຂົ້າສູ່ອາຣາມແດ່ ປົກຫົວເຂົ້າ ສູ່ອາຣາມແດ່ ພາດຈີວອນເທິງຫົວເຂົ້າສູ່ອາຣາມແດ່ ໃຊ້ນ້ຳດື່ມລ້າງຕີນແດ່ ບໍ່ຍອມໄຫວ້ພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ແກ່ພັນສາກວ່າແດ່ ບໍ່ຖາມເຖິງເສນາສະນະແດ່ນໍ”

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າພິກຂຸອາຄັນຕຸກະທັງຫຼາຍໃສ່ເກີບເຂົ້າສູ່ອາຣາມແດ່ ກັ້ງຄັນຮົ່ມເຂົ້າສູ່ອາຣາມແດ່ ປົກຫົວເຂົ້າ ສູ່ອາຣາມແດ່ ພາດຈີວອນເທິງຫົວເຂົ້າສູ່ອາຣາມແດ່ ໃຊ້ນ້ຳດື່ມລ້າງຕີນແດ່ ບໍ່ຍອມໄຫວ້ພິກຂຸ ຜູ້ຢູ່ປະຈຳໃນອາວາດຜູ້ແກ່ພັນສາກວ່າແດ່ ບໍ່ຖາມເຖິງເສນາສະນະແດ່ ແມ່ນບໍ?”
ພິກຂຸທັງຫຼາຍທູນຮັບວ່າ “ເປັນຄວາມຈິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ພິກຂຸທັງຫຼາຍ ເປັນຫຍັງພິກຂຸອາຄັນຕຸກະທັງຫຼາຍຈຶ່ງໃສ່ເກີບເຂົ້າສູ່ອາຣາມແດ່ ກັ້ງຄັນຮົ່ມເຂົ້າສູ່ອາຣາມແດ່ ປົກຫົວເຂົ້າສູ່ອາຣາມ ແດ່ ພາດຈີວອນເທິງຫົວເຂົ້າສູ່ອາຣາມແດ່ ໃຊ້ນ້ຳດື່ມລ້າງຕີນແດ່ ບໍ່ຍອມໄຫວ້ພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ແກ່ພັນສາກວ່າແດ່ ບໍ່ຖາມເຖິງເສນາສະນະແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່

ໄດ້ເຮັດຄືນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ។ລ។" ເມື່ອຊົງຕຳໜິແລ້ວ ។ລ។ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໕໗] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸອາຄັນຕຸກະທັງຫຼາຍ ໂດຍທີ່ພິກຂຸອາຄັນຕຸກະທັງຫຼາຍຈະຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ພິກຂຸອາຄັນຕຸກະຄິດວ່າ "ເຮົາຈະເຂົ້າໄປສູ່ອາຮາມດຽວນີ້" ເພິ່ງປົດເກີບເຄາະແລ້ວຖືໄປຢ່າງລະມັດລະວັງ ຫຸບຄັນຮົ່ມ ເປີດຫົວ ລຸດຈີວອນເທິງຫົວລົງເທິງບ່າ ບໍ່ຕ້ອງຟ້າວຟັ່ງ ເຂົ້າສູ່ອາຮາມຕາມປົກກະຕິ ເມື່ອເຂົ້າສູ່ອາຮາມກໍເພິ່ງສັງເກດວ່າ "ພິກຂຸຜູ້ຢູ່ປະຈຳ ໃນອາວາດທັງຫຼາຍປະຊຸມກັນຢູ່ໃສ" ເພິ່ງໄປທີ່ທີ່ພິກຂຸຜູ້ຢູ່ປະຈຳໃນອາວາດປະຊຸມກັນ ບໍ່ວ່າຈະເປັນໂຮງສັນ ມົນດົບຫຼືເຫງົ້າໄມ້ ແລ້ວມ້ຽນບາດໄວ້ທີ່ສົມຄວນ ເກັບຈີວອນໄວ້ ທີ່ສົມຄວນ ຈອງອາສະນະທີ່ເໝາະສົມແລ້ວນັ່ງ ຖາມເຖິງນ້ຳດື່ມນ້ຳໃຊ້ວ່າ "ແນວໃດນ້ຳດື່ມ ແນວໃດນ້ຳໃຊ້" ຖ້າຕ້ອງການນ້ຳດື່ມກໍຕັກມາດື່ມ ຖ້າຕ້ອງການນ້ຳໃຊ້ກໍຕັກມາລ້າງຕີນ ເມື່ອ ຈະລ້າງຕີນ ຄວນໃຊ້ມືຂ້າງໜຶ່ງຫົດນ້ຳ ມືອີກຂ້າງໜຶ່ງລ້າງຕີນ ບໍ່ເພິ່ງໃຊ້ມືຂ້າງທີ່ຫົດນ້ຳລ້າງຕີນ ຖາມເຖິງຜ້າເຊັດເກີບແລ້ວເຊັດເກີບ ເມື່ອຈະເຊັດເກີບ ເພິ່ງໃຊ້ຜ້າແຫ້ງເຊັດກ່ອນ ໃຊ້ຜ້າປຽກເຊັດພາຍຫຼັງ ເພິ່ງຊັກຜ້າເຊັດເກີບປັ້ນແລ້ວຕາກໄວ້ທີ່ສົມຄວນ

ຖ້າພິກຂຸຜູ້ຢູ່ປະຈຳໃນອາວາດແກ່ພັນສາ ເພິ່ງອະພິວາດ ຖ້າເປັນພຣະນະວະກະ ເພິ່ງໃຫ້ທ່ານອະພິວາດ ຖາມເຖິງເສນາສະນະວ່າ "ຂ້ານ້ອຍໄດ້ເສນາສະນະແຫ່ງໃດ" ຖາມເຖິງເສນາສະນະທີ່ມີພິກຂຸ ຫຼືທີ່ບໍ່ມີພິກຂຸຢູ່ ຖາມເຖິງໂຄຈອນຄາມແລະອະໂຄຈອນຄາມ ຖາມເຖິງຕະກູນທີ່ເປັນເສກຂະສົມມຸດ[១] ຖາມເຖິງວັດຈະກຸດຕິ ຖາມເຖິງນ້ຳດື່ມແລະນ້ຳໃຊ້ ຖາມເຖິງໄມ້ການເທົ້າ ຖາມເຖິງກະຕິກາສົງທີ່ຕັ້ງໄວ້ວ່າ "ຄວນເຂົ້າເວລາໃດ ຄວນອອກເວລາໃດ" ຖ້າວິຫານບໍ່ມີພິກຂຸຢູ່ກໍເພິ່ງເຄາະປະຕູຖ້າຈັກບຶດໜຶ່ງແລ້ວຖອດຫຼີ້ມຂັບໄລ່ບານປະຕູ ຢືນຢູ່ຂ້າງນອກແນມເບິ່ງໃຫ້ທົ່ວ

ຖ້າວິຫານຮົກ ມີຕຽງວາງຊ້ອນຕຽງຫຼືຕັ່ງວາງຊ້ອນຕັ່ງ ເສນາສະນະມີລະອອງຈັບເບື້ອງເທິງ ຖ້າສາມາດ ກໍເພິ່ງຊຳຣະໃຫ້ສະອາດ ເມື່ອຈະຊຳຣະວິຫານໃຫ້ສະອາດ ເພິ່ງຂົນເຄື່ອງປູລາດພື້ນອອກໄປວາງໄວ້ ທີ່ສົມຄວນ ຊຽງຮອງຕຽງ ຟູກ ໝອນ ຜ້າຮອງນັ່ງແລະຜ້າປູນອນ ເພິ່ງຂົນອອກໄປວາງໄວ້ ທີ່ສົມຄວນ ຕຽງ ຕັ່ງ ເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນອອກໄປຕັ້ງໄວ້ ບ່ອນສົມຄວນ ຊຽງຮອງຕຽງ ງົ່ງ ພະນັກອີງເພິ່ງຂົນອອກມາວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນ ອອກມາວາງບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ທາສີເຫຼືອງຫຼືພື້ນທາສີດໍາຂຶ້ນຣາ ເພິ່ງໃຊ້ຜ້າຊຸບນ້ໍາປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ໍາປະພົມແລ້ວເຊັດ ຢ່າໃຫ້ວິຫານຣົກເຮື້ອດ້ວຍຝຸ່ນໄງ່ ເພິ່ງເກັບຂີ້ເຫຍື່ອໄປຖິ້ມ ທີ່ສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊໍາຣະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊໍາຣະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດຊໍາຣະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ້ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຜຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄງ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້

ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິ ຣົກ ເພິ່ງປັດກວາດ ຖ້ານ້ໍາສັນນ້ໍາໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ຊໍາຣະບໍ່ມີນ້ໍາ ເພິ່ງຕັກນ້ໍາໃສ່ໝໍ້ຊໍາຣະ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດຂອງພິກຂຸອາຄັນຕຸກະທັງຫຼາຍ ໂດຍທີ່ພິກຂຸອາຄັນຕຸກະທັງຫຼາຍ ຈະຕ້ອງປະພຶດໃຫ້ຖືກ

## ໔. ອາວາສິກະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ໃນອາວາດ

[໓໕໗] ສະໄໝນັ້ນ ພິກຂຸຜູ້ຢູ່ປະຈໍາໃນອາວາດເຫັນພິກຂຸອາຄັນຕຸກະທັງຫຼາຍແລ້ວບໍ່ ປູອາສະນະ ບໍ່ຕັ້ງນ້ໍາລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດແລະຈີວອນ ບໍ່ ນໍານ້ໍາດື່ມ

ມາຕ້ອນຮັບ ບໍ່ນຳນ້ຳໃຊ້ມາຕ້ອນຮັບ ບໍ່ໄຫວ້ພິກຂຸອາຄັນຕຸກະຜູ້ແກ່ພັນສາກວ່າ ບໍ່ຈັດເສນາສະນະໃຫ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍເຫັນພິກຂຸອາຄັນຕຸກະທັງຫຼາຍແລ້ວບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດແລະຈີວອນ ບໍ່ນຳນ້ຳດື່ມມາຕ້ອນຮັບ ບໍ່ນຳນ້ຳໃຊ້ມາຕ້ອນຮັບ ບໍ່ໄຫວ້ພິກຂຸອາຄັນຕຸກະຜູ້ແກ່ພັນສາກວ່າ ບໍ່ຈັດເສນາສະນະໃຫ້ນໍ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸວ່າເຫຼົ່ານັ້ນ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພິກຂຸທັງຫຼາຍຜູ້ຢູ່ປະຈຳໃນອາວາດເຫັນພິກຂຸອາຄັນຕຸກະທັງຫຼາຍແລ້ວບໍ່ປູອາສະນະ ຯລຯ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໕໙] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍ ໂດຍທີ່ພິກສຜູ້ຢູ່ປະຈຳໃນອາວາດທັງຫຼາຍຈະຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປະຈຳໃນອາວາດເຫັນພິກຂຸອາຄັນຕຸກະຜູ້ແກ່ພັນສາກວ່າ ເພິ່ງປູອາສະນະ ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລຸກຮັບບາດແລະຈີວອນ ນຳນ້ຳດື່ມມາຕ້ອນຮັບ ນຳນ້ຳໃຊ້ມາຕ້ອນຮັບ ຖ້າສາມາດກໍເພິ່ງເຊັດເກີບ ເມື່ອຈະເຊັດເກີບ ໃຊ້ຜ້າແຫ້ງເຊັດກ່ອນແລ້ວໃຊ້ຜ້າປຽກເຊັດພາຍຫຼັງ ເພິ່ງຊັກຜ້າເຊັດເກີບປັ້ນແລ້ວຕາກໄວ້ທີ່ສົມຄວນ

ພິກຂຸຜູ້ຢູ່ປະຈຳໃນອາວາດເພິ່ງອະພິວາດພິກຂຸອາຄັນຕຸກະຜູ້ແກ່ພັນສາກວ່າ ຈັດເສນາສະນະຖວາຍວ່າ "ເສນາສະນະນັ້ນເຖິງແກ່ທ່ານ" ບອກເສນາສະນະທີ່ມີພິກຂຸຢູ່ບໍມີພິກຂຸຢູ່ ບອກໂຄຈອນຄາມແລະອະໂຄຈອນຄາມ ບອກຕະກູນທີ່ເປັນເສກຂະສົມມຸດ ບອກວັດຈະກຸດຕິ ບອກນ້ຳດື່ມນ້ຳໃຊ້ ບອກໄມ້ການເທົ້າ ບອກກະຕິກາສົງທີ່ຕັ້ງໄວ້ວ່າ "ເພິ່ງເຂົ້າເວລານີ້ ເພິ່ງອອກເວລານີ້"

ຖ້າພິກຂຸອາຄັນຕຸກະເປັນພຣະນະວະກະ ພິກຂຸຜູ້ຢູ່ປະຈຳໃນອາວາດເພິ່ງນັ່ງລົງບອກວ່າ "ທ່ານຈົ່ງວາງບາດບ່ອນນັ້ນ ວາງຈີວອນບ່ອນນັ້ນ ນັ່ງເທິງອາສະນະນີ້" ເພິ່ງບອກນ້ຳດື່ມ ເພິ່ງບອກນ້ຳໃຊ້ ບອກຜ້າເຊັດເກີບ ເພິ່ງໃຫ້ພິກຂຸອາຄັນຕຸກະທີ່ເປັນພຣະນະວະກະໃຫ້ອະພິວາດ ບອກເສນາສະນະວ່າ "ເສນາສະນະນັ້ນເຖິງແກ່ທ່ານ" ບອກເສນາສະນະທີ່ມີພິກຂຸຢູ່ບໍມີພິກຂຸຢູ່ ບອກໂຄຈອນຄາມ ແລະອະໂຄຈອນຄາມ ບອກຕະກູນທີ່ເປັນເສກຂະສົມມຸດ ບອກວັດຈະກຸດຕິ

ບອກນ້ຳດື່ມ ບອກນ້ຳໃຊ້ ບອກໄມ້ການເທົ້າ ບອກກະຕິກາທີ່ສົງຕັ້ງໄວ້ວ່າ "ເພິ່ງເຂົ້າເວລານີ້ ເພິ່ງອອກເວລານີ້"

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍ ໂດຍທີ່ພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍຕ້ອງປະພຶດໃຫ້ຖືກ

## ໓. ຄະມິກະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ອອກເດີນທາງ

[໓໖໐] ສະໄໝນັ້ນ ພິກຂຸຜູ້ກຽມຈະເດີນທາງທັງຫຼາຍບໍ່ເກັບເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນ ໄຂປະຕູປ່ອງຢ້ຽມຖິ້ມໄວ້ ບໍ່ບອກມອບໝາຍເສນາສະນະແລ້ວພາກັນຈາກໄປ ເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນເສຍຫາຍ ບໍ່ມີໃຜດູແລຮັກສາເສນາສະນະ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຜູ້ກຽມຈະເດີນທາງທັງຫຼາຍຈຶ່ງບໍ່ເກັບເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນ ໄຂປະຕູປ່ອງຢ້ຽມຖິ້ມໄວ້ ບໍ່ບອກມອບໝາຍເສນາສະນະແລ້ວພາກັນຈາກໄປນໍ ເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນເສຍຫາຍ ບໍ່ມີໃຜດູແລຮັກສາເສນາສະນະ"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພິກຂຸຜູ້ກຽມຈະເດີນທາງທັງຫຼາຍບໍ່ເກັບເຄື່ອງໃຊ້ໄມ້ ຯລຯ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໖໑] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ກຽມຈະເດີນທາງທັງຫຼາຍ ໂດຍທີ່ພິກຂຸຜູ້ກຽມຈະເດີນທາງທັງຫຼາຍຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ພິກຂຸຜູ້ກຽມຈະເດີນທາງ ເພິ່ງເກັບເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມ ບອກມອບໝາຍເສນາສະນະແລ້ວພາກັນຈາກໄປ ຖ້າບໍ່ມີພິກຂຸ ເພິ່ງບອກມອບໝາຍແກ່ສາມະເນນ ຖ້າບໍ່ມີສາມະເນນ ເພິ່ງບອກມອບໝາຍແກ່ຄົນວັດ ຖ້າບໍ່ມີຄົນວັດ ເພິ່ງບອກມອບໝາຍແກ່ອຸປາສົກ ຖ້າບໍ່ມີພິກຂຸສາມະເນນ ຄົນວັດຫຼືອຸປາສົກ ເພິ່ງຍົກຕຽງ ຂຶ້ນວາງໄວ້ເທິງສິລາ ໔ ແຜ່ນ ຍົກຕຽງຊ້ອນຕຽງ ຍົກຕັ່ງຊ້ອນຕັ່ງ ກອງເຄື່ອງເສນາສະນະໄວ້ຂ້າງເທິງແລ້ວເກັບເຄື່ອງ

ໃຊ້ໄມ້ ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມ ແລ້ວຈຶ່ງພາກັນຈາກໄປ ຖ້າວິຫານຝົນຮົ່ວ ຖ້າສາມາດກໍ ຄວນມຸງຫຼືຂົນຂວາຍວ່າ "ຈະມຸງວິຫານໄດ້ແນວໃດ" ຖ້າເຮັດໄດ້ແນວນີ້ ນັ້ນເປັນການດີ ຖ້າເຮັດບໍ່ ໄດ້ເພິ່ງຍົກຕຽງຂຶ້ນ ວາງໄວ້ເທິງສິລາ ໔ ແຜ່ນໃນບ່ອນທີ່ຝົນບໍ່ຮົ່ວ ຍົກຕຽງຊ້ອນຕຽງ ຕັ່ງຊ້ອນ ຕັ່ງ ກອງເຄື່ອງເສນາສະນະໄວ້ຂ້າງເທິງ ເກັບເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມແລ້ວ ຈຶ່ງພາກັນຈາກໄປ ຖ້າວິຫານຝົນຮົ່ວທຸກແຫ່ງ ຖ້າສາມາດກໍເພິ່ງຂົນເຄື່ອງເສນາສະນະເຂົ້າບ້ານຫຼື ຂົນຂວາຍວ່າ "ຈະຂົນເຄື່ອງເສນາສະນະເຂົ້ ໝູ່ບ້ານໄດ້ແນວໃດ" ຖ້າເຮັດໄດ້ແນວນີ້ ນັ້ນເປັນ ການດີ ຖ້າເຮັດບໍ່ໄດ້ ເພິ່ງຍົກຕຽງຂຶ້ນວາງໄວ້ເທິງສິລາ ໔ ແຜ່ນໃນກາງແຈ້ງ ຍົກຕຽງຊ້ອນຕຽງ ຕັ່ງຊ້ອນຕັ່ງ ກອງເຄື່ອງເສນາສະນະໄວ້ຂ້າງເທິງ ເກັບເຄື່ອງໃຊ້ໄມ້ເຄື່ອງໃຊ້ດິນ ແລ້ວໃຊ້ຫຍ້າຫຼື ໃບໄມ້ປົກ ພາກັນຈາກໄປດ້ວຍຄິດວ່າ "ແນວໃດສາ ສ່ວນຂອງຕຽງຕັ່ງຄົງຈະເຫຼືອຢູ່ແດ່"

ພິກຂຸທັງຫຼາຍ ນີ້ ຄື ຂໍ້ວັດປະຕິບັດຂອງພິກຂຸຜູ້ກຽມຈະເດີນທາງທັງຫຼາຍ ໂດຍທີ່ພິກຂຸຜູ້ ກຽມຈະເດີນທາງທັງຫຼາຍຕ້ອງປະພຶດໃຫ້ຖືກ

## ໔. ອະນຸໂມທະນາວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນການອະນຸໂມທະນາ

[໓໖໔] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ກ່າວອະນຸໂມທະນາໃນໂຮງອາຫານ ຄົນທັງຫຼາຍ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດທັງຫຼາຍຈຶ່ງບໍ່ ກ່າວອະນຸໂມທະນານໍ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດຮັບ ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸກ່າວອະນຸໂມທະນາໃນໂຮງ ອາຫານ"

ຕໍ່ມາ ພິກຂຸເຫຼົ່ານັ້ນໄດ້ສົນທະນາກັນດັ່ງນີ້ວ່າ "ໃຜຄວນກ່າວອະນຸໂມທະນາໃນໂຮງ ອາຫານ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບ ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເຖຣະກ່າວອະນຸໂມທະນາໃນ ໂຮງອາຫານ"

ຕໍ່ມາ ສະມາຄົມໜຶ່ງຖວາຍສັງຄະພັດ ທ່ານພຣະສາຣີບຸດເປັນພຣະສັງຄະເຖຣະ ພິກຂຸທັງຫຼາຍຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸຜູ້ເຖຣະກ່າວອະນຸໂມທະນາໃນໂຮງອາຫານ" ຈຶ່ງປ່ອຍໃຫ້ທ່ານພຣະສາຣີບຸດຢູ່ອົງດຽວ ແລ້ວພາກັນຈາກໄປ

ລຳດັບນັ້ນ ທ່ານພຣະສາຣີບຸດກ່າວສຳໂມທະນີຍະກະຖາແກ່ຄົນເຫຼົ່ານັ້ນ ແລ້ວຕາມໄປພາຍຫຼັງພຽງອົງດຽວ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນທ່ານພຣະສາຣີບຸດກຳລັງຍ່າງມາແຕ່ໄກອົງດຽວບັດແລ້ວຮັບສັ່ງຖາມດັ່ງນີ້ວ່າ "ສາຣີບຸດ ອາຫານຄົງມີຫຼາຍແລ້ວບໍ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ອາຫານມີຫຼາຍຈິງ ແຕ່ພິກຂຸທັງຫຼາຍປ່ອຍຂ້າພຣະອົງໄວ້ຜູ້ດຽວແລ້ວພາກັນກັບ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພຣະເຖຣານຸເຖຣະ ໔-໕ ອົງ ຖ້າຢູ່ໃນໂຮງສັນ"

ຕໍ່ມາ ພິກຂຸອົງໜຶ່ງປວດອຸດຈາຣະຢູ່ໃນໂຮງສັນ ກັ້ນອຸດຈາຣະໄວ້ຈົນສະຫຼົບລົ້ມລົງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອມີທຸລະ ເຮົາອະນຸຍາດໃຫ້ບອກລາພິກຂຸ ຜູ້ຢູ່ຖັດໄປແລ້ວໄປໄດ້"

## ໕. ພັດຕັກຄະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນໂຮງສັນ

[໓໖໖] ສະໄໝນັ້ນ ພວກພິກຂຸສັບພັກຄີນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດໄປໂຮງສັນ ຍ່າງແຊງໄປທາງໜ້າພິກຂຸຜູ້ເຖຣະທັງຫຼາຍແດ່ ນັ່ງບຽດພິກຂຸຜູ້ເຖຣະທັງຫຼາຍແດ່ ກີດກັນອາສະນະພິກຂຸນະວະກະທັງຫຼາຍແດ່ ນັ່ງເຕັງສັງຄາຕິໃນບໍລິເວນບ້ານແດ່

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດ ໄປໂຮງສັນ ຍ່າງແຊງໄປທາງໜ້າພິກຂຸຜູ້ເຖຣະທັງຫຼາຍແດ່ ນັ່ງບຽດພິກຂຸຜູ້ເຖຣະທັງຫຼາຍແດ່ ກີດກັນອາສະນະ ພິກຂຸນະວະກະທັງຫຼາຍແດ່ ນັ່ງເຕັງສັງຄາຕິໃນບໍລິເວນບ້ານແດ່ນໍ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດ ໄປໂຮງສັນ ຍ່າງແຊງໄປທາງໜ້າພິກຂຸຜູ້ເຖຣະທັງຫຼາຍແດ່ ນັ່ງບຽດພິກຂຸຜູ້ເຖຣະທັງຫຼາຍແດ່ ກີດກັນອາສະນະ ພິກຂຸນະວະກະທັງຫຼາຍແດ່ ນັ່ງເຕັ່ງສັງຄາຕິໃນບໍລິເວນບ້ານແດ່ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໙໔] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນໂຮງສັນແກ່ພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຈະຕ້ອງປະພຶດໃຫ້ຖືກໃນໂຮງສັນ

ພິກຂຸທັງຫຼາຍ ຖ້າພັດຕຸດເທດບອກເວລາໃນອາຮາມ ພິກຂຸເພິ່ງນຸ່ງອັດມົນທົນ ໓ ໃຫ້ຮຽບຮ້ອຍ ຮັດສາຍແອວ ຫົ່ມຜ້າສັງຄາຕິທີ່ພັບຊ້ອນກັນໄວ້ ໃສ່ລູກດຸມ ລ້າງບາດແລ້ວ ຖືໄປບໍ່ຕ້ອງຟ້າວຟັ່ງເຂົ້າໝູ່ບ້ານ ບໍ່ເພິ່ງຍ່າງແຊງໄປທາງໜ້າພິກຂຸຜູ້ເຖຣະທັງຫຼາຍ ເພິ່ງປົກປິດກາຍໃຫ້ດີໄປໃນບໍລິເວນບ້ານ ເພິ່ງສັງລວມໃຫ້ດີໄປໃນບໍລິເວນບ້ານ ເພິ່ງທອດຈັກຂຸລົງໄປໃນບໍລິເວນບ້ານ ບໍ່ເພິ່ງຈ້ອນຜ້າໄປໃນບໍລິເວນບ້ານ ບໍ່ເພິ່ງຫົວສຽງດັງໄປໃນບໍລິເວນບ້ານ ເພິ່ງເວົ້າສຽງຄ່ອຍໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກກາຍໄປໃນບໍລິເວນບ້ານ ບໍ່ເພິ່ງແກວ່ງແຂນໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກຫົວໄປ ໃນບໍລິເວນບ້ານ ບໍ່ເພິ່ງຍ່າງບິດແອວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງປົກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

ເພິ່ງປົກປິດກາຍໃຫ້ດີນັ່ງໃນບໍລິເວນບ້ານ ເພິ່ງສັງລວມໃຫ້ດີນັ່ງໃນບໍລິເວນບ້ານ ເພິ່ງທອດຈັກຂຸ ລົງນັ່ງໃນບໍລິເວນບ້ານ ບໍ່ເພິ່ງນັ່ງຈ້ອນຜ້າໃນບໍລິເວນບ້ານ ບໍ່ເພິ່ງນັ່ງຫົວສຽງດັງໃນບໍລິເວນບ້ານ ເພິ່ງນັ່ງເວົ້າສຽງຄ່ອຍໃນບໍລິເວນບ້ານ ບໍ່ເພິ່ງນັ່ງໂງກກາຍໃນບໍລິເວນບ້ານ ບໍ່ເພິ່ງນັ່ງແກວ່ງແຂນ ໃນບໍລິເວນບ້ານ ບໍ່ເພິ່ງນັ່ງໂງກຫົວໃນບໍລິເວນບ້ານ ບໍ່ເພິ່ງນັ່ງບິດແອວໃນບໍລິເວນບ້ານ ບໍ່ເພິ່ງນັ່ງປົກຫົວໃນບໍລິເວນບ້ານ ບໍ່ເພິ່ງນັ່ງຮັດເຂົ່າໃນບໍລິເວນບ້ານ ບໍ່ເພິ່ງນັ່ງບຽດພິກຂຸຜູ້ເຖຣະທັງຫຼາຍ ບໍ່ເພິ່ງກີດກັນອາສະນະພິກຂຸນະວະກະທັງຫຼາຍ ບໍ່ເພິ່ງນັ່ງເຕັ່ງສັງຄາຕິ

ເມື່ອເຂົາຖວາຍນ້ຳ ເພິ່ງໃຊ້ມືທັງ ໒ ປະຄອງບາດຮັບນ້ຳ ເພິ່ງຖືບາດລ້າງຢ່າງລະມັດລະວັງ ບໍ່ໃຫ້ຄູດ ຖ້າມີງົ້ງ ເພິ່ງຖອກນ້ຳລົງງົ້ງຢ່າງລະມັດລະວັງ ດ້ວຍຄິດວ່າ "ງົ້ງຢ່າເລີນ້ຳພິກຂຸທັງຫຼາຍທີ່ຢູ່ໃກ້ຢ່າຖືກນ້ຳພົ້ງໃສ່ ສັງຄາຕິຢ່າຖືກນ້ຳ" ຖ້າບໍ່ມີງົ້ງ ເພິ່ງຖອກນ້ຳລົງພື້ນດິນຢ່າງລະມັດລະວັງ ດ້ວຍຄິດວ່າ "ພິກຂຸທັງຫຼາຍທີ່ຢູ່ໃກ້ ຢ່າຖືກນ້ຳພົ້ງໃສ່ ສັງຄາຕິຢ່າຖືກນ້ຳ"

ເມື່ອເຂົາຖວາຍເຂົ້າສຸກ ເພິ່ງໃຊ້ມືທັງ ໔ ປະຄອງບາດຮັບເຂົ້າສຸກ ເວັ້ນທີ່ວ່າງໄວ້ສຳລັບແກງ ຖ້າມີເນີຍໃສ ນ້ຳມັນ ຫຼືແກງອ່ອມ ພິກຂຸຜູ້ເຖຣະເພິ່ງບອກວ່າ "ທ່ານຈົ່ງຈັດຖວາຍພິກຂຸທົ່ວກັນທຸກອົງ" ເພິ່ງຮັບບິນທະບາດໂດຍເຄົາລົບ ເພິ່ງໃຫ້ຄວາມສຳຄັນໃນບາດຂະນະຮັບບິນທະບາດ ເພິ່ງຮັບບິນທະບາດພໍເໝາະກັບແກງ ເພິ່ງຮັບບິນທະບາດສະເໝີຂອບປາກບາດ

ພິກຂຸຜູ້ເຖຣະບໍ່ເພິ່ງສັນກ່ອນຈົນກວ່າເຂົ້າສຸກຈະທົ່ວເຖິງພິກຂຸທຸກອົງ ເພິ່ງສັນບິນທະບາດໂດຍເຄົາລົບ ເພິ່ງໃຫ້ຄວາມສຳຄັນໃນບາດຂະນະສັນບິນທະບາດ ເພິ່ງສັນບິນທະບາດໄປຕາມລຳດັບ ເພິ່ງສັນບິນທະບາດພໍເໝາະກັບແກງ ບໍ່ເພິ່ງສັນບິນທະບາດຫຍຸມລົງແຕ່ຍອດ ບໍ່ເພິ່ງໃຊ້ເຂົ້າສຸກປົກແກງຫຼືກັບເຂົ້າຍ້ອນຍາກໄດ້ຫຼາຍ ບໍ່ເປັນໄຂ້ບໍ່ເພິ່ງອອກປາກຂໍແກງຫຼື ເຂົ້າສຸກມາສັນສ່ວນໂຕ ບໍ່ເພິ່ງມຸ້ງຕຳໜິແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ ບໍ່ເພິ່ງເຮັດຄຳເຂົ້າໃຫ້ໃຫຍ່ເກີນໄປເພິ່ງເຮັດຄຳເຂົ້າໃຫ້ກົມກ່ອມ ບໍ່ເພິ່ງອ້າປາກຖ້າຄຳເຂົ້າທີ່ຍັງບໍ່ເຖິງປາກ ຂະນະກຳລັງສັນ ບໍ່ເພິ່ງລ້ວງມືທັງໝົດເຂົ້າໃນປາກ ຂະນະທີ່ໃນປາກມີຄຳເຂົ້າ ບໍ່ເພິ່ງໂອ້ລົມ ບໍ່ເພິ່ງສັນໂຍນຄຳເຂົ້າບໍ່ເພິ່ງສັນກັດຄຳເຂົ້າ ບໍ່ເພິ່ງສັນເຮັດກະພຸ້ງແກ້ມໃຫ້ປຸ້ງ ບໍ່ເພິ່ງສັນຊິດມື ບໍ່ເພິ່ງສັນໂຮຍເມັດເຂົ້າບໍ່ເພິ່ງສັນແລບລີ້ນ ບໍ່ເພິ່ງສັນເຮັດສຽງດັງຈັ໊ບ ໆ ບໍ່ເພິ່ງສັນເຮັດສຽງດັງຊູ້ດ ໆ ບໍ່ເພິ່ງສັນເລຍມືບໍ່ເພິ່ງສັນຂອດບາດ ບໍ່ເພິ່ງສັນເລຍຮີມຝີປາກ ບໍ່ເພິ່ງຈັບ ພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ

ພິກຂຸຜູ້ເຖຣະບໍ່ເພິ່ງຮັບນ້ຳກ່ອນຈົນກວ່າພິກຂຸທັງໝົດສັນສຳເລັດ ເມື່ອເຂົາຖວາຍນ້ຳເພິ່ງໃຊ້ມືທັງ ໔ ປະຄອງບາດຮັບນ້ຳ ເພິ່ງຖືລ້າງຢ່າງລະມັດລະວັງ ບໍ່ໃຫ້ຄູດ ຖ້າມີງົ໌ງ ເພິ່ງຖອກນ້ຳລົງງົ໌ງຢ່າງລະມັດລະວັງ ດ້ວຍຄິດວ່າ "ງົ໌ງຢ່າເລີນ້ຳ ພິກຂຸທັງຫຼາຍທີ່ຢູ່ໃກ້ ຢ່າຖືກນ້ຳພົ້ງໃສ່ ສັງຄາຕິຢ່າຖືກນ້ຳ" ຖ້າບໍ່ມີງົ໌ງ ເພິ່ງຖອກນ້ຳລົງເທິງພື້ນດິນຢ່າງລະມັດລະວັງ ດ້ວຍຄິດວ່າ "ພິກຂຸທັງຫຼາຍທີ່ຢູ່ໃກ້ ຢ່າຖືກນ້ຳພົ້ງໃສ່ ສັງຄາຕິຢ່າຖືກນ້ຳ" ບໍ່ເພິ່ງຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນບ້ານ

ເມື່ອຈະກັບ ພິກຂຸນະວະກະທັງຫຼາຍເພິ່ງກັບກ່ອນ ພິກຂຸຜູ້ເຖຣະທັງຫຼາຍກັບພາຍຫຼັງເພິ່ງປົກປິດກາຍໃຫ້ດີໄປໃນບໍລິເວນບ້ານ ເພິ່ງສັງລວມໃຫ້ດີໄປໃນບໍລິເວນບ້ານ ເພິ່ງທອດຈັກຂຸລົງໄປ ໃນບໍລິເວນບ້ານ ບໍ່ເພິ່ງຈ້ອນຜ້າໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງຫົວສຽງດັງໄປໃນບໍລິເວນບ້ານ ເພິ່ງເວົ້າສຽງຄ່ອຍ ໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກກາຍໄປໃນບໍລິເວນບ້ານ ບໍ່ເພິ່ງແກວ່ງແຂນໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງບິດແອວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງປົກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

ພິກຂຸທັງຫຼາຍ ນີ້ ຄືຂໍ້ວັດປະຕິບັດໃນໂຮງສັນ ໂດຍທີ່ພິກຂຸທັງຫຼາຍເພິ່ງປະພຶດໃຫ້ຖືກໃນໂຮງສັນ

**ປະຖົມພານະວານ ຈົບ**

# ໓. ປິນດະຈາຣິກະວັດຕກະຖາ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ທ່ຽວບິນທະບາດ

[໓໖໕] ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດທັງຫຼາຍນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດ ທ່ຽວບິນທະບາດ ບໍ່ສັງເກດເຂົ້າເຮືອນແດ່ ບໍ່ສັງເກດອອກໄປແດ່ ຟ້າວຟັ່ງເຂົ້າໄປແດ່ ຟ້າວຟັ່ງອອກໄປແດ່ ຢືນໄກເກີນໄປແດ່ ຢືນໃກ້ເກີນໄປແດ່ ຢືນດົນເກີນໄປແດ່ ກັບໄວເກີນໄປແດ່

ພິກຂຸຜູ້ທ່ຽວບິນທະບາດເປັນຂໍ້ວັດອົງໜຶ່ງ ບໍ່ທັນສັງເກດເຂົ້າໄປເຮືອນ ສຳຄັນວ່າປະຕູເຮືອນ ເຂົ້າໄປສູ່ຫ້ອງໜຶ່ງເຊິ່ງມີຍິງເປືອຍກາຍນອນຫງາຍຢູ່ ພິກຂຸນັ້ນໄດ້ເຫັນຍິງເປືອຍກາຍນອນຫງາຍຢູ່ນັ້ນ ຈຶ່ງຮູ້ວ່າ "ນີ້ບໍ່ແມ່ນປະຕູ ແຕ່ເປັນຫ້ອງນອນ" ຈຶ່ງອອກຈາກຫ້ອງນັ້ນໄປ

ສາມີຂອງຍິງນັ້ນເຫັນນາງເປືອຍກາຍນອນຫງາຍກໍເຂົ້າໃຈວ່າ "ພິກຂຸອົງນີ້ເຮັດບໍ່ດີບໍ່ຮ້າຍພັນລະຍາຂອງເຮົາ" ຈຶ່ງຈັບພິກຂຸນັ້ນທຳຮ້າຍ

ລຳດັບນັ້ນ ຍິງນັ້ນຕື່ນຂຶ້ນຍ້ອນສຽງນັ້ນ ໄດ້ຖາມສາມີດັ່ງນີ້ວ່າ "ອ້າຍ ເຈົ້າທຳຮ້າຍພິກຂຸເຮັດຫຍັງ"

ເຂົາຕອບວ່າ "ພິກຂຸນີ້ເຮັດບໍ່ດີບໍ່ຮ້າຍເຈົ້າ"

ນາງເວົ້າວ່າ "ພິກຂຸນີ້ບໍ່ໄດ້ເຮັດບໍ່ດີບໍ່ຮ້າຍຂ້ອຍ ພິກຂຸນັ້ນບໍ່ໄດ້ເຮັດຫຍັງເລີຍ" ແລ້ວໃຫ້ປ່ອຍພິກຂຸນັ້ນໄປ

ພິກຂຸນັ້ນກັບໄປອາຣາມແລ້ວບອກເລື້ອງນັ້ນໃຫ້ພິກຂຸອື່ນຮູ້

ບັນດາພິກຂຸຜູ້ມັກໜ້ອຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍຜູ້ທ່ຽວບິນທະບາດເປັນຂໍ້ວັດຈຶ່ງນຸ່ງບໍ່ຮຽບຮ້ອຍ ຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດ ທ່ຽວບິນທະບາດນໍ ບໍ່ສັງເກດເຂົ້າເຮືອນແດ່ ບໍ່ສັງເກດອອກໄປແດ່ ຟ້າວຟັ່ງເຂົ້າໄປແດ່ ຟ້າວຟັ່ງອອກໄປແດ່ ຢືນໄກເກີນໄປແດ່ ຢືນໃກ້ເກີນໄປແດ່ ຢືນດົນເກີນໄປແດ່ ກັບໄວເກີນໄປແດ່"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າ ໆລໆ ແມ່ນບໍ?"

ພິກຂຸນັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ໆລໆ ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໖໖] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ທ່ຽວບິນທະບາດ ທັງຫຼາຍ ໂດຍທີ່ພິກຂຸຜູ້ທ່ຽວບິນທະບາດທັງຫຼາຍຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ພິກຂຸຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຄິດວ່າ "ເວລານີ້ ເຮົາຈັກເຂົ້າເຮືອນ" ເພິ່ງນຸ່ງປົກປິດມົນທົນ ໓ ໃຫ້ຮຽບຮ້ອຍ ຮັດສາຍແອວ ຫົ່ມຜ້າສັງຄາຕິທີ່ພັບຊ້ອນກັນໄວ້ ໃສ່ລູກດຸມລ້າງບາດແລ້ວຖືຢ່າງສັງລວມເຂົ້າບ້ານ ໂດຍບໍ່ຟ້າວຟັ່ງ

ເພິ່ງປົກປິດກາຍໃຫ້ດີໄປໃນບໍລິເວນບ້ານ ເພິ່ງສັງລວມໃຫ້ດີໄປໃນບໍລິເວນບ້ານ ເພິ່ງທອດຈັກຂຸ ລົງໄປໃນບໍລິເວນບ້ານ ບໍ່ເພິ່ງຈ້ອນຜ້າໄປໃນບໍລິເວນບ້ານ ບໍ່ເພິ່ງຫົວສຽງດັງໄປໃນບໍລິເວນບ້ານ ເພິ່ງເວົ້າສຽງຄ່ອຍໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກກາຍໄປໃນບໍລິເວນບ້ານບໍ່ເພິ່ງແກວ່ງແຂນ ໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງບິດແອວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງປົກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

ເມື່ອເຂົ້າເຮືອນກໍເພິ່ງສັງເກດວ່າ "ເຮົາຈະເຂົ້າທາງນີ້ ອອກທາງນີ້" ບໍ່ເພິ່ງຟ້າວຟັ່ງເຂົ້າ ບໍ່ເພິ່ງຟ້າວຟັ່ງອອກໄປ ບໍ່ເພິ່ງຢືນໄກເກີນໄປ ບໍ່ເພິ່ງຢືນໃກ້ເກີນໄປ ບໍ່ເພິ່ງຢືນດົນເກີນໄປ ບໍ່ເພິ່ງກັບໄວເກີນໄປ ເພິ່ງຢືນສັງເກດວ່າ "ເຂົາປະສົງຈະຖວາຍອາຫານບໍປະສົງຈະຖວາຍ" ຖ້າເຂົາຢຸດເຮັດວຽກ ຫຼືລຸກຈາກບ່ອນນັ່ງ ຫຼືຈັບຈອງຫຼືຈັບພາຊະນະ ຫຼືຕັ້ງພາຊະນະໄວ້ ເພິ່ງຢືນກໍານົດວ່າ "ເຂົາປະສົງຈະຖວາຍບໍ" ເມື່ອເຂົາຖວາຍອາຫານເພິ່ງໃຊ້ມືຂ້າງຊ້າຍເປີດຜ້າສັງຄາຕິແລ້ວນ້ອມບາດເຂົ້າໄປດ້ວຍມືຂ້າງຂວາ ໃຊ້ມືທັງ ໒ ປະຄອງບາດຮັບອາຫານ ບໍ່ແນມເບິ່ງໜ້າຜູ້ຖວາຍອາຫານເພິ່ງສັງເກດວ່າ "ເຂົາປະສົງຈະຖວາຍແກງບໍປະສົງຈະຖວາຍ" ຖ້າເຂົາຈັບຈອງ ຫຼືຈັບພາຊະນະ ຫຼືຕັ້ງພາຊະນະໄວ້ ເພິ່ງຢືນກໍານົດວ່າ "ເຂົາ ປະສົງຈະຖວາຍບໍ" ເມື່ອເຂົາຖວາຍແລ້ວໃຊ້ຜ້າສັງຄາຕິຄຸມບາດ ບໍ່ຕ້ອງຟ້າວຟັ່ງ ກັບຢ່າງສັງລວມ

ເພິ່ງປົກປິດກາຍໃຫ້ດີໄປໃນບໍລິເວນບ້ານ ເພິ່ງສັງລວມໃຫ້ດີໄປໃນບໍລິເວນບ້ານ ເພິ່ງທອດຈັກຂຸ ລົງໄປໃນບໍລິເວນບ້ານ ບໍ່ເພິ່ງຈ້ອນຜ້າໄປໃນບໍລິເວນບ້ານ ບໍ່ເພິ່ງຫົວສຽງດັງໄປໃນບໍລິເວນບ້ານ ເພິ່ງເວົ້າສຽງຄ່ອຍໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກກາຍໄປໃນບໍລິເວນບ້ານ ບໍ່ເພິ່ງແກວ່ງແຂນ ໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງໂງກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງບິດແອວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງປົກຫົວໄປໃນບໍລິເວນບ້ານ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

ຜູ້ກັບຈາກບິນທະບາດມາເຖິງກ່ອນ ເພິ່ງປູອາສະນະໄວ້ ຕັ້ງນໍ້າລ້າງຕີນ ຕັ່ງເກີບກະເບື້ອງ ເຊັດຕີນ ລ້າງພາຊະນະທີ່ໃສ່ຂອງສັນຕັ້ງໄວ້ ຕັ້ງນໍ້າດື່ມນໍ້າໃຊ້ໄວ້ ຜູ້ກັບຈາກບິນທະບາດເຖິງພາຍຫຼັງ ຖ້າອາຫານທີ່ສັນແລ້ວຍັງເຫຼືອຢູ່ ຖ້າຕ້ອງການກໍເພິ່ງສັນ ບໍ່ຕ້ອງການກໍຖອກຖິ້ມໃນ

ບ່ອນປາສະຈາກຂອງຂຽວສົດ ຫຼືຖອກລົງໃນນ້ຳທີ່ບໍ່ມີໂຕສັດ ເພິ່ງຮື້ຂົນອາສະນະເກັບນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງພາຊະນະທີ່ໃສ່ຂອງສັນ ມ້ຽນໄວ້ ເກັບນ້ຳດື່ມນ້ຳໃຊ້ ກວາດໂຮງສັນ

ພິກຂຸຜູ້ເຫັນໝໍ້ນ້ຳສັນ ໝໍ້ນ້ຳໃຊ້ຫຼືໝໍ້ນ້ຳຊຳຣະເປົ່າວ່າງ ກໍເພິ່ງຈັດຫາໄປຕັ້ງໄວ້ ຖ້າເປັນເລື້ອງສຸດວິໄສກໍກວັກມືຮຽກເພື່ອນມາໃຫ້ຊ່ອຍກັນຈັດ ແຕ່ບໍ່ເພິ່ງອອກຄຳສັ່ງຍ້ອນເລື້ອງນີ້

ພິກຂຸທັງຫຼາຍ ນີ້ ຄື ຂໍ້ວັດປະຕິບັດຂອງພິກຂຸຜູ້ທ່ຽວບິນທະບາດທັງຫຼາຍ ໂດຍທີ່ພິກຂຸຜູ້ທ່ຽວບິນທະບາດທັງຫຼາຍຕ້ອງປະພຶດໃຫ້ຖືກ

## ໗. ອາຣັນຍິກະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ປ່າ

[໓໖໗] ສະໄໝນັ້ນ ພິກຂຸຫຼາຍອົງຢູ່ໃນປ່າ ບໍ່ຕັ້ງນ້ຳດື່ມ ບໍ່ຕັ້ງນ້ຳໃຊ້ ບໍ່ດັງໄຟ ບໍ່ກຽມໄມ້ສີໄຟ ບໍ່ຮູ້ເລື້ອງນັກຂະສັດ ບໍ່ຮູ້ຈັກທິດ ພວກໂຈນພາກັນໄປບ່ອນນັ້ນແລ້ວຖາມພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ມີນ້ຳດື່ມບໍ"

ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ນ້ຳດື່ມບໍ່ມີ"
ໂຈນທັງຫຼາຍຖາມວ່າ "ທ່ານທັງຫຼາຍ ມີນ້ຳໃຊ້ບໍ"
ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ນ້ຳໃຊ້ກໍບໍ່ມີ"
ໂຈນທັງຫຼາຍຖາມວ່າ "ທ່ານທັງຫຼາຍ ມີໄຟບໍ"
ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ໄຟກໍບໍ່ມີ"
ໂຈນທັງຫຼາຍຖາມວ່າ "ທ່ານທັງຫຼາຍ ມີໄມ້ສີໄຟບໍ"
ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ໄມ້ສີໄຟກໍບໍ່ມີ"
ໂຈນທັງຫຼາຍຖາມວ່າ "ທ່ານທັງຫຼາຍ ມື້ນີ້ເປັນເລີກອັນໃດ"
ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ພວກອາດຕະມາບໍ່ຮູ້"
ໂຈນທັງຫຼາຍຖາມວ່າ "ທ່ານທັງຫຼາຍ ນີ້ທິດອັນໃດ"
ພິກຂຸທັງຫຼາຍຕອບວ່າ "ພໍ່ອອກທັງຫຼາຍ ພວກອາດຕະມາບໍ່ຮູ້"

ລຳດັບນັ້ນ ໂຈນເຫຼົ່ານັ້ນຄິດວ່າ "ຄົນພວກນີ້ບໍ່ມີນ້ຳດື່ມ ບໍ່ມີນ້ຳໃຊ້ ບໍ່ມີໄຟ ບໍ່ມີໄມ້ສີໄຟ ບໍ່ຮູ້ນັກຂະສັດ ບໍ່ຮູ້ທິດ ຄົນພວກນີ້ມັກຈະເປັນໂຈນ ຄົນພວກນີ້ບໍ່ແມ່ນພິກຂຸ" ຈຶ່ງທຳຮ້າຍ ແລ້ວຈາກໄປ

ຕໍ່ມາ ພິກຂຸເຫຼົ່ານັ້ນໄດ້ບອກເລື່ອງນັ້ນແກ່ພິກຂຸທັງຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໖໗] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຢູ່ປ່າທັງຫຼາຍ ໂດຍທີ່ພິກຂຸຜູ້ຢູ່ປ່າທັງຫຼາຍຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າ ຄວນລຸກຂຶ້ນແຕ່ເຊົ້າມືດ ໃສ່ຖົງບາດຄ້ອງບ່າ ພາດຈີວອນເທິງໄຫຼ່ ໃສ່ເກີບ ເກັບເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມແລ້ວລົງຈາກ ເສນາສະນະກຳນົດວ່າ “ເວລານີ້ເຮົາຈະເຂົ້າບ້ານ” ຄວນປົດເກີບເຄາະຢ່າງລະມັດລະວັງ ໃສ່ຖົງຄ້ອງບ່າ ນຸ່ງປົກປິດມົນທົນ ໓ ໃຫ້ຮຽບຮ້ອຍ ຮັດສາຍແອວ ຫົ່ມຜ້າສັງຄາຕິທີ່ພັບຊ້ອນກັນໄວ້ ໃສ່ລູກດຸມ ລ້າງບາດແລ້ວຖືເຂົ້າບ້ານຢ່າງສັງລວມ ໂດຍບໍ່ຟ້າວຟັ່ງ ເພິ່ງປົກປິດກາຍດ້ວຍດີໄປໃນບໍລິເວນບ້ານເພິ່ງສັງລວມດ້ວຍດີໄປໃນບໍລິເວນບ້ານ ຯລຯ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານ

ເມື່ອເຂົ້າບ້ານກໍເພິ່ງກຳນົດວ່າ “ເຮົາຈະເຂົ້າທາງນີ້ ອອກທາງນີ້” ບໍ່ເພິ່ງຟ້າວຟັ່ງເຂົ້າໄປບໍ່ເພິ່ງຟ້າວຟັ່ງອອກໄປ ບໍ່ເພິ່ງຢືນໄກເກີນໄປ ບໍ່ເພິ່ງຢືນໃກ້ເກີນໄປ ບໍ່ເພິ່ງຢືນດົນເກີນໄປ ບໍ່ເພິ່ງກັບໄວເກີນໄປ ເພິ່ງຢືນສັງເກດວ່າ “ເຂົາປະສົງຈະຖວາຍອາຫານຫຼືບໍ່ປະສົງຈະຖວາຍ” ຖ້າເຂົາຢຸດ ເຮັດວຽກ ຫຼືລຸກຈາກບ່ອນນັ່ງ ຫຼືຈັບຈອງຫຼືພາຊະນະ ຫຼືຕັ້ງພາຊະນະໄວ້ ເພິ່ງຢືນກຳນົດວ່າ “ເຂົາປະສົງຈະຖວາຍບໍ” ເມື່ອເຂົາຖວາຍອາຫານ ເພິ່ງໃຊ້ມືຂ້າງຊ້າຍແຫວກຜ້າສັງຄາຕິແລ້ວນ້ອມບາດເຂົ້າໄປດ້ວຍມືຂ້າງຂວາ ໃຊ້ມືທັງ ໒ ປະຄອງບາດຮັບອາຫານ ບໍ່ແນມໜ້າຜູ້ຖວາຍອາຫານ ເພິ່ງສັງເກດວ່າ “ເຂົາປະສົງຈະຖວາຍແກງຫຼືບໍ່ປະສົງຈະຖວາຍ” ຖ້າເຂົາຈັບຈອງ ຫຼືຈັບພາຊະນະ ຫຼື ຕັ້ງພາຊະນະໄວ້ ເພິ່ງຢືນກຳນົດວ່າ “ເຂົາປະສົງຈະຖວາຍບໍ” ເມື່ອເຂົາຖວາຍແລ້ວ ໃຊ້ຜ້າສັງຄາຕິຄຸມບາດແລ້ວ ບໍ່ຕ້ອງຟ້າວຟັ່ງ ກັບຢ່າງສັງລວມ

ເພິ່ງປົກປິດກາຍດ້ວຍດີໄປໃນບໍລິເວນບ້ານ ຯລຯ ບໍ່ເພິ່ງຍ່າງແຍ່ງແຍ້ໄປໃນບໍລິເວນບ້ານອອກຈາກໝູ່ບ້ານ ແລ້ວໃສ່ຖົງບາດ ຄ້ອງບ່າ ພັບຈີວອນວາງໄວ້ເທິງຫົວໃສ່ເກີບຍ່າງໄປ

ພິກຂຸຜູ້ຢູ່ປ່າ ເພິ່ງຕັ້ງນ້ຳດື່ມ ເພິ່ງຕັ້ງນ້ຳໃຊ້ ເພິ່ງດັງໄຟ ເພິ່ງກຽມໄມ້ສີໄຟໄວ້ ເພິ່ງກຽມໄມ້ການເທົ້າ ເພິ່ງຮຽນຮູ້ເລື້ອງນັກຂະສັດທຸກປະເພດຫຼືຮຽນບາງສ່ວນ ເພິ່ງເປັນຜູ້ສະຫຼາດໃນທິດ

ພິກຂຸທັງຫຼາຍ ນີ້ຄື ຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ປ່າທັງຫຼາຍ ໂດຍທີ່ພິກຂຸຜູ້ຢູ່ປ່າທັງຫຼາຍຕ້ອງປະພຶດໃຫ້ຖືກ

# ໗. ເສນາສະນະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນເສນາສະນະ

[໓໕໙] ສະໄໝນັ້ນ ພິກຂຸຫຼາຍອົງເຮັດຈີວອນຢູ່ທີ່ກາງແຈ້ງ ພວກພິກຂຸສັບພັກຄີເຄາະ ເສນາສະນະເທິງທີ່ສູງເໜືອລົມ ຝຸ່ນທຸລີຟຸ້ງປົກພິກຂຸທັງຫຼາຍ ບັນດາພິກຂຸຜູ້ມັກໜ້ອຍຕຳໜິ ປະນາມໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງເຄາະເສນາສະນະເທິງທີ່ສູງເໜືອລົມນໍ ພິກຂຸທັງຫຼາຍຖືກຝຸ່ນທຸລີຟຸ້ງປົກ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີເຄາະເສນາສະນະເທິງທີ່ສູງເໜືອລົມ ຝຸ່ນທຸລີຟຸ້ງປົກພິກຂຸທັງຫຼາຍ ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ໆລໆ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໖໐] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດເສນາສະນະຂໍ້ວັດປະຕິບັດແກ່ພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຕ້ອງປະພຶດໃຫ້ຖືກ

ພິກຂຸທັງຫຼາຍ ຕົນຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດເພິ່ງຊຳຣະໃຫ້ສະອາດ ເມື່ອຈະຊຳຣະວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນວາງໄວ້ບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນອອກໄປວາງໄວ້ບ່ອນສົມຄວນ

ຕຽງ ຕັ່ງ ເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນອອກໄປຕັ້ງໄວ້ບ່ອນສົມຄວນ ຂາຮອງຕຽງ ງົ້ງ ພະນັກອີງ ເພິ່ງຂົນອອກມາວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ເພິ່ງໃຊ້ຜ້າຊຸບນ້ຳປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມແລ້ວເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນໄງ່ ເພິ່ງເກັບຂີ້ເຫຍື່ອໄປຖິ້ມ ບ່ອນສົມຄວນ ບໍ່ເພິ່ງເຄາະເສນາສະນະໃກ້ພິກຂຸ ໃກ້ວິຫານ ໃກ້ນ້ຳດື່ມ ນ້ຳໃຊ້ ເທິງເນີນເໜືອລົມ ເພິ່ງເຄາະເສນາສະນະໃຕ້ລົມ

ພົມປູພື້ນ ເພິ່ງຕາກແດດ ຊຳຮະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດ ເຊັດຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຮະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ຊຳຮະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຫຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄງ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້

ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ

ເພິ່ງຈັດກຽມໄວ້ ຖ້າໝໍ້ຊຳຮະບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ຊຳຮະ

ຖ້າຢູ່ໃນວິຫານຫຼັງດຽວກັບພິກຂຸຜູ້ແກ່ກວ່າ ຍັງບໍ່ສອບຖາມກໍບໍ່ຄວນໃຫ້ອຸດເທດ ປະຣິປຸດສາ ການສາທະຍາຍ ສະແດງທຳ ບໍ່ເພິ່ງໃຕ້ ຫຼື ດັບປະທີບ ບໍ່ເພິ່ງເປີດປ່ອງຢ້ຽມ

ບໍ່ເພິ່ງອັດປ່ອງຢ້ຽມ ຖ້າຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ແກ່ກວ່າ ເພິ່ງຍ່າງຕາມຫຼັງທ່ານ ແລະບໍ່ກະທົບທ່ານດ້ວຍຊາຍສັງຄາຕິ

ພິກຂຸທັງຫຼາຍ ນີ້ຄື ຂໍ້ວັດປະຕິບັດໃນເສນາສະນະຂອງພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຕ້ອງປະພຶດໃຫ້ຖືກ

# ໗. ຊັນຕາຄະຣະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນເຮືອນໄຟ

[໓໗໑] ສະໄໝນັ້ນ ພວກພິກຂຸສັບພັກຄີຖືກພິກຂຸຜູ້ເຖຣະທັງຫຼາຍຫ້າມໃນເຮືອນໄຟ ບໍ່ເກງໃຈໃສ່ຟືນຫຼາຍ ດັງໄຟ ອັດປະຕູແລ້ວນັ່ງທີ່ປະຕູ ຝ່າຍພິກຂຸຜູ້ເຖຣະຖືກຄວາມຮ້ອນແຜດເຜົາ ຈະອອກກໍອອກບໍ່ໄດ້ ຈຶ່ງເປັນລົມສະຫຼົບລົ້ມລົງ

ບັນດາພິກຂຸຜູ້ມັກໜ້ອຍ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຖືກພິກຂຸຜູ້ເຖຣະທັງຫຼາຍຫ້າມໃນເຮືອນໄຟ ຈຶ່ງບໍ່ເກງໃຈໃສ່ຟືນຫຼາຍ ດັງໄຟ ອັດປະຕູແລ້ວນັ່ງທີ່ປະຕູນໍ ຝ່າຍພິກຂຸຜູ້ເຖຣະຖືກຄວາມຮ້ອນແຜດເຜົາ ຈະອອກກໍອອກບໍ່ໄດ້ ຈຶ່ງເປັນລົມສະຫຼົບລົ້ມລົງ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີ ຖືກພິກຂຸຜູ້ເຖຣະທັງຫຼາຍຫ້າມໃນເຮືອນໄຟ ບໍ່ເກງໃຈ ໃສ່ຟືນຫຼາຍດັງໄຟ ອັດປະຕູແລ້ວນັ່ງເຝົ້າທີ່ປະຕູ ພິກຂຸຖືກຄວາມຮ້ອນແຜດເຜົາອອກປະຕູບໍ່ໄດ້ຈຶ່ງເປັນ ລົມສະຫຼົບລົ້ມລົງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຖືກພິກຂຸຜູ້ເຖຣະຫ້າມໃນເຮືອນໄຟ ຈະໃສ່ຟືນຫຼາຍດັງໄຟໂດຍບໍ່ເກງໃຈບໍ່ໄດ້ ອົງໃດໃສ່ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸບໍ່ເພິ່ງອັດປະຕູແລ້ວນັ່ງທີ່ປະຕູ ອົງໃດນັ່ງຕ້ອງອາບັດທຸກກົດ"

[໓໗໔] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນເຮືອນໄຟແກ່ພິກຂຸທັງຫຼາຍ ໂດຍທີ່ພວກທ່ານຕ້ອງປະພຶດໃຫ້ຖືກຕ້ອງໃນເຮືອນໄຟ

ພິກຂຸທັງຫຼາຍ ພິກຂຸຜູ້ໄປເຮືອນໄຟກ່ອນ ຖ້າມີຂີ້ເຖົ່າຫຼາຍເພິ່ງນຳໄປຖອກຖິ້ມ ຖ້າເຮືອນໄຟຮົກ ເພິ່ງກວາດ ຖ້າຊານພາຍນອກຮົກກໍເພິ່ງກວາດ ຖ້າບໍລິເວນຮົກກໍເພິ່ງກວາດ ຖ້າຊຸ້ມປະຕູຮົກກໍເພິ່ງກວາດ ຖ້າສາລາເຮືອນໄຟຮົກ ກໍເພິ່ງກວາດ

ເພິ່ງບົດແປ້ງຜົງໄວ້ ເພິ່ງແຊ່ດິນ ເພິ່ງຕັກນ້ຳໃສ່ໃນຮາງໄວ້ ເມື່ອຈະເຂົ້າໄປເຮືອນໄຟເພິ່ງເອົາດິນໝຽວທາໜ້າ ປິດໜ້າແລະຫຼັງຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພິກຂຸຜູ້ເຖຣະທັງຫຼາຍບໍ່ກົດ

ກັນອາສະນະພິກຂຸຜູ້ນະວະກະທັງຫຼາຍ ຖ້າສາມາດກໍເພິ່ງບໍຣິກຳພິກຂຸຜູ້ເຖຣະທັງຫຼາຍໃນເຮືອນໄຟ ເມື່ອອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງຈຶ່ງອອກຈາກ ເຮືອນໄຟ

ຖ້າສາມາດ ເພິ່ງເຮັດບໍຣິກຳ ພິກຂຸຜູ້ເຖຣະທັງຫຼາຍໃນນ້ຳ ບໍ່ເພິ່ງອາບນ້ຳທາງໜ້າພິກຂຸຜູ້ເຖຣະທັງຫຼາຍ ແມ່ນເໜືອນ້ຳກໍບໍ່ເພິ່ງອາບ ເມື່ອອາບນ້ຳສຳເລັດກຳລັງຈະຂຶ້ນເພິ່ງໃຫ້ທາງພິກຂຸທັງຫຼາຍຜູ້ຈະລົງອາບ ພິກຂຸຜູ້ອອກຈາກເຮືອນໄຟພາຍຫຼັງ ຖ້າເຮືອນໄຟເປິເປື້ອນເພິ່ງລ້າງໃຫ້ສະອາດ ລ້າງຮາງແຊ່ດິນ ເກັບຕັ່ງສຳລັບເຮືອນໄຟ ມອດໄຟ ອັດປະຕູແລ້ວຈຶ່ງພາກັນຈາກໄປ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນເຮືອນໄຟສຳລັບພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຕ້ອງປະພຶດໃຫ້ຖືກໃນເຮືອນໄຟ

## ໑໐. ວັດຈະກຸຕິວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນວັດຈະກຸດຕິ

[໓໗໓] ສະໄໝນັ້ນ ພິກຂຸອົງໜຶ່ງມີກຳເນີດຈາກວັນນະພາມ ຖ່າຍອຸດຈາຣະ ບໍ່ຍອມຊຳຮະ ຍ້ອນລັງກຽດວ່າ "ໃຜຈະຈັບຕ້ອງຂອງສົກກະປົກມີກິ່ນເໝັນນີ້ໄດ້ນໍ" ໃນທະວານໜັກຂອງພິກຂຸນັ້ນຈຶ່ງມີໜອນຢູ່ ພິກຂຸນັ້ນຈຶ່ງບອກໃຫ້ພິກຂຸທັງຫຼາຍຮູ້

ພິກຂຸທັງຫຼາຍຖາມວ່າ "ທ່ານ ທ່ານຖ່າຍອຸດຈາຣະແລ້ວບໍ່ລ້າງບໍ"

ພິກຂຸນັ້ນຕອບວ່າ "ແມ່ນ ຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຖ່າຍອຸດຈາຣະ ແລ້ວບໍ່ລ້າງນໍ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າທ່ານຖ່າຍອຸດຈາຣະແລ້ວ ບໍ່ລ້າງ ແມ່ນບໍ?"

ພິກຂຸນັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຖ່າຍອຸດຈາຣະແລ້ວ ເມື່ອມີນ້ຳຢູ່ຈະບໍ່ລ້າງບໍ່ໄດ້ ອົງໃດບໍ່ລ້າງ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຖ່າຍອຸດຈາຣະໃນວັດຈະກຸດຕິຕາມລຳດັບພັນສາ ພິກຂຸຜູ້ນະວະກະ ທັງຫຼາຍມາຮອດກ່ອນປວດອຸດຈາຣະກໍຕ້ອງຖ້າ ກັ້ນອຸດຈາຣະຈົນເປັນລົມສະຫຼົບລົ້ມລົງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຖ່າຍອຸດຈາຣະໃນວັດຈະກຸດຕິຕາມລຳດັບພັນສາ ພິກຂຸຜູ້ນະວະກະທັງຫຼາຍມາຮອດກ່ອນປວດອຸດຈາຣະ ກໍຕ້ອງຖ້າ ກັ້ນອຸດຈາຣະຈົນເປັນລົມສະຫຼົບລົ້ມລົງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ" ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງກະທຳການຖ່າຍອຸດຈາຣະຕາມລຳດັບພັນສາ ອົງໃດກະທຳ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖ່າຍອຸດຈາຣະຕາມລຳດັບຜູ້ມາເຖິງ"

ສະໄໝນັ້ນ ພວກພິກຂຸສັບພັກຄີເຂົ້າວັດຈະກຸດຕິໄວເກີນໄປແດ່ ຈ້ອນຜ້າເຂົ້າໄປແດ່ ທັນໃຈແຮງຂະນະຖ່າຍອຸດຈາຣະແດ່ ຫຍໍ້າໄມ້ຖູແຂ້ວພ້ອມຖ່າຍອຸດຈາຣະແດ່ ຖ່າຍອຸດຈາຣະນອກຮາງອຸດຈາຣະແດ່ ຖ່າຍປັດສາວະນອກຮາງປັດສາວະແດ່ ບ້ວນນໍ້າລາຍລົງໃນຮາງປັດສາວະແດ່ ຊຳຣະດ້ວຍໄມ້ແຂງແດ່ ຖິ້ມໄມ້ຊຳຣະໃນປ່ອງຖ່າຍອຸດຈາຣະແດ່ ອອກມາໄວເກີນໄປແດ່ ຈ້ອນຜ້າອອກມາແດ່ ຊຳຣະມີສຽງດັງໂຈ໊ກໂຈ໊ກແດ່ ເຫຼືອນໍ້າໄວ້ໃນກະບອຍຊຳຣະແດ່

ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຈຶ່ງເຂົ້າວັດຈະກຸດຕິໄວເກີນໄປແດ່ ຈ້ອນຜ້າເຂົ້າໄປແດ່ ທັນໃຈແຮງຂະນະຖ່າຍອຸດຈາຣະແດ່ ຫຍໍ້າໄມ້ຖູແຂ້ວພ້ອມຖ່າຍອຸດຈາຣະແດ່ ຖ່າຍອຸດຈາຣະນອກຮາງອຸດຈາຣະແດ່ ຖ່າຍປັດສາວະນອກຮາງປັດສາວະແດ່ ບ້ວນນໍ້າລາຍລົງໃນຮາງປັດສາວະແດ່ ຊຳຣະດ້ວຍໄມ້ແຂງແດ່ ຖິ້ມໄມ້ຊຳຣະໃນປ່ອງຖ່າຍອຸດຈາຣະແດ່ ອອກມາໄວເກີນໄປແດ່ ຈ້ອນຜ້າອອກມາແດ່ ຊຳຣະມີສຽງດັງໂຈ໊ກໂຈ໊ກແດ່ ເຫຼືອນໍ້າໄວ້ໃນກະບອຍຊຳຣະແດ່ນໍ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ຯລຯ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍ ວ່າ

[໓໗໔] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນວັດຈະກຸດຕິແກ່ພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຕ້ອງປະພຶດໃຫ້ຖືກໃນວັດຈະກຸດຕິ

ພິກຂຸທັງຫຼາຍ ພິກຂຸຜູ້ໄປວັດຈະກຸດຕິເພິ່ງຢືນອະແຮມຂ້າງນອກ ແມ່ນພິກຂຸຜູ້ນັ່ງຢູ່ຂ້າງໃນກໍ ຄວນອະແຮມຮັບ ເພິ່ງພາດຈີວອນໄວ້ເທິງຮາວຈີວອນຫຼືເທິງສາຍຫຼຽກແລ້ວບໍ່ຕ້ອງຟ້າວເຂົ້າວັດຈະກຸດຕິ ບໍ່ຕ້ອງເຂົ້າໄປໄວເກີນໄປ ບໍ່ເພິ່ງຈ້ອນຜ້າເຂົ້າໄປ ເພິ່ງຢືນເທິງຊຽງຖ່າຍອຸດຈາຣະແລ້ວຄ່ອຍຈ້ອນຜ້າ ບໍ່ເພິ່ງທັນໃຈດັງພ້ອມຖ່າຍອຸດຈາຣະ ບໍ່ເພິ່ງຫຍໍ້າໄມ້ຖູແຂ້ວພ້ອມຖ່າຍອຸດຈາຣະ ບໍ່ເພິ່ງຖ່າຍອຸດຈາຣະນອກຮາງອຸດຈາຣະ ບໍ່ເພິ່ງຖ່າຍປັດສາວະນອກຮາງປັດສາວະ ບໍ່ເພິ່ງບ້ວນນ້ຳລາຍ ລົງໃນຮາງປັດສາວະ ບໍ່ເພິ່ງຊຳຣະດ້ວຍໄມ້ເນື້ອແຂງ ບໍ່ເພິ່ງຖິ້ມໄມ້ຊຳຣະລົງໃນປ່ອງຖ່າຍອຸດຈາຣະ ເພິ່ງຢືນເທິງຊຽງຖ່າຍແລ້ວຈຶ່ງປົດຜ້າ ບໍ່ເພິ່ງອອກມາໄວ ບໍ່ເພິ່ງຈ້ອນຜ້າອອກມາ ເພິ່ງຢືນເທິງຊຽງຊຳຣະແລ້ວຈຶ່ງຈ້ອນຜ້າ ບໍ່ເພິ່ງຊຳຣະໃຫ້ມີສຽງດັງໂຈ໊ກໂຈ໊ກ ບໍ່ເພິ່ງເຫຼືອນ້ຳໄວ້ໃນກະບວຍຊຳຣະ ເພິ່ງຢືນເທິງຊຽງຊຳຣະແລ້ວປົດຜ້າ

ຖ້າພິກຂຸຖ່າຍໄວ້ເລີເທີວັດຈະກຸດຕິ ຕ້ອງລ້າງໃຫ້ສະອາດ ຖ້າກະຕ່າໃສ່ໄມ້ຊຳຣະເຕັມເພິ່ງນຳໄປຖິ້ມ ຖ້າວັດຈະກຸດຕິສົກກະປົກເພິ່ງກວາດ ຖ້າຊານພາຍນອກຮົກກໍເພິ່ງກວາດ ບໍລິເວນຮົກກໍເພິ່ງກວາດ ຊຸ້ມປະຕູຮົກກໍເພິ່ງກວາດ ຖ້າບໍ່ມີນ້ຳໃນໝໍ້ຊຳຣະ ເພິ່ງຕັກນ້ຳມາໄວ້

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນວັດຈະກຸດຕິສຳລັບພິກຂຸທັງຫຼາຍ ໂດຍທີ່ພິກຂຸທັງຫຼາຍຕ້ອງປະພຶດຖືກຕ້ອງໃນວັດຈະກຸດຕິ

## ໑໑. ອຸປັດຊາຍະວັດຕະກະຖາ[๑]

## ວ່າດ້ວຍຂໍ້ວັດປະຕິບັດໃນພຣະອຸປັດຊາ

[໓໗໕] ສະໄໝນັ້ນ ສັດທິວິຫາຣິກທັງຫຼາຍບໍ່ປະພຶດຖືກຕ້ອງໃນພຣະອຸປັດຊາ ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງສັດທິວິຫາຣິກທັງຫຼາຍບໍ່ປະພຶດຖືກຕ້ອງໃນພຣະອຸປັດຊາທັງຫຼາຍນໍ”

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ສັດທິວິຫາຣິກທັງຫຼາຍບໍ່ປະພຶດຖືກຕ້ອງໃນອຸປັດຊາທັງຫຼາຍ ແມ່ນບໍ?”

ພິກຂຸທັງຫຼາຍທູນຮັບວ່າ “ເປັນຄວາມຈິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ພິກຂຸທັງຫຼາຍ ເປັນຫຍັງສັດທິວິຫາຣິກທັງຫຼາຍ ຈຶ່ງບໍ່ປະພຶດຖືກຕ້ອງຕໍ່ອຸປັດຊາທັງຫຼາຍນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໗໖] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນອຸປັດຊາທັງຫຼາຍແກ່ສັດທິວິຫາຣິກທັງຫຼາຍ ໂດຍທີ່ສັດທິວິຫາຣິກທັງຫຼາຍຕ້ອງປະພຶດໃຫ້ຖືກຕ້ອງໃນອຸປັດຊາທັງຫຼາຍ

ພິກຂຸທັງຫຼາຍ ສັດທິວິຫາຣິກເພິ່ງປະພຶດໃຫ້ຖືກຕ້ອງໃນອຸປັດຊາ ວິທີປະພຶດໂດຍຖືກຕ້ອງໃນອຸປັດຊານັ້ນມີດັ່ງນີ້

ສັດທິວິຫາຣິກເພິ່ງລຸກຂຶ້ນແຕ່ເຊົ້າມືດ ປົດເກີບ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອຸປັດຊາສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບພາຊະນະມາ ຖືຢ່າງລະມັດລະວັງ ຢ່າໃຫ້ຄູດ໌ ລ້າງແລ້ວຮັກສາໄວ້ ເມື່ອ ອຸປັດຊາລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອຸປັດຊາຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍສາຍແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນ້ຳ

ຖ້າອຸປັດຊາຫວັງຈະໃຫ້ເປັນປັດສາສະມະນະ ເພິ່ງນຸ່ງໃຫ້ຮຽບຮ້ອຍປົກປິດໄດ້ມົນທົ່ນ ມີຮັດສາຍແອວ ຫົ່ມສັງຄາຕິທີ່ພັບຊ້ອນກັນ ໃສ່ລູກດຸມ ລ້າງບາດຖືໄປ ເປັນປັດສາສະມະນະ ຂອງອຸປັດຊາ ເພິ່ງຍ່າງບໍ່ໃຫ້ຫ່າງຫຼາຍ ບໍ່ໃຫ້ຊິດຫຼາຍ ເພິ່ງຮັບບາດທີ່ມີຂອງບັນຈຸຢູ່

ເມື່ອອຸປັດຊາກຳລັງກ່າວ ບໍ່ເພິ່ງກ່າວສອດຂຶ້ນໃນລະຫວ່າງ ອຸປັດຊາກ່າວຄຳເວົ້າ ໃກ້ຕໍ່ອາບັດ ເພິ່ງຫ້າມໄວ້

ເມື່ອອຸປັດຊາຈະກັບ ເພິ່ງມາກ່ອນແລ້ວປູອາສະນະໄວ້ ເພິ່ງກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ ເພິ່ງພັບຈີວອນ ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນິ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນສາຍແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອຸປັດຊາຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອອຸປັດຊາສັນສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຜຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ເມື່ອອຸປັດຊາລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ເພິ່ງມ້ຽນນ້ຳລ້າງຕີນ ຕັ່ງເກີບກະເບື້ອງເຊັດຕີນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອຸປັດຊາຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳເຢັນ ເພິ່ງຈັດນ້ຳເຢັນຖວາຍ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າອຸປັດຊາຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດແປ້ງຜົງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນໄຟ ຍ່າງຕາມຫຼັງອຸປັດຊາໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວຮັບຈີວອນມາວາງບ່ອນສົມຄວນ ເພິ່ງຖວາຍແປ້ງຜົງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພິກຂຸເຖຣະທັງຫຼາຍ ບໍ່ເພິ່ງກີດກັນອາສະນະພຣະນະວະກະທັງຫຼາຍ ເພິ່ງເຮັດບໍຣິກຳ[๑]ແກ່ອຸປັດຊາໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງເຮັດບໍຣິກຳ[๒]ແກ່ອຸປັດຊາແມ່ນໃນນ້ຳ ຕົນອາບນ້ຳສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວຖ່າຍຜ້າ ເພິ່ງເຊັດນ້ຳຈາກໂຕອຸປັດຊາ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນ ມາຖວາຍອຸປັດຊາ

ຖ້າອຸປັດຊາຕ້ອງການຈະໃຫ້ຮຽນ ເພິ່ງຮຽນ

ຖ້າອຸປັດຊາຕ້ອງການຈະໃຫ້ສອບຖາມ ເພິ່ງສອບຖາມ

ອຸປັດຊາຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດເພິ່ງຊຳຣະໃຫ້ສະອາດ ເມື່ອຈະຊຳຣະວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນວາງໄວ້ບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ບ່ອນສົມຄວນ

ຕຽງ ຕັ່ງ ສັດທິວິຫາຣິກເພິ່ງຍົກຍ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານ ປະຕູແລະຂອບປະຕູ ຂົນອອກໄປຕັ້ງໄວ້ ບ່ອນສົມຄວນ ຊຽງຮອງຕຽງ ງັ່ງ ພະນັກອີງ ເພິ່ງຂົນອອກມາວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງ ເພິ່ງເຊັດ

ຖ້າຝາທີ່ທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ເພິ່ງໃຊ້ຜ້າຊຸບນ້ຳປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມແລ້ວເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນໄຄ່ ເພິ່ງເກັບຂີ້ເຫຍື່ອໄປຖິ້ມ ທີ່ສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊຳຮະ ຕີບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດ ເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຮະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກ ແດດ ຊຳຮະ ຕີບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງ ໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຟຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄຄ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້

ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ຊຳຮະບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ຊຳຮະ

ຖ້າອຸປັດຊາເກີດຄວາມບໍ່ຍິນດີ ສັດທິວິຫາຣິກເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼືເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາເກີດຄວາມລຳຄານ ສັດທິວິຫາຣິກເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼືເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາເກີດຄວາມເຫັນຜິດ ສັດທິວິຫາຣິກເພິ່ງໃຫ້ສະຫຼະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍໃຫ້ສະຫຼະສາ ຫຼືເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາຕ້ອງອາບັດໜັກ[១] ຄວນແກ່ປະຣິວາດ ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອຸປັດຊາ"

ຖ້າອຸປັດຊາຄວນແກ່ການດຶງເຂົ້າຫາອາບັດເດີມ ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອຸປັດຊາເຂົ້າຫາອາບັດເດີມ"

ຖ້າອຸປັດຊາຄວນແກ່ມານັດ[໒] ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ອຸປັດຊາ"

ຖ້າອຸປັດຊາຄວນແກ່ອັບພານ[໓] ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານອຸປັດຊາ"

ຖ້າສົງຕ້ອງການຈະເຮັດກຳ[១] ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳ[໒]ແກ່ອຸປັດຊາ ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອຸປັດຊາຫຼືເພິ່ງປ່ຽນໄປເປັນໂທດເບົາ" ຫຼືວ່າອຸປັດຊາໄດ້ຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແລ້ວ ສັດທິວິຫາຣິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອຸປັດຊາເພິ່ງກັບປະພຶດຖືກ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ"

ຖ້າຈີວອນຂອງອຸປັດຊາຈະຕ້ອງຊັກ ສັດທິວິຫາຣິກເພິ່ງຊັກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງອຸປັດຊາ"

ຖ້າຈີວອນຂອງອຸປັດຊາຈະຕ້ອງຕັດຫຍິບ ສັດທິວິຫາຣິກເພິ່ງຕັດຫຍິບ ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕັດຫຍິບຈີວອນຂອງອຸປັດຊາ"

ຖ້ານ້ຳຍ້ອມຂອງອຸປັດຊາຈະຕ້ອງຕົ້ມ ສັດທິວິຫາຣິກເພິ່ງຕົ້ມ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນ້ຳຍ້ອມຂອງອຸປັດຊາ"

ຖ້າຈີວອນຂອງອຸປັດຊາຈະຕ້ອງຍ້ອມ ສັດທິວິຫາຣິກເພິ່ງຍ້ອມ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງອຸປັດຊາ" ເມື່ອຈະຍ້ອມຈີວອນເພິ່ງຍ້ອມປີ້ນກັບໄປກັບມາດີ ໆ ເມື່ອຢາດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງພາກັນຈາກໄປ

ສັດທິວິຫາຣິກບໍ່ບອກອຸປັດຊາ ບໍ່ເພິ່ງໃຫ້ບາດແກ່ພິກຂຸລາງອົງ ບໍ່ເພິ່ງຮັບບາດຂອງພິກຂຸລາງອົງ ບໍ່ເພິ່ງໃຫ້ຈີວອນແກ່ພິກຂຸລາງອົງ ບໍ່ເພິ່ງຮັບຈີວອນຂອງພິກຂຸລາງອົງ ບໍ່ເພິ່ງໃຫ້ບໍຣິຂານແກ່ພິກຂຸລາງອົງ ບໍ່ເພິ່ງຮັບບໍຣິຂານຂອງພິກຂຸລາງອົງ ບໍ່ເພິ່ງແຖຜົມໃຫ້ພິກຂຸລາງອົງ ບໍ່ເພິ່ງໃຫ້ພິກຂຸລາງອົງແຖຜົມໃຫ້ ບໍ່ເພິ່ງເຮັດບໍຣິກຳແກ່ພິກຂຸລາງອົງ ບໍ່ເພິ່ງໃຫ້ພິກຂຸລາງອົງເຮັດບໍຣິກຳໃຫ້

ບໍ່ເພິ່ງກະທຳການຂົນຂວາຍແກ່ພິກຂຸລາງອົງ ບໍ່ເພິ່ງສັ່ງພິກຂຸລາງອົງໃຫ້ກະທຳການຂົນຂວາຍ ບໍ່ເພິ່ງເປັນປັດສາສະມະນະຂອງພິກຂຸລາງອົງ ບໍ່ເພິ່ງພາພິກຂຸລາງອົງໄປເປັນປັດສາສະມະນະ ບໍ່ເພິ່ງນຳບິນທະບາດໄປຖວາຍພິກຂຸລາງອົງ ບໍ່ເພິ່ງສັ່ງພິກຂຸລາງອົງໃຫ້ນຳບິນທະບາດໄປຖວາຍ

ສັດທິວິຫາຣິກບໍ່ບອກລາອຸປັດຊາ ບໍ່ເພິ່ງເຂົ້າໝູ່ບ້ານ ບໍ່ເພິ່ງໄປປ່າຊ້າ ບໍ່ເພິ່ງອອກໄປຕ່າງຖິ່ນ[๑] ຖ້າອຸປັດຊາເປັນໄຂ້ ເພິ່ງປິ່ນປົວຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອຸປັດຊານັ້ນຈະຫາຍ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນອຸປັດຊາທັງຫຼາຍສຳລັບສັດທິວິຫາຣິກທັງຫຼາຍ ໂດຍທີ່ສັດທິວິຫາຣິກທັງຫຼາຍຕ້ອງປະພຶດໃຫ້ຖືກຕ້ອງໃນອຸປັດຊາທັງຫຼາຍ

## ໑໘. ສັດທິວິຫາຣິກະວັດຕະກະຖາ[๒]

## ວ່າດ້ວຍຂໍ້ວັດປະຕິບັດໃນສັດທິວິຫາຣິກ

[໖໗໗] ສະໄໝນັ້ນ ພຣະອຸປັດຊາທັງຫຼາຍບໍ່ປະພຶດຖືກຕ້ອງໃນສັດທິວິຫາຣິກທັງຫຼາຍ ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອຸປັດຊາທັງຫຼາຍ ຈຶ່ງບໍ່ປະພຶດຖືກຕ້ອງໃນສັດທິວິຫາຣິກທັງຫຼາຍນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ອຸປັດຊາ ທັງຫຼາຍບໍ່ປະພຶດຖືກຕ້ອງໃນສັດທິວິຫາຣິກທັງຫຼາຍ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍວ່າ

[໖໗໘] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນສັດທິວິຫາຣິກທັງຫຼາຍແກ່ ອຸປັດຊາທັງຫຼາຍ ໂດຍທີ່ອຸປັດຊາທັງຫຼາຍເພິ່ງປະພຶດໃຫ້ຖືກຕ້ອງໃນສັດທິວິຫາຣິກທັງຫຼາຍ

ພິກຂຸທັງຫຼາຍ ອຸປັດຊາເພິ່ງປະພຶດໃຫ້ຖືກຕ້ອງໃນສັດທິວິຫາຣິກ ວິທີປະພຶດຖືກຕ້ອງໃນສັດທິວິຫາຣິກນັ້ນມີດັ່ງນີ້

ພິກຂຸທັງຫຼາຍ ອຸປັດຊາເພິ່ງສົງເຄາະອະນຸເຄາະສັດທິວິຫາຣິກ ດ້ວຍອຸດເທດ ປະຣິປຸດສາ ໂອວາດ ແລະອະນຸສາດ

ຖ້າອຸປັດຊາມີບາດ ສັດທິວິຫາຣິກບໍ່ມີບາດ ອຸປັດຊາເພິ່ງຖວາຍບາດແກ່ສັດທິວິຫາຣິກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບາດເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ"

ຖ້າອຸປັດຊາມີຈີວອນ ສັດທິວິຫາຣິກບໍ່ມີຈີວອນ ອຸປັດຊາເພິ່ງຖວາຍຈີວອນແກ່ສັດທິວິຫາຣິກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຈີວອນເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ"

ຖ້າອຸປັດຊາມີບໍຣິຂານ ສັດທິວິຫາຣິກບໍ່ມີບໍຣິຂານ ອຸປັດຊາເພິ່ງຖວາຍບໍຣິຂານແກ່ສັດທິວິຫາຣິກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບໍຣິຂານເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ"

ຖ້າສັດທິວິຫາຣິກເປັນໄຂ້ ອຸປັດຊາເພິ່ງລຸກຂຶ້ນແຕ່ເຊົ້າມືດຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອສັດທິວິຫາຣິກສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບພາຊະນະມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວຮັກສາໄວ້ ເມື່ອສັດທິວິຫາຣິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າສັດທິວິຫາຣິກ ຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍສາຍແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນ້ຳ ປູອາສະນະໄວ້ໂດຍກຳນົດວ່າ "ເວລາສ່ຳນີ້ ສັດທິວິຫາຣິກຈັກກັບມາ" ເພິ່ງກຽມນ້ຳລ້າງຕີນ ຕັ່ງ ເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ ເພິ່ງພັບຈີວອນ ເມື່ອຈະ ພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນີ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນສາຍແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະສັດທິວິຫາຣິກຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອສັດທິວິຫາຣິກສັນສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງ ໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ

ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຟຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ເມື່ອສັດທິວິຫາຣິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ເພິ່ງມ້ຽນນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າສັດທິວິຫາຣິກຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳເຢັນ ເພິ່ງຈັດນ້ຳເຢັນໃຫ້ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າສັດທິວິຫາຣິກຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດແປ້ງຜົງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນ ໄຟຍ່າງໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວຮັບຈີວອນມາວາງບ່ອນສົມຄວນ ເພິ່ງຖວາຍແປ້ງຜົງ ແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າ ປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງເຮັດບໍຣິກຳແກ່ສັດທິວິຫາຣິກໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງເຮັດບໍຣິກຳແກ່ສັດທິວິຫາຣິກແມ່ນໃນນ້ຳ ຕົນອາບສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວປ່ຽນຜ້າ ເພິ່ງເຊັດນ້ຳຈາກໂຕສັດທິວິຫາຣິກ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນ ມາຖວາຍສັດທິວິຫາຣິກ

ສັດທິວິຫາຣິກຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງຊຳຣະໃຫ້ສະອາດ ເມື່ອຈະຊຳຣະວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ບ່ອນສົມຄວນ

ຕຽງ ຕັ່ງ ອຸປັດຊາເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນອອກໄປຕັ້ງໄວ້ ບ່ອນສົມຄວນ ຊຽງຮອງຕຽງ ງົ່ງ ພະນັກອີງ ເພິ່ງຂົນອອກມາວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາ ວາງໄວ້ບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ເພິ່ງໃຊ້ຜ້າຊຸບນ້ຳປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມແລ້ວເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນໄງ່ ເພິ່ງເກັບຂີ້ເຫຍື່ອໄປຖິ້ມບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊຳຣະ ຕີບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຣະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ

ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຢຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄງ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້

ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ນ້ຳຊຳຣະບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ຊຳຣະ

ຖ້າສັດທິວິຫາຣິກເກີດຄວາມບໍ່ຍິນດີ ອຸປັດຊາເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼືເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກເກີດຄວາມລຳຄານ ອຸປັດຊາເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼືເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກເກີດຄວາມເຫັນຜິດ ອຸປັດຊາເພິ່ງໃຫ້ສະຫຼະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍໃຫ້ສະຫຼະສາ ຫຼືເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກຕ້ອງອາບັດໜັກ ຄວນແກ່ປະຣິວາດ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ສັດທິວິຫາຣິກ"

ຖ້າສັດທິວິຫາຣິກຄວນແກ່ການດຶງເຂົ້າຫາອາບັດເດີມ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງສັດທິວິຫາຣິກເຂົ້າຫາອາບັດເດີມ"

ຖ້າສັດທິວິຫາຣິກຄວນແກ່ມານັດ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ສັດທິວິຫາຣິກ"

ຖ້າສັດທິວິຫາຣິກຄວນແກ່ອັບພານ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານສັດທິວິຫາຣິກ"

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນີຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແກ່ສັດທິວິຫາຣິກ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ສັດທິວິຫາຣິກຫຼືເພິ່ງປ່ຽນໄປເປັນໂທດເບົາ" ຫຼືວ່າສັດທິວິຫາຣິກໄດ້ຖືກສົງລົງຕັດຊະນີຍະກຳ ນີຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແລ້ວ ອຸປັດຊາເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສັດທິວິຫາຣິກເພິ່ງກັບປະພຶດຖືກ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ"

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຊັກ ອຸປັດຊາເພິ່ງບອກວ່າ "ເພິ່ງຊັກແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງສັດທິວິຫາຣິກ"

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຕັດຫຍິບ ອຸປັດຊາເພິ່ງບອກວ່າ "ເພິ່ງຕັດຫຍິບແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕັດຫຍິບຈີວອນຂອງສັດທິວິຫາຣິກ"

ຖ້ານ້ຳຍ້ອມຂອງສັດທິວິຫາຣິກຈະຕ້ອງຕົ້ມ ອຸປັດຊາເພິ່ງບອກວ່າ "ເພິ່ງຕົ້ມແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ"ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນ້ຳຍ້ອມຂອງສັດທິວິຫາຣິກ"

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຍ້ອມ ອຸປັດຊາເພິ່ງບອກວ່າ "ເພິ່ງຍ້ອມແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງສັດທິວິຫາຣິກ" ເມື່ອຈະຍ້ອມຈີວອນ ເພິ່ງຍ້ອມປີ້ນກັບໄປກັບມາດີ ໆ ເມື່ອຢາດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ຖ້າສັດທິວິຫາຣິກເປັນໄຂ້ ເພິ່ງປິ່ນປົວຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າສັດທິວິຫາຣິກນັ້ນຈະຫາຍ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນສັດທິວິຫາຣິກສຳລັບອຸປັດຊາທັງຫຼາຍ ໂດຍທີ່ອຸປັດຊາທັງຫຼາຍເພິ່ງປະພຶດໃຫ້ຖືກຕ້ອງໃນສັດທິວິຫາຣິກທັງຫຼາຍ

**ທຸຕິຍະພານະວານ ຈົບ**

# ໑໓. ອາຈະຣິຍະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນພຣະອາຈານ

[໓໗໙] ສະໄໝນັ້ນ ອັນເຕວາສິກທັງຫຼາຍບໍ່ປະພຶດຖືກຕ້ອງໃນພຣະອາຈານທັງຫຼາຍ ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງອັນເຕວາສິກທັງຫຼາຍບໍ່ປະພຶດຖືກຕ້ອງໃນພຣະອາຈານທັງຫຼາຍນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ອັນເຕວາສິກທັງຫຼາຍບໍ່ປະພຶດຖືກຕ້ອງໃນອາຈານທັງຫຼາຍ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍວ່າ

[໓໘໐] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນອາຈານທັງຫຼາຍແກ່

ອັນເຕວາສິກທັງຫຼາຍ ໂດຍທີ່ອັນເຕວາສິກທັງຫຼາຍຕ້ອງປະພຶດໃຫ້ຖືກໃນອາຈານທັງຫຼາຍ

ພິກຂຸທັງຫຼາຍ ອັນເຕວາສິກເພິ່ງປະພຶດໃຫ້ຖືກຕ້ອງໃນອາຈານ ວິທີປະພຶດຖືກຕ້ອງໃນອາຈານ ນັ້ນມີດັ່ງນີ້

ອັນເຕວາສິກເພິ່ງລຸກຂຶ້ນແຕ່ເຊົ້າມືດ ປົດເກີບ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອາຈານສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳຮັບພາຊະນະມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວຮັກສາໄວ້ ເມື່ອອາຈານລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອາຈານຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍສາຍແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນ້ຳ

ຖ້າອາຈານຫວັງຈະໃຫ້ເປັນປັດສາສະມະນະ ເພິ່ງນຸ່ງໃຫ້ຮຽບຮ້ອຍປົກປິດໄດ້ມົນທົນ ໓ ຮັດສາຍແອວ ຫົ່ມສັງຄາຕິທີ່ພັບຊ້ອນກັນ ໃສ່ລູກດຸມ ລ້າງບາດຖືໄປ ເປັນປັດສາສະມະນະຂອງອາຈານ ເພິ່ງຍ່າງບໍ່ໃຫ້ຫ່າງຫຼາຍ ບໍ່ໃຫ້ຊິດຫຼາຍ ເພິ່ງຮັບບາດທີ່ມີຂອງບັນຈຸຢູ່

ເມື່ອອາຈານກຳລັງກ່າວ ບໍ່ເພິ່ງກ່າວສອດຂຶ້ນໃນລະຫວ່າງ ອາຈານກ່າວຄຳເວົ້າໃກ້ຕໍ່ອາບັດ ເພິ່ງຫ້າມໄວ້

ເມື່ອອາຈານຈະກັບ ເພິ່ງມາກ່ອນແລ້ວປູອາສະນະໄວ້ ເພິ່ງກຽມນ້ຳລ້າງຕີນ ຕັ່ງເກີບກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ ເພິ່ງພັບຈີວອນ ເມື່ອຈະພັບ ຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນິ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນ ສາຍແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອາຈານຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອອາຈານສັນສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບບາດມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຈັບບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຮຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ເມື່ອອາຈານລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ເພິ່ງມ້ຽນນ້ຳລ້າງຕີນ ຕັ່ງເກີບກະເບື້ອງເຊັດຕີນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອາຈານຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳເຢັນ ເພິ່ງຈັດ ນ້ຳເຢັນຖວາຍ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າອາຈານຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດແປ້ງຜົງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນໄຟຍ່າງຕາມຫຼັງອາຈານໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວຮັບຈີວອນມາວາງບ່ອນສົມຄວນ ຈຶ່ງຖວາຍແປ້ງຜົງ ແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງເຮັດບໍຣິກຳ ແກ່ອາຈານໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງເຮັດບໍຣິກຳແກ່ອາຈານແມ່ນໃນນ້ຳ ຕົນອາບນ້ຳສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕ ໃຫ້ແຫ້ງແລ້ວປຸ່ງຜ້າ ເພິ່ງເຊັດນ້ຳຈາກໂຕອາຈານ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟ ມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນມາຖວາຍ ອາຈານ

ຖ້າອາຈານຕ້ອງການຈະໃຫ້ຮຽນ ເພິ່ງຮຽນ

ຖ້າອາຈານຕ້ອງການຈະໃຫ້ສອບຖາມອັດຖະ ເພິ່ງສອບຖາມ

ອາຈານຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງຊຳຣະໃຫ້ສະອາດ ເມື່ອຈະຊຳຣະວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງບ່ອນສົມຄວນ

ຕຽງ ຕັ່ງ ອັນເຕວາສິກເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະ ຂອບປະຕູ ຂົນອອກໄປຕັ້ງໄວ້ ບ່ອນສົມຄວນ ຂາງຮອງຕຽງ ງັ່ງ ພະນັກອີງ ເພິ່ງຂົນອອກມາ ວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງ ເພິ່ງເຊັດ

ຖ້າຝາທີ່ເຂົາທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ຄວນໃຊ້ຜ້າຊຸບນ້ຳປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງເອົານ້ຳປະພົມແລ້ວເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນ ລະອອງ ເພິ່ງເກັບຂີ້ເຫຍື່ອໄປຖິ້ມບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບປູໄວ້ຄືເກົ່າ ຂາງຮອງຕຽງ ເພິ່ງຕາກແດດ ເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຣະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານ ປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງັ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບ ກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນ ຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຫຍ້າ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄງ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້
ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ
ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ຊຳຣະບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ຊຳຣະ

ຖ້າອາຈານເກີດຄວາມບໍ່ຍິນດີ ອັນເຕວາສິກເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ ຊ່ອຍລະງັບ ຫຼືເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານເກີດຄວາມລຳຄານ ອັນເຕວາສິກເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ ຊ່ອຍບັນເທົາ ຫຼືເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານເກີດຄວາມເຫັນຜິດ ອັນເຕວາສິກເພິ່ງໃຫ້ສະຫຼະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ ຊ່ອຍສະຫຼະສາ ຫຼືເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານຕ້ອງອາບັດໜັກ ຄວນແກ່ປະຣິວາດ ອັນເຕວາສິກເພິ່ງກະທຳການຂົນຂວາຍ ວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອາຈານ"

ຖ້າອາຈານຄວນແກ່ການດຶງເຂົ້າຫາອາບັດເດີມ ອັນເຕວາສິກເພິ່ງກະທຳການຂົນຂວາຍ ວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອາຈານເຂົ້າຫາອາບັດເດີມ"

ຖ້າອາຈານຄວນແກ່ມານັດ ອັນເຕວາສິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍ ແນວໃດ ນໍ ສົງເພິ່ງໃຫ້ມານັດແກ່ອາຈານ"

ຖ້າອາຈານຄວນແກ່ອັບພານ ອັນເຕວາສິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍ ແນວໃດນໍ ສົງເພິ່ງອັບພານອາຈານ"

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາ ຣະນີຍະກຳ ຫຼືອຸກເຂປະນີຍະກຳແກ່ອາຈານ ອັນເຕວາສິກເພິ່ງກະທຳການຂົນຂວາຍ

ວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອາຈານຫຼືເພິ່ງປ່ຽນໄປເປັນໂທດເບົາ" ຫຼື ວ່າອາຈານໄດ້ຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼື ອຸກເຂປະນີຍະກຳແລ້ວ ອັນເຕວາສິກເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອາຈານເພິ່ງກັບປະພຶດຖືກ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ"

ຖ້າຈີວອນຂອງອາຈານຈະຕ້ອງຊັກ ອັນເຕວາສິກເພິ່ງຊັກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງອາຈານ"

ຖ້າຈີວອນຂອງອາຈານຈະຕ້ອງຕັດຫຍິບ ອັນເຕວາສິກເພິ່ງຕັດຫຍິບ ຫຼືເພິ່ງກະທຳການຂວນ ຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຕັດຫຍິບຈີວອນຂອງອາຈານ"

ຖ້ານ້ຳຍ້ອມຂອງອາຈານຈະຕ້ອງຕົ້ມ ອັນເຕວາສິກເພິ່ງຕົ້ມ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຕົ້ມນ້ຳຍ້ອມຂອງອາຈານ"

ຖ້າຈີວອນຂອງອາຈານຈະຕ້ອງຍ້ອມ ອັນເຕວາສິກເພິ່ງຍ້ອມ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຍ້ອມຈີວອນຂອງອາຈານ" ເມື່ອຈະຍ້ອມຈີວອນເພິ່ງຍ້ອມປີ້ນກັບໄປກັບມາດີ ໆ ເມື່ອຢາດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ອັນເຕວາສິກບໍ່ບອກອາຈານ ບໍ່ເພິ່ງໃຫ້ບາດແກ່ພິກຂຸລາງອົງ ບໍ່ເພິ່ງຮັບບາດຂອງພິກຂຸລາງອົງ ບໍ່ເພິ່ງໃຫ້ຈີວອນແກ່ພິກຂຸລາງອົງ ບໍ່ເພິ່ງຮັບຈີວອນຂອງພິກຂຸລາງອົງ ບໍ່ເພິ່ງໃຫ້ບໍຣິຂານແກ່ພິກຂຸລາງອົງ ບໍ່ເພິ່ງຮັບບໍຣິຂານຂອງພິກຂຸລາງອົງ ບໍ່ເພິ່ງແຖຜົມໃຫ້ພິກຂຸລາງອົງ ບໍ່ເພິ່ງໃຫ້ພິກຂຸລາງອົງແຖຜົມໃຫ້ ບໍ່ເພິ່ງເຮັດບໍຣິກຳແກ່ພິກຂຸລາງອົງ ບໍ່ເພິ່ງໃຫ້ພິກຂຸລາງອົງເຮັດບໍຣິກຳໃຫ້ ບໍ່ເພິ່ງກະທຳການຂົນຂວາຍແກ່ພິກຂຸລາງອົງ ບໍ່ເພິ່ງສັ່ງພິກຂຸລາງອົງໃຫ້ກະທຳການຂົນຂວາຍ ບໍ່ເພິ່ງເປັນປັດສາສະມະນະຂອງພິກຂຸລາງອົງ ບໍ່ເພິ່ງພາພິກຂຸລາງອົງໄປເປັນປັດສາສະມະນະ ບໍ່ເພິ່ງນຳບິນທະບາດໄປຖວາຍພິກຂຸລາງອົງ ບໍ່ເພິ່ງສັ່ງພິກຂຸລາງອົງໃຫ້ນຳບິນທະບາດໄປຖວາຍ

ອັນເຕວາສິກບໍ່ບອກລາອາຈານ ບໍ່ເພິ່ງເຂົ້າໝູ່ບ້ານ ບໍ່ເພິ່ງໄປປ່າຊ້າ ບໍ່ເພິ່ງອອກໄປຕ່າງຖິ່ນ ຖ້າອາຈານເປັນໄຂ້ ເພິ່ງປິ່ນປົວຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອາຈານນັ້ນຈະຫາຍ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນອາຈານທັງຫຼາຍສຳລັບອັນເຕວາສິກທັງຫຼາຍ ໂດຍທີ່ອັນເຕວາສິກທັງຫຼາຍຕ້ອງປະພຶດໃຫ້ຖືກໃນອາຈານທັງຫຼາຍ

## ໑໔. ອັນເຕວາສິກະວັດຕະກະຖາ

## ວ່າດ້ວຍຂໍ້ວັດປະຕິບັດໃນອັນເຕວາສິກ

[໓໗໑] ສະໄໝນັ້ນ ພຣະອາຈານທັງຫຼາຍບໍ່ປະພຶດຖືກຕ້ອງໃນອັນເຕວາສິກທັງຫຼາຍ ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະອາຈານທັງຫຼາຍຈຶ່ງບໍ່ປະພຶດຖືກຕ້ອງໃນອັນເຕວາສິກທັງຫຼາຍນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ອາຈານທັງຫຼາຍບໍ່ປະພຶດຖືກຕ້ອງໃນອັນເຕວາສິກທັງຫຼາຍ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ໆລໆ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍວ່າ

[໓໗໔] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດໃນອັນເຕວາສິກທັງຫຼາຍແກ່ ອາຈານທັງຫຼາຍ ໂດຍທີ່ອາຈານທັງຫຼາຍຕ້ອງປະພຶດໃຫ້ຖືກໃນອັນເຕວາສິກທັງຫຼາຍ

ພິກຂຸທັງຫຼາຍ ອາຈານເພິ່ງປະພຶດໃຫ້ຖືກຕ້ອງໃນອັນເຕວາສິກ ວິທີປະພຶດຖືກຕ້ອງໃນອັນເຕວາສິກນັ້ນມີດັ່ງນີ້

ພິກຂຸທັງຫຼາຍ ອາຈານເພິ່ງສົງເຄາະອະນຸເຄາະອັນເຕວາສິກດ້ວຍອຸດເທດ ປະຣິປຸດສາ ໂອວາດ ແລະອະນຸສາດ

ຖ້າອາຈານມີບາດ ອັນເຕວາສິກບໍ່ມີບາດ ອາຈານເພິ່ງຖວາຍບາດແກ່ອັນເຕວາສິກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບາດເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອາຈານມີຈີວອນ ອັນເຕວາສິກບໍ່ມີຈີວອນ ອາຈານເພິ່ງຖວາຍຈີວອນແກ່ອັນເຕວາສິກ ຫຼື ເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຈີວອນເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອາຈານມີບໍຣິຂານ ອັນເຕວາສິກບໍ່ມີບໍຣິຂານ ອາຈານເພິ່ງຖວາຍບໍຣິຂານແກ່ອັນເຕວາສິກ ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບໍຣິຂານເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອັນເຕວາສິກເປັນໄຂ້ ອາຈານເພິ່ງລຸກຂຶ້ນແຕ່ເຊົ້າມືດ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອັນເຕວາສິກສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບພາຊະນະມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວຮັກສາໄວ້

ເມື່ອອັນເຕວາສິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອັນເຕວາສິກຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍສາຍແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນ້ຳ ປູອາສະນະໄວ້ ໂດຍກຳນົດວ່າ "ເວລາສ່ຳນີ້ ອັນເຕວາສິກຈັກກັບມາ" ເພິ່ງກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບ ບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້າ ນຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ ເພິ່ງພັບຈີວອນ ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນິ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນ ສາຍແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອັນເຕວາສິກຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອອັນເຕວາສິກສັນສຳເລັດແລ້ວ ເພິ່ງຖວາຍນ້ຳຮັບບາດມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ທີ່ແດດ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຜຽກເອົາຊາຍໄວ້ນອກເອົາຂົດໄວ້ໃນຈຶ່ງມ້ຽນຈີວອນ

ເມື່ອອັນເຕວາສິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະມ້ຽນ ເພິ່ງມ້ຽນນ້ຳລ້າງຕີນ ຕັ່ງເກີບກະເບື້ອງເຊັດຕີນ ຖ້າບ່ອນນັ້ນຮົກ ເພິ່ງກວາດ

ຖ້າອັນເຕວາສິກຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳເຢັນເພິ່ງຈັດນ້ຳເຢັນຖວາຍ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າອັນເຕວາສິກຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດແປ້ງຜົງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນ ໄຟຢ່າງໄປ ຖວາຍຕັ່ງສຳລັບເຮືອນໄຟ ແລ້ວຮັບຈີວອນມາວາງບ່ອນສົມຄວນ ເພິ່ງຖວາຍແປ້ງຜົງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງເຮັດບໍຣິກຳ ແກ່ອັນເຕວາສິກໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງເຮັດບໍຣິກຳແກ່ອັນເຕວາສິກແມ່ນໃນນ້ຳ ຕົນອາບສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວປ່ຽນຜ້າ ເພິ່ງເຊັດນ້ຳຈາກໂຕອັນເຕວາສິກ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນມາຖວາຍອັນເຕວາສິກ

ອັນເຕວາສິກຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງຊໍາຮະໃຫ້ສະອາດ ເມື່ອຈະຊໍາຮະວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ບ່ອນສົມຄວນ ເພິ່ງຂົນ ຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ບ່ອນສົມຄວນ

ຕຽງ ຕັ່ງ ອາຈານເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນອອກໄປຕັ້ງໄວ້ ບ່ອນສົມຄວນ ຊຽງຮອງຕຽງ ງົ່ງ ພະນັກອີງ ເພິ່ງຂົນອອກມາວາງໄວ້ບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງໄວ້ບ່ອນສົມຄວນ

ຖ້າໃນວິຫານມີຂີ້ເຫຍື່ອ ເພິ່ງກວາດເພດານລົງມາກ່ອນ ຂອບປ່ອງຢ້ຽມແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ທານໍ້າມັນຫຼືພື້ນທາສີດໍາຂຶ້ນຣາ ເພິ່ງໃຊ້ຜ້າຊຸບນໍ້າປັ້ນແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນໍ້າປະພົມແລ້ວເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນໄງ່ເພິ່ງເກັບຂີ້ເຫຍື່ອໄປຖິ້ມບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊໍາຮະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊໍາຮະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດຊໍາຮະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງມ້ຽນບາດແລະຈີວອນ ເມື່ອຈະມ້ຽນບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງ ໜຶ່ງລູບກ້ອງຕຽງຫຼືກ້ອງຕັ່ງ ຈຶ່ງມ້ຽນບາດ ບໍ່ເພິ່ງມ້ຽນບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະມ້ຽນຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຜຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງມ້ຽນຈີວອນ

ຖ້າລົມມີຝຸ່ນໄງ່ພັດມາທາງທິດຕາເວັນອອກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງອັດປ່ອງຢ້ຽມດ້ານຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງອັດປ່ອງຢ້ຽມດ້ານເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງອັດປ່ອງຢ້ຽມດ້ານໃຕ້

ຖ້າເປັນລະດູໜາວ ເພິ່ງເປີດປ່ອງຢ້ຽມກາງເວັນ ອັດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງອັດປ່ອງຢ້ຽມກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິ ຮົກ ເພິ່ງປັດກວາດ ຖ້ານໍ້າສັນນໍ້າໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ຊໍາຮະບໍ່ມີນໍ້າ ເພິ່ງຕັກນໍ້າໃສ່ໝໍ້ຊໍາຮະ

ຖ້າອັນເຕວາສິກເກີດຄວາມບໍ່ຍິນດີ ອາຈານເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼືເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກເກີດຄວາມລຳຄານ ອາຈານເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼືເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກເກີດຄວາມເຫັນຜິດ ອາຈານເພິ່ງໃຫ້ສະຫຼະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍສະຫຼະສາ ຫຼືເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກຕ້ອງອາບັດໜັກ ຄວນແກ່ປະຣິວາດ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອັນເຕວາສິກ"

ຖ້າອັນເຕວາສິກຄວນແກ່ການດຶງເຂົ້າຫາອາບັດເດີມ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອັນເຕວາສິກເຂົ້າຫາອາບັດເດີມ"

ຖ້າອັນເຕວາສິກຄວນແກ່ມານັດ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ອັນເຕວາສິກ"

ຖ້າອັນເຕວາສິກຄວນແກ່ອັບພານ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດ ນໍ ສົງເພິ່ງອັບພານອັນເຕວາສິກ"

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແກ່ອັນເຕວາສິກ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອັນເຕວາສິກຫຼືເພິ່ງປ່ຽນໄປເປັນໂທດເບົາ" ຫຼືວ່າອັນເຕວາສິກຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸເຂປະນີຍະກຳແລ້ວ ອາຈານເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອັນເຕວາສິກເພິ່ງກັບປະພຶດຖືກ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ"

ຖ້າຈີວອນຂອງອັນເຕວາສິກຈະຕ້ອງຊັກ ອາຈານເພິ່ງບອກວ່າ "ເພິ່ງຊັກແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຊັກຈີວອນຂອງອັນເຕວາສິກ"

ຖ້າຈີວອນຂອງອັນເຕວາສິກ ຈະຕ້ອງຕັດຫຍິບ ອາຈານເພິ່ງບອກວ່າ "ເພິ່ງຕັດຫຍິບແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຕັດຫຍິບຈີວອນຂອງອັນເຕວາສິກ"

ຖ້ານ້ຳຍ້ອມຂອງອັນເຕວາສິກຈະຕ້ອງຕົ້ມ ອາຈານເພິ່ງບອກວ່າ "ເພິ່ງຕົ້ມແນວນີ້" ຫຼືເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຕົ້ມນ້ຳຍ້ອມຂອງອັນເຕວາສິກ"

ຖ້າຈີວອນຂອງອັນເຕວາສິກຈະຕ້ອງຍ້ອມ ອາຈານເພິ່ງບອກວ່າ "ເພິ່ງຍ້ອມແນວນີ້" ຫຼື ເພິ່ງກະທຳການຂົນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຍ້ອມຈີວອນຂອງອັນເຕວາສິກ" ເມື່ອຈະຍ້ອມຈີວອນ ເພິ່ງຍ້ອມປີ້ນກັບໄປກັບມາດີ ໆ ເມື່ອຢາດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ຖ້າອັນເຕວາສິກເປັນໄຂ້ ເພິ່ງປິ່ນປົວຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອັນເຕວາສິກນັ້ນຈະຫາຍ

ພິກຂຸທັງຫຼາຍ ນີ້ຄືຂໍ້ວັດປະຕິບັດໃນອັນເຕວາສິກທັງຫຼາຍສຳລັບອາຈານທັງຫຼາຍ ໂດຍທີ່ອາຈານທັງຫຼາຍຕ້ອງປະພຶດໃຫ້ຖືກໃນອັນເຕວາສິກທັງຫຼາຍ

**ວັດຕະຂັນທະກະທີ ໘ ຈົບ**

## ໃນຂັນທະກະນີ້ມີ ໑໙ ເລື້ອງ ໑໔ ຂໍ້ວັດປະຕິບັດ
## ລວມເລື້ອງທີ່ມີໃນວັດຕະຂັນທະກະ

ພິກຂຸອາຄັນຕຸກະໃສ່ເກີບ ກັ້ງຄັນຮົ່ມ ປົກຫົວ
ພາດຈີວອນເທິງຫົວເຂົ້າໄປອາຮາມ ໃຊ້ນ້ຳດື່ມລ້າງຕີນ
ບໍ່ໄຫວ້ພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ແກ່ພັນສາ
ບໍ່ຕ້ອນຮັບດ້ວຍເສນາສະນະ ງູຕົກລົງມາ ພິກຂຸຜູ້ມີສິນຕຳໜິ
ພຣະຜູ້ມີພຣະພາກເຈົ້າຊົງບັນຍັດວ່າ ພິກຂຸອາຄັນຕຸກະຈະເຂົ້າອາຮາມ
ເພິ່ງປົດເກີບ ຫຸບຄັນຮົ່ມ ລຸດຈີວອນລົງບ່າ ບໍ່ຕ້ອງຟ້າວເຂົ້າອາຮາມ
ເພິ່ງສັງເກດວ່າ ຜູ້ຢູ່ປະຈຳໃນອາວາດປະຊຸມກັນຢູ່ໄສ
ມ້ຽນບາດຈີວອນໄວ້ດ້ານໜຶ່ງ ຖືອາສະນະທີ່ເໝາະສົມ
ຖາມເຖິງນ້ຳດື່ມ ນ້ຳໃຊ້ ເພິ່ງລ້າງຕີນ
ເຊັດເກີບດ້ວຍຜ້າແຫ້ງກ່ອນແລ້ວເຊັດດ້ວຍຜ້າປຽກພາຍຫຼັງ
ອະພິວາດພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ມີພັນສາຫຼາຍກວ່າ
ໃຫ້ພິກຂຸຜູ້ຢູ່ປະຈຳໃນອາວາດຜູ້ມີພັນສາໜ້ອຍກວ່າອະພິວາດ
ຖາມເສນາສະນະທັງທີ່ມີແລະບໍ່ມີພິກຂຸ
ຖາມເຖິງໂຄຈອນຄາມແລະອະໂຄຈອນຄາມ ຕະກູນເສກຂະສົມມຸດ
ທີ່ຖ່າຍອຸດຈາຣະປັດສາວະ ນ້ຳດື່ມນ້ຳໃຊ້ ໄມ້ການເທົ້າ
ກະຕິກາສົງທີ່ຕັ້ງໄວ້ວ່າ ຄວນເຂົ້າອອກເວລາໃດ
ເພິ່ງຖ້າຈັກໜ້ອຍ ວິຫານຮົກເພິ່ງຊຳຣະໃຫ້ສະອາດ
ເພິ່ງຂົນເຄື່ອງປູລາດພື້ນໄປໄວ້ບ່ອນສົມຄວນ ຊຽງຮອງຕຽງ

ຟູກ ໝອນ ຕຽງ ຕັ່ງ ງົ່ງ ພະນັກອີງ
ເພິ່ງກວາດຢາກໄຍ່ຕັ້ງແຕ່ເພດານລົງມາກ່ອນ
ເຊັດຂອບປ່ອງຢ້ຽມແລະແຈຫ້ອງ ຝາທີ່ທາສີເຫຼືອງຫຼືພື້ນທາສີດຳຂຶ້ນຣາ
ໃຊ້ຜ້າຊຸບນ້ຳປັ້ນແລ້ວເຊັດ ພື້ນບໍ່ໄດ້ທາ ໃຊ້ນ້ຳພົມແລ້ວເຊັດ
ເກັບຂີ້ເຫຍື່ອຖິ້ມ ພົມປູພື້ນ ຊຽງຮອງຕຽງ ຕຽງ ຕັ່ງ
ຟູກ ໝອນ ຜ້າປູນັ່ງ ງົ່ງ ພະນັກອີງ
ຄວນຕາກແດດ ແລ້ວມ້ຽນໄວ້ທີ່ເດີມ ມ້ຽນບາດຈີວອນ
ຢ່າວາງບາດໄວ້ເທິງພື້ນບໍ່ມີເຄື່ອງຮອງ
ເກັບຈີວອນເອົາຊາຍໄວ້ນອກເອົາຂົດໄວ້ໃນ
ມີລົມປົນຝຸ່ນໄງ່ພັດມາທາງທິດຕາເວັນອອກ ຕາເວັນຕົກ
ທິດເໜືອຫຼືທິດໃຕ້ ເພິ່ງອັດປ່ອງຢ້ຽມ
ທາງທິດນັ້ນ ໆ ລະດູໜາວ ກາງເວັນເປີດປ່ອງຢ້ຽມ
ອັດກາງຄືນ ໜ້າຮ້ອນຕອນກາງເວັນອັດປ່ອງຢ້ຽມ
ເປີດຕອນກາງຄືນ ກວາດບໍລິເວນ
ຊຸ້ມ ໂຮງສັນ ໂຮງໄຟແລະວັດຈະກຸດຕິ
ຈັດກຽມນ້ຳດື່ມນ້ຳໃຊ້ແລະນ້ຳໃນໝໍ້ຊຳຮະ
ຂໍ້ວັດປະຕິບັດຂອງພິກຂຸຜູ້ຈອນມາດັ່ງກ່າວນີ້ ພຣະຜູ້ມີພຣະພາກເຈົ້າຜູ້ຊົງພຣະຄຸນ
ຢ່າງບໍ່ມີບ່ອນປຽບຊົງບັນຍັດໄວ້ແລ້ວ

ພິກຂຸຜູ້ຢູ່ປະຈຳໃນອາວາດ ບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ
ບໍ່ລຸກຮັບ ບໍ່ຕ້ອນຮັບດ້ວຍນ້ຳດື່ມນ້ຳໃຊ້ ບໍ່ໄຫວ້ ບໍ່ຈັດເສນາສະນະໃຫ້
ພິກຂຸຜູ້ມີສິນຕຳໜິພິກຂຸຜູ້ຢູ່ປະຈຳໃນອາວາດເຫັນພິກຂຸອາຄັນຕຸກະ
ຜູ້ແກ່ພັນສາກວ່າ ຄວນປູອາສະນະ ຕັ້ງນ້ຳລ້າງຕີນ
ລຸກຮັບ ນຳນ້ຳດື່ມນ້ຳໃຊ້ຕ້ອນຮັບ ເຊັດເກີບໃຫ້
ຊັກຜ້າເຊັດເກີບຕາກໄວ້ດ້ານໜຶ່ງ
ອະພິວາດພິກຂຸອາຄັນຕຸກະຜູ້ແກ່ພັນສາກວ່າ
ຈັດເສນາສະນະຖວາຍ ບອກເສນາສະນະທີ່ມີແລະບໍ່ມີພິກຂຸຢູ່
ບອກໂຄຈອນຄາມແລະອະໂຄຈອນຄາມ ຕະກູນເສກຂະສົມມຸດ
ວັດຈະກຸດຕິ ນ້ຳດື່ມນ້ຳໃຊ້ ໄມ້ການເທົ້າ ກະຕິກາສົງທີ່ຕັ້ງໄວ້ວ່າ
ເວລານີ້ຄວນເຂົ້າອອກ ພິກຂຸອາຄັນຕຸກະພັນສາໜ້ອຍ
ກວ່າເພິ່ງນັ່ງ ບອກແນະນຳພິກຂຸອາຄັນຕຸກະພັນສາໜ້ອຍກວ່າໃຫ້ໄຫວ້
ບອກເສນາສະນະ ນອກຈາກນັ້ນຄືໃນໄນຕາມທີ່ກ່າວໄວ້ແລ້ວ

ຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ໃນອາວາດດັ່ງກ່າວນີ້ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳໝູ່ໄດ້ຊົງສະແດງໄວ້ແລ້ວ

ພິກຂຸຜູ້ກຽມຈະອອກເດີນທາງ ບໍ່ເກັບເຄື່ອງໃຊ້ໄມ້
ເຄື່ອງໃຊ້ດິນໄຂປະຕູປ່ອງຢ້ຽມຖິ້ມໄວ້ ບໍ່ບອກມອບໝາຍເສນາສະນະ
ເຄື່ອງໃຊ້ໄມ້ ເຄື່ອງໃຊ້ດິນເສຍຫາຍ ເສນາສະນະ ບໍ່ມີໃຜຮັກສາ
ພິກຂຸຜູ້ມີສິນຕຳໜິ ພິກຂຸຜູ້ຈະເດີນທາງເພິ່ງເກັບເຄື່ອງໃຊ້ໄມ້
ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມ
ມອບໝາຍເສນາສະນະແລ້ວຫຼີກໄປ ເພິ່ງມອບໝາຍພິກຂຸສາມະເນນ
ຄົນວັດຫຼືອຸປາສົກຍົກຕຽງຂຶ້ນວາງໄວ້ເທິງສິລາ
ກອງເຄື່ອງເສນາສະນະໄວ້ຂ້າງເທິງ ເກັບເຄື່ອງໃຊ້ໄມ້
ເຄື່ອງໃຊ້ດິນ ອັດປະຕູປ່ອງຢ້ຽມ
ຫາກວິຫານຝົນຮົ່ວ ຖ້າສາມາດເພິ່ງມຸງບັງ
ຫຼືຂົນຂວາຍ ໃນວິຫານທີ່ຝົນບໍ່ຮົ່ວກໍຄືກັນ
ຖ້າວິຫານຝົນຮົ່ວທຸກແຫ່ງເພິ່ງຂົນເຄື່ອງເສນາສະນະເຂົ້າບ້ານ
ໃນກາງແຈ້ງກໍຄືກັນ ຄິດວ່າແນວໃດສາສ່ວນຂອງຕຽງຕັ່ງ
ກໍຄົງເຫຼືອຢູ່ແດ່ນີ້ຄືຂໍ້ວັດປະຕິບັດຂອງພິກຂຸຜູ້ອອກເດີນທາງ

ພິກຂຸບໍ່ອະນຸໂມທະນາໃນໂຮງອາຫານເຮັດໃຫ້ຄົນທັງຫຼາຍຕຳໜິ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸຜູ້ເຖຣະອະນຸໂມທະນາ
ພິກຂຸປ່ອຍພິກຂຸຜູ້ເຖຣະໄວ້ໃຫ້ອະນຸໂມທະນາອົງດຽວ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພຣະເຖຣານຸເຖຣະຢູ່ ໔-໕ ອົງ
ພິກຂຸອົງໜຶ່ງປວດອຸດຈາຣະກັ້ນໄວ້ຈົນສະຫຼົບ
ນີ້ຄືຂໍ້ວັດປະຕິບັດໃນການຖ້າອະນຸໂມທະນາ

ພວກພິກຂຸສັບພັກຄີນຸ່ງຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດ
ຍ່າງແຊງ ນັ່ງບຽດພິກຂຸຜູ້ເຖຣະ ກີດກັນອາສະນະພິກຂຸນະວະກະ
ນັ່ງເຕັງສັງຄາຕິ ພິກຂຸຜູ້ມີສິນຕຳໜິ
ພິກຂຸເພິ່ງນຸ່ງຫົ່ມອັດທະມົນທົນ ໓ ຮັດສາຍແອວ
ຫົ່ມຜ້າສັງຄາຕິທີ່ພັບຊ້ອນກັນ
ໃສ່ລູກດຸມ ບໍ່ຍ່າງແຊງ ປົກປິດກາຍໃຫ້ດີ
ມີຈັກຂຸທອດລົງ ບໍ່ຈ້ອນຜ້າ ບໍ່ຫົວສຽງດັງ ມີສຽງຄ່ອຍ
ບໍ່ໂງກກາຍ ບໍ່ແກວ່ງແຂນ ບໍ່ໂງກຫົວ

ບໍ່ຄ້ຳແອວ ບໍ່ປົກຫົວ ບໍ່ຍ່າງແຍ່ງແຍ້
ປົກປິດກາຍໃຫ້ດີ ສັງລວມດີ ມີຈັກຂຸທອດລົງ ບໍ່ຈ້ອນຜ້າ
ບໍ່ຫົວສຽງດັງ ມີສຽງຄ່ອຍ ບໍ່ໂງກກາຍ
ບໍ່ແກວ່ງແຂນ ບໍ່ໂງກຫົວ ບໍ່ຄ້ຳແອວ
ບໍ່ປົກຫົວ ບໍ່ນັ່ງຮັດເຂົ່າ ບໍ່ນັ່ງບຽດພິກຂຸຜູ້ເຖຣະ
ບໍ່ກີດກັນອາສະນະພິກຂຸນະວະກະ ບໍ່ນັ່ງເຕັ່ງສັງຄາຕີ
ເມື່ອເຂົາຖວາຍນ້ຳເພິ່ງຮັບໄປລ້າງບາດ
ຖືຢ່າງລະມັດລະວັງ ຖອກນ້ຳລົງງ່ຽງດ້ວຍຄິດວ່າ
ງ່ຽງຢ່າເລີເທີ ຜູ້ນັ່ງໃກ້ຢ່າຖືກນ້ຳພົ້ງໃສ່ປຽກ
ສັງຄາຕິຢ່າຖືກນ້ຳພົ້ງໃສ່ ເມື່ອເຂົາຖວາຍເຂົ້າສຸກ
ເພິ່ງປະຄອງບາດຮັບ ເວັ້ນທີ່ສຳລັບແກງ
ຈັດຖວາຍແກງອ່ອມທົ່ວກັນທຸກອົງ ຮັບບິນທະບາດໂດຍເຄົາລົບ
ມີຄວາມສຳຄັນໃນບາດ ຮັບບິນທະບາດພໍເໝາະສົມກັບແກງ
ຮັບສະເໝີຂອບປາກບາດ ພິກຂຸຜູ້ເຖຣະບໍ່ເພິ່ງສັນກ່ອນ
ຈົນກວ່າເຂົ້າສຸກຈະທົ່ວເຖິງ ພິກຂຸທຸກອົງສັນບິນທະບາດໂດຍເຄົາລົບ
ມີຄວາມສຳຄັນໃນບາດຂະນະສັນ ສັນຕາມລຳດັບ
ສັນພໍເໝາະສົມກັບແກງ ບໍ່ສັນຫຍຸມແຕ່ຍອດລົງໄປ
ບໍ່ສັນປົກແກງຫຼືກັບເຂົ້າ ບໍ່ຂໍແກງຫຼືກັບເຂົ້າມາສັນ
ບໍ່ແລເບິ່ງບາດຂອງພິກຂຸອື່ນດ້ວຍມຸ້ງຕຳໜິ
ບໍ່ເຮັດຄຳເຂົ້າໃຫ້ໃຫຍ່ ເຮັດຄຳເຂົ້າໃຫ້ກົມກ່ອມ
ບໍ່ອ້າປາກໄວ້ຖ້າ ບໍ່ລ້ວງນິ້ວມືເຂົ້າປາກ
ບໍ່ເວົ້າທັງໃນປາກມີຄຳເຂົ້າ ບໍ່ສັນໂຍນຄຳເຂົ້າ
ບໍ່ສັນກັດຄຳເຂົ້າ ບໍ່ສັນເຮັດແກ້ມໃຫ້ຕຸ້ຍ ບໍ່ສັນຊິດມື
ບໍ່ສັນໂຮຍເມັດເຂົ້າ ບໍ່ສັນແລບລີ້ນ ບໍ່ສັນເຮັດສຽງດັງຈັ໊ບ ໆ
ບໍ່ສັນເຮັດສຽງດັງຊູ້ດ ໆ ບໍ່ສັນເລຍມື ບໍ່ສັນຂອດບາດ
ບໍ່ສັນເລຍຮິມຝີປາກ ມືເປື້ອນບໍ່ຄວນຮັບໂອນ້ຳ
ພິກຂຸຜູ້ເຖຣະບໍ່ຮັບນ້ຳກ່ອນທີ່ພິກຂຸທຸກອົງຍັງສັນບໍ່ສຳເລັດ

ລ້າງບາດຢ່າງລະມັດລະວັງ ຖອກນ້ຳລົງງ່ຽງຢ່າງລະມັດລະວັງ
ງ່ຽງຢ່າເປື້ອນເປິນ້ຳ ພິກຂຸໃກ້ຄຽງຢ່າຖືກນ້ຳພົ້ງໃສ່
ສັງຄາຕິຢ່າຖືກນ້ຳ ຖອກນ້ຳລົງເທິງພື້ນດິນຢ່າງລະມັດລະວັງ
ບໍ່ຖອກນ້ຳລ້າງບາດມີເມັດເຂົ້າ

ເມື່ອກັບພິກຂຸນະວະກະເພິ່ງກັບກ່ອນ ພິກຂຸຜູ້ເຖຣະກັບພາຍຫຼັງ
ປົກປິດກາຍດ້ວຍດີ ບໍ່ຍ່າງແຢ່ງແຢ້ ຂໍ້ວັດປະຕິບັດໃນໂຮງສັນນີ້
ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະທຳມະຣາຊາຊົງບັນຍັດໄວ້ແລ້ວ

ພິກຂຸທ່ຽວບິນທະບາດນຸ່ງຫົ່ມບໍ່ຮຽບຮ້ອຍ ບໍ່ມີມາຣະຍາດເຂົ້າບ້ານ
ອອກຈາກບ້ານໂດຍບໍ່ສັງເກດ ເຂົ້າອອກຟ້າວຟັ່ງເກີນໄປ
ຢືນໄກເກີນໄປ ໃກ້ເກີນໄປ ດົນເກີນໄປ ກັບໄວເກີນໄປ
ອີກອົງໜຶ່ງກໍເຊັ່ນດຽວກັນ ພິກຂຸຖືທ່ຽວບິນທະບາດເປັນຂໍ້ວັດປະຕິບັດ
ຈະເຂົ້າບ້ານເພິ່ງປົກປິດກາຍດ້ວຍດີ ສັງລວມດ້ວຍດີ
ມີຈັກຂຸທອດລົງ ບໍ່ຈ້ອນຜ້າ ບໍ່ຫົວສຽງດັງ ເວົ້າສຽງຄ່ອຍ
ບໍ່ໂງກກາຍ ບໍ່ແກວ່ງແຂນ ບໍ່ໂງກຫົວ ບໍ່ຄ້ຳແອວ
ບໍ່ປົກຫົວ ບໍ່ຍ່າງແຢ່ງແຢ້ ເພິ່ງສັງເກດກ່ອນ ຢ່າຟ້າວເຂົ້າອອກ
ຢ່າຢືນໄກເກີນໄປ ໃກ້ເກີນໄປ ດົນຫຼາຍ ຢ່າກັບໄວເກີນໄປ

ເພິ່ງຢືນກຳນົດວ່າ ເຂົາຈະຢຸດງານລຸກຈາກບ່ອນນັ່ງຈັບຈອງ
ພາຊະນະຕັ້ງໄວ້ບໍ ແຫວກຜ້າສັງຄາຕິນ້ອມບາດເຂົ້າໄປ
ປະຄອງບາດຮັບອາຫານ ຂະນະຮັບ ບໍ່ແນມເບິ່ງໜ້າຜູ້ຖວາຍ
ແມ່ນໃນແກງກໍກຳນົດເຊັ່ນດຽວກັນ ເມື່ອເຂົາຖວາຍອາຫານແລ້ວ
ໃຊ້ສັງຄາຕິຄຸມບາດກັບໄປ ປົກປິດກາຍດ້ວຍດີຍ່າງໄປ
ສັງລວມດ້ວຍດີ ມີຈັກຂຸທອດລົງ ບໍ່ຈ້ອນຜ້າ ບໍ່ຫົວສຽງດັງ
ມີສຽງຄ່ອຍ ບໍ່ໂງກກາຍ ບໍ່ແກວ່ງແຂນ ບໍ່ໂງກຫົວ
ບໍ່ຄ້ຳແອວ ບໍ່ປົກຫົວ ບໍ່ຍ່າງແຢ່ງແຢ້

ອົງທີ່ກັບມາກ່ອນປູອາສະນະໄວ້ຖ້າ
ລ້າງພາຊະນະທີ່ໃສ່ຂອງສັນ ກຽມນ້ຳດື່ມນ້ຳໃຊ້
ອົງທີ່ກັບພາຍຫຼັງຈະສັນກໍເພິ່ງສັນ ຖ້າບໍ່ສັນກໍຖອກຖິ້ມ
ຮື້ຂົນອາສະນະ ມ້ຽນນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ
ມ້ຽນນ້ຳສັນນ້ຳໃຊ້ ກວາດໂຮງສັນ ອົງໃດເຫັນໝໍ້ນ້ຳສັນ
ໝໍ້ນ້ຳໃຊ້ຫຼືໝໍ້ນ້ຳຊຳຮະເປົ່າວ່າງ ເພິ່ງຈັດຫາຕັ້ງໄວ້
ຖ້າເປັນເລື້ອງສຸດວິໄສເພິ່ງກວັກມືຮຽກເພື່ອນມາຊ່ອຍ
ແຕ່ບໍ່ຄວນອອກຄຳສັ່ງ ນີ້ຄືຂໍ້ວັດປະຕິບັດຂອງພິກຂຸຜູ້ທ່ຽວບິນທະບາດ

ພິກຂຸຢູ່ປ່າ ບໍ່ກຽມນ້ຳດື່ມ ນ້ຳໃຊ້ ໄຟ ໄມ້ສີໄຟ
ບໍ່ຮູ້ນັກຂະສັດ ບໍ່ຮູ້ຈັກທິດ ພວກໂຈນຖາມກໍຕອບວ່າບໍ່ມີ
ບໍ່ຮູ້ທຸກຢ່າງ ຈຶ່ງຖືກທຳຮ້າຍ ພິກຂຸຜູ້ຢູ່ປ່າ
ເພິ່ງໃສ່ຖົງບາດ ຄ້ອງບ່າ ພາດຈີວອນເທິງໄຫຼ່
ເມື່ອຈະເຂົ້າບ້ານຄວນປົດເກັບໃສ່ຖົງ
ຄ້ອງບ່າ ປົກປິດມົນທົນ ໓ ໃຫ້ຮຽບຮ້ອຍ
ແມ່ນໃນອາຣັນຍິກະຂໍ້ວັດປະຕິບັດກໍມີໄນຄືໃນບິນດະຈາຣິກະຂໍ້ວັດປະຕິບັດ
ອອກຈາກບ້ານແລ້ວ ໃສ່ຖົງບາດຄ້ອງບ່າ
ພັບຈີວອນວາງເທິງຫົວ ໃສ່ເກີບຍ່າງໄປ
ກຽມນ້ຳສັນ ນ້ຳໃຊ້ ໄຟ ໄມ້ສີໄຟ ໄມ້ການເທົ້າ
ຮຽນນັກຂະສັດທຸກປະເພດຫຼືພຽງບາງສ່ວນ ຮູ້ຈັກທິດ
ຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ປ່ານີ້ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ສູງສຸດກວ່າ
ສັບພະສັດຊົງບັນຍັດໄວ້ແລ້ວ

ພິກຂຸຫຼາຍອົງເຮັດຈີວອນໃນກາງແຈ້ງ ຖືກຝຸ່ນທຸລີຟຸ້ງປົກ
ພິກຂຸຜູ້ມີສິນຕຳໜິ ຖ້າວິຫານຮົກ ເມື່ອຈະປັດກວາດ
ເລີ່ມຕົ້ນຄວນຂົນບາດຈີວອນອອກໄປ ຂົນຟູກ ໝອນ
ຕຽງ ຕັ່ງ ງຽງ ພະນັກອີງອອກໄປ
ກວາດຂີ້ເຫຍື່ອລົງຈາກເພດານ ເຊັດຂອບປະຕູປ່ອງຢ້ຽມແລະແຈຫ້ອງ
ຝາທານ້ຳມັນ ພື້ນທາສີດຳຂຶ້ນຮາ ຖ້າພື້ນບໍ່ໄດ້ທາ
ເພິ່ງເຊັດເຮັດໃຫ້ສະອາດ ປັດກວາດຂີ້ເຫຍື່ອຖິ້ມ
ບໍ່ເຄາະເສນາສະນະໃກ້ພິກຂຸ ວິຫານ ນ້ຳດື່ມ ນ້ຳໃຊ້
ບໍ່ເຄາະໃນບ່ອນສູງ ເໜືອລົມ ໃຕ້ລົມ ພົມປູພື້ນ ຊຽງຮອງຕຽງ
ຕຽງ ຕັ່ງ ຟູກ ໝອນ ຜ້າປູນັ່ງ ງຽງ ພະນັກອີງ
ຕາກທຳຄວາມສະອາດແລ້ວມ້ຽນໄວ້ຄືເກົ່າ ມ້ຽນບາດຈີວອນ
ຢ່າວາງບາດໄວ້ເທິງພື້ນທີ່ບໍ່ມີເຄື່ອງຮອງ
ຈີວອນຕ້ອງພາດຊາຍໄວ້ດ້ານນອກຂົດໄວ້ດ້ານໃນ
ຫາກລົມທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອຫຼືທິດໃຕ້
ພັດມາອັດປ່ອງຢ້ຽມດ້ານທິດນັ້ນ ໆ
ໜ້າໜາວຕອນກາງເວັນເປີດປ່ອງຢ້ຽມ
ກາງຄືນອັດ ໜ້າຮ້ອນ ກາງເວັນອັດປ່ອງຢ້ຽມ ກາງຄືນເປີດ
ປັດກວາດບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕີ

ຕັກນ້ຳດື່ມນ້ຳໃຊ້ມາຕັ້ງໄວ້ ຕັກນ້ຳໃສ່ໝໍ້ຊຳຣະໄວ້
ຢູ່ກັບພິກຂຸຜູ້ມີພັນສາຫຼາຍກວ່າ ຖ້າຍັງບໍ່ໄດ້ບອກ
ຢ່າໃຫ້ອຸດເທດ ປະຣິປຸດສາ ຢ່າສາທະຍາຍ
ຢ່າສະແດງທຳ ຢ່າເຍືອງໄຟ ຢ່າເປີດປ່ອງຢ້ຽມ
ຢ່າອັດປ່ອງຢ້ຽມ ຄວນຍ່າງຕາມພິກຂຸແກ່ພັນສາກວ່າ
ຢ່າກະທົບແມ່ນດ້ວຍຊາຍສັງຄາຕິ ຂໍ້ວັດປະຕິບັດໃນເສນາສະນະ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນພຣະມະຫາວີຣະຊົງບັນຍັດໄວ້ແລ້ວ

ພວກພິກຂຸສັບພັກຄີຖືກພິກຂຸຜູ້ເຖຣະຫ້າມ ອັດປະຕູ
ພິກຂຸຜູ້ເຖຣະສະຫຼົບ ພິກຂຸຜູ້ມີສິນຕຳໜິ
ພິກຂຸຄວນນຳຂີ້ເຖົ່າໄປຖອກຖິ້ມ ປັດກວາດເຮືອນໄຟຊານ
ພາຍນອກບໍລິເວນຊຸ້ມປະຕູ ສາລາເຮືອນໄຟ ບົດແປ້ງຜົງ
ແຊ່ດິນໜຽວ ຕັກນ້ຳໄວ້ໃນຮາງ ເອົາດິນໜຽວ
ທາໜ້າ ປິດທັງທາງໜ້າທາງຫຼັງ
ບໍ່ນັ່ງບຽດພິກຂຸຜູ້ເຖຣະ ບໍ່ກີດກັນອາສະນະພິກຂຸນະວະກະ
ຖ້າມີຄວາມອຸດສາຫະຄວນເຮັດບໍຣິກຳແກ່ພິກຂຸຜູ້ເຖຣະໃນເຮືອນໄຟ
ຢ່າອາບນ້ຳທາງໜ້າ ເໜືອນ້ຳ ໃຫ້ທົນທາງ
ເຮືອນໄຟເປິເປື້ອນ ລ້າງຮາງແຊ່ດິນໜຽວ
ເກັບຕັ່ງ ມອດໄຟ ອັດປະຕູນີ້ຄືຂໍ້ວັດປະຕິບັດໃນເຮືອນໄຟ

ພິກຂຸຖ່າຍອຸດຈາຣະແລ້ວບໍ່ຊຳຣະ ຖ່າຍອຸດຈາຣະຕາມລຳດັບພັນສາ
ຊົງອະນຸຍາດໃຫ້ຖ່າຍຕາມລຳດັບຜູ້ມາເຖິງ
ພວກພິກຂຸສັບພັກຄີເຂົ້າວັດຈະກຸດຕີໄວ ຈ້ອນຜ້ານຸ່ງເຂົ້າໄປ
ທັນໃຈແຮງຂະນະຖ່າຍອຸດຈາຣະ ຫຍ້ຳໄມ້ຖູແຂ້ວ
ພ້ອມຖ່າຍອຸດຈາຣະ ຖ່າຍອຸດຈາຣະປັດສາວະອອກນອກຮາງ
ບ້ວນນ້ຳລາຍລົງໃນຮາງ ໃຊ້ໄມ້ຊຳຣະເນື້ອແຂງ
ຖິ້ມໄມ້ຊຳຣະລົງໃນປ່ອງຖ່າຍອຸດຈາຣະ ອອກມາໄວເກີນ
ຈ້ອນຜ້າອອກມາ ຊຳຣະມີສຽງດັງໂຈ໊ກໂຈ໊ກ
ເຫຼືອນ້ຳໄວ້ໃນກະບວຍຊຳຣະ ພິກຂຸຜູ້ຢູ່ຂ້າງນອກເພິ່ງອະແຮມ
ພິກຂຸຜູ້ຢູ່ຂ້າງໃນອະແຮມຮັບ ພາດຈີວອນໄວ້ເທິງຮາວ
ສາຍຜຽກ ຢ່າຟ້າວເຂົ້າໄປ ຢ່າຈ້ອນຜ້າເຂົ້າໄປ ຢືນເທິງຊຽງ
ຢ່າທັນໃຈດັງ ຢ່າຫຍ້ຳໄມ້ຖູແຂ້ວ

ຢ່າຖ່າຍອຸດຈາຣະປັດສາວະອອກນອກຮາງ
ຢ່າບ້ວນນ້ຳລາຍລົງໃນຮາງ ຢ່າໃຊ້ໄມ້ຊຳຣະເບື້ອແຂງ
ຢ່າຖິ້ມໄມ້ຊຳຣະລົງໃນປ່ອງຖ່າຍ ຢືນເທິງຊຽງຖ່າຍແລ້ວ
ປົດຜ້າ ຢ່າອອກມາໄວເກີນໄປ ຢ່າຈ້ອນຜ້າອອກມາ
ຢືນເທິງຊຽງຖ່າຍແລ້ວຈຶ່ງອັດ ຢ່າຊຳຣະມີສຽງດັງຈະປຸຈະປຸ
ຢ່າເຫຼືອນ້ຳຊຳຣະໄວ້ ຢືນເທິງຊຽງຊຳຣະແລ້ວປົດຜ້າ
ວັດຈະກຸດຕິເປື້ອນເປິຕ້ອງເຮັດຄວາມສະອາດ
ກະຕ່າໄມ້ຊຳຣະເຕັມຄວນນຳໄປຖອກ
ວັດຈະກຸດຕິຊານພາຍນອກບໍລິເວນຊຸ້ມປະຕູຮົກກໍຄວນກວາດ
ຕັກນ້ຳໃສ່ໝໍ້ຊຳຣະ ນີ້ຄືຂໍ້ວັດປະຕິບັດໃນວັດຈະກຸດຕິ

ສັດທິວິຫາຣິກ ປົດເກີບ ຖວາຍໄມ້ຖູແຂ້ວ
ນ້ຳລ້າງໜ້າ ປູອາສະນະ ຖວາຍເຂົ້າຕົ້ມ ລ້າງພາຊະນະມ້ຽນໄວ້
ມ້ຽນອາສະນະ ບ່ອນຮົກເພິ່ງກວາດ ເຂົ້າບ້ານ ຖວາຍຜ້ານຸ່ງ
ສາຍແອວ ສັງຄາຕິທີ່ຊ້ອນ ໔ ຊັ້ນ ບາດພ້ອມທັງນ້ຳ
ປັດສາສະມະນະ ນຸ່ງອັດມົນທົນ ໓ ໃຫ້ຮຽບຮ້ອຍ
ຮັດສາຍແອວ ຫົ່ມສັງຄາຕິທີ່ຊ້ອນ ລ້າງບາດ
ເປັນປັດສາສະມະນະ ຢ່າງບໍ່ຫ່າງຫຼາຍ ບໍ່ຊິດຫຼາຍຮັບຂອງໃນບາດ

ພຣະອຸປັດຊາກຳລັງກ່າວຄຳເວົ້າໃກ້ຕໍ່ອາບັດ
ກັບມາກ່ອນປູອາສະນະໄວ້ຖ້າ ຕັ້ງນ້ຳລ້າງຕີນ
ຕັ່ງເກີບ ກະເບື້ອງເຊັດຕີນ ລຸກໄປຮັບ
ຖວາຍຜ້ານຸ່ງ ຜັດ ຕາກທີ່ແດດ ຕາກຖິ້ມໄວ້ບຶດໜຶ່ງ
ຢ່າໃຫ້ມີຮອຍພັບ ມ້ວນສາຍແອວໄວ້ໃນຂົດ

ພຣະອຸປັດຊາຕ້ອງການຈະສັນ ນ້ອມຖວາຍບິນທະບາດ
ຖາມເຖິງນ້ຳດື່ມ ຖວາຍນ້ຳ ຮັບບາດຖືມາຢ່າງລະມັດລະວັງ
ຕາກແດດໄວ້ບຶດໜຶ່ງ ຢ່າຕາກຖິ້ມໄວ້ ເພິ່ງມ້ຽນບາດແລະຈີວອນ
ຢ່າມ້ຽນບາດໄວ້ເທິງພື້ນ ບໍ່ມີເຄື່ອງປູລາດ
ພາດຊາຍຈີວອນໄວ້ຂ້າງນອກ ຂົດໄວ້ຂ້າງໃນ
ມ້ຽນອາສະນະແລະນ້ຳລ້າງຕີນ ປັດກວາດບ່ອນຮົກ

ພຣະອຸປັດຊາຈະອາບນ້ຳ ຖວາຍນ້ຳເຢັນ ນ້ຳຮ້ອນ ເຮືອນໄຟ ບົດແປ້ງຜົງ ແຊ່ດິນ ຕາມຫຼັງເຂົ້າໄປຖວາຍຕັ່ງ ຮັບຈີວອນ ຖວາຍແປ້ງຜົງແລະດິນ ຖ້າມີຄວາມສາມາດກໍໃຊ້ດິນທາໜ້າ ປິດທັງທາງໜ້າທາງຫຼັງ ບໍ່ນັ່ງບຽດພິກຂຸຜູ້ເຖຣະ ບໍ່ກີດກັນອາສະນະພິກຂຸນະວະກະ ເຮັດບໍຣິກຳ ອອກຈາກເຮືອນໄຟ ປິດທັງທາງໜ້າທາງຫຼັງ ເຮັດບໍຣິກຳໃນນ້ຳ ອາບນ້ຳແລ້ວຂຶ້ນມາກ່ອນ ນຸ່ງຜ້າ ເຊັດໂຕໃຫ້ແຫ້ງ ເຊັດນ້ຳຈາກໂຕພຣະອຸປັດຊາຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງເຮືອນໄຟ ປູອາສະນະໄວ້ ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖາມເຖິງນ້ຳດື່ມ ເພິ່ງຮຽນເພິ່ງສອບຖາມ
ຖ້າມີຄວາມອຸດສາຫະກໍຄວນປັດກວາດວິຫານທີ່ຮົກ ກ່ອນປັດກວາດ ຄວນຂົນບາດຈີວອນ ຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ຕຽງ ຕັ່ງ ຂາງຮອງຕຽງ ງັ່ງງ ພະນັກອີງແລະເຄື່ອງປູລາດພື້ນອອກໄປ ປັດກວາດຂີ້ເຫຍື່ອຕັ້ງແຕ່ເພດານລົງມາ ເຊັດຂອບປ່ອງຢ້ຽມ ຝາທານ້ຳມັນ ພື້ນທາສີດຳ ພື້ນບໍ່ໄດ້ທາ ພົມປູພື້ນຕາກແດດ ຂາງຮອງຕຽງ ຕຽງ ຕັ່ງ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ງັ່ງງ ພະນັກອີງ ມ້ຽນບາດຈີວອນ ລົມປົນຝຸ່ນໄງ່ພັດມາທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອຫຼືທິດໃຕ້ ຄວນອັດປ່ອງຢ້ຽມດ້ານນັ້ນ ໆ ໜ້າໜາວ ໜ້າຮ້ອນ ກາງເວັນ ກາງຄືນ ບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸດຕິ ຕັກນ້ຳດື່ມນ້ຳໃຊ້ ໝໍ້ຊຳຣະ

ພຣະອຸປັດຊາເກີດຄວາມບໍ່ຍິນດີ ລຳຄານ ເຫັນຜິດ ຕ້ອງອາບັດໜັກ ຄວນດຶງເຂົ້າຫາອາບັດເດີມ ມານັດ ອັບພານ ຖ້າຖືກລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳແລະອຸກເຂປະນີຍະກຳ ຈີວອນຂອງພຣະອຸປັດຊາຄວນຊັກ ເຮັດ ຍ້ອມ ຍ້ອມໃຫ້ປີ້ນກັບໄປມາ ຮັບບາດຈີວອນແລະບໍຣິຂານ ແຖຜົມ ບໍ່ເຮັດບໍຣິກຳຫຼື ຂົນຂວາຍ ເປັນປັດສາສະມະນະ

ໃຫ້ບິນທະບາດ ເຂົ້າເຮືອນ ຢ່າໄປປ່າຊ້າ ຢ່າໄປສູ່ທິດ
ພຣະອຸປັດຊາອາພາດ ຄວນປິ່ນປົວຕະຫຼອດຊີວິດ
ພິກຂຸທັງຫຼາຍ ນີ້ຄືອຸປັດຊາຍະວັດ ອັນສັດທິວິຫາຣິກເພິ່ງປະພຶດຖືກ

ພຣະອຸປັດຊາສົງເຄາະດ້ວຍອຸດເທດ ປະຣິປຸດສາ ໂອວາດ
ແລະອະນຸສາດ ໃຫ້ບາດ ຈີວອນແລະບໍຣິຂານ ເວລາອາພາດ
ບໍ່ເພິ່ງເປັນປັດສາສະມະນະ ແມ່ນອາຈະຣິຍະວັດກໍຄືກັບອຸປັດຊາຍະວັດ
ອັນເຕວາສິກະວັດກໍຄືກັບສັດທິວິຫາຣິກະວັດ
ອາວາສິກະວັດກໍຄືກັບອາຄັນຕຸກະວັດ ຄະມິກະວັດ
ອະນຸໂມທະນາວັດ ພັດຕັກຄະວັດ ປິນດະຈາຣິກະວັດ
ອາຣັນຍິກະວັດ ເສນາສະນະວັດ ຊັນຕາຄະຣະວັດ ວັດຈະກຸດຕິວັດ
ອຸປັດຊາຍະວັດ ສັດທິວິຫາຣິກະວັດ ອາຈະຣິຍະວັດ
ອັນເຕວາສິກະວັດກໍຄືກັນ

ໃນຂັນທະກະນີ້ມີ ໑໙ ເລື້ອງ ໑໔ ຂໍ້ວັດປະຕິບັດ
ພິກຂຸຜູ້ບໍ່ພ່ຳເພັງຂໍ້ວັດປະຕິບັດ ຊື່ວ່າບໍ່ພ່ຳເພັງສິນ
ຜູ້ມີສິນບໍ່ບໍລິສຸດ ຊາມປັນຍາ
ຍ່ອມບໍ່ປະສົບເອກັກຄະຕາຈິດ ຜູ້ມີຈິດຟຸ້ງຊ່ານ ອາລົມຫຼາຍ
ຍ່ອມບໍ່ເຫັນທຳໂດຍຖືກຕ້ອງ ເມື່ອບໍ່ເຫັນພຣະສັດທຳ
ຍ່ອມບໍ່ພົ້ນໄປຈາກທຸກ ພິກຂຸຜູ້ພ່ຳເພັງຂໍ້ວັດປະຕິບັດ ຊື່ວ່າພ່ຳເພັງສິນ
ຜູ້ມີສິນບໍລິສຸດ ມີປັນຍາ ຍ່ອມໄດ້ຮັບເອກັກຄະຕາຈິດ
ຜູ້ບໍ່ຟຸ້ງຊ່ານ ມີອາລົມດຽວ ຍ່ອມເຫັນທຳໂດຍທຳ
ເມື່ອເຫັນພຣະສັດທຳ ຍ່ອມພົ້ນຈາກທຸກໄດ້

ຍ້ອນເຫດນັ້ນ ພິກຂຸຜູ້ເປັນພຸດທະຊິໂນຣົດ ມີປັນຍາເຫັນປະຈັກ
ເພິ່ງພ່ຳເພັງຂໍ້ວັດປະຕິບັດ ອັນເປັນພຣະໂອວາດຂອງພຣະພຸດທະເຈົ້າຜູ້ປະເສີດ
ແຕ່ນັ້ນຈະເຖິງພຣະນິບພານໄດ້ ດັ່ງນີ້ແລ

**ວັດຕະຂັນທະກະ ຈົບ**

# ໙. ປາຕິໂມກຂັດຖະປະນະຂັນທະກະ

## ໑. ປາຕິໂມກຂຸດເທສະຍາຈະນະ

### ວ່າດ້ວຍການຂໍໃຫ້ຍົກປາຕິໂມກຂຶ້ນສະແດງ

[໓໘໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຜາສາດໃນບຸບພາຣາມຂອງນາງວິສາຂາມິຄາຣະມາຕາ ຄັ້ງນັ້ນ ໃນມື້ອຸໂປສົດ ໑໕ ຄ່ຳນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງ ມີພິກຂຸສົງຫ້ອມລ້ອມ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປແລ້ວ ປະຖົມມະຍາມຜ່ານໄປແລ້ວ ທ່ານພຣະອານົນລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ງງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປະຖົມມະຍາມຜ່ານໄປແລ້ວ ພິກຂຸສົງນັ່ງດົນແລ້ວ ພຣະຜູ້ມີພຣະພາກເຈົ້າໂຜດຍົກປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ"

ເມື່ອທ່ານພຣະອານົນຂາບທູນແນວນີ້ ພຣະຜູ້ມີພຣະພາກເຈົ້າຊົງນິ່ງ

ແມ່ນເທື່ອທີ ໒ ເມື່ອຣາຕີຜ່ານໄປແລ້ວ ເມື່ອມັດຊິມະຍາມຜ່ານໄປແລ້ວ ທ່ານພຣະອານົນ ລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ງງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ພິກຂຸສົງນັ່ງດົນແລ້ວ ພຣະຜູ້ມີພຣະພາກເຈົ້າໂຜດຍົກປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ"

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍຊົງນິ່ງ ຯລຯ

ແມ່ນເທື່ອທີ ໓ ເມື່ອຣາຕີຜ່ານໄປແລ້ວ ເມື່ອປັດສິມມະຍາມຜ່ານໄປແລ້ວ ຍາມອາລຸນທ່ານ ພຣະອານົນລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ງງບ່າຂ້າງໜຶ່ງປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປັດສິມມະຍາມຜ່ານໄປ ພິກຂຸສົງນັ່ງດົນແລ້ວ ພຣະຜູ້ມີພຣະພາກເຈົ້າໂຜດຍົກປາຕິໂມກຂຶ້ນສະແດງ ແກ່ພິກຂຸທັງຫຼາຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ບໍລິສັດບໍ່ບໍລິສຸດ"

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດວ່າ ບໍລິສັດບໍ່ບໍລິສຸດ ຊົງໝາຍເຖິງໃຜກັນ" ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະ

ມະນະສິການກຳນົດຈິດພິກຂຸສົງທີ່ມີທັງໝົດດ້ວຍຈິດ (ຂອງຕົນ) ໄດ້ເຫັນບຸກຄົນນັ້ນຜູ້ທຸສິນ ມີບາບທຳ ປະພຶດບໍ່ຮຽບຮ້ອຍ ໜ້າລັງກຽດ ປົກປິດພຶດຕິກຳ ບໍ່ແມ່ນສະມະນະແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າໃນ ປຽກຊຸ່ມ ເປັນຄືຂີ້ເຫຍື່ອນັ່ງຢູ່ທ່າມກາງພິກຂຸສົງ ບັດແລ້ວຈຶ່ງເຂົ້າໄປຫາບຸກຄົນນັ້ນ ແລ້ວໄດ້ ກ່າວກັບບຸກຄົນນັ້ນດັ່ງນີ້ວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ" ເມື່ອທ່ານພຣະມະຫາໂມກຄັນລານະແມ່ນກ່າວແນວນີ້ ບຸກຄົນນັ້ນ ກໍຍັງນິ່ງ

ແມ່ນເທື່ອທີ ໒ ທ່ານພຣະມະຫາໂມກຄັນລານະກໍໄດ້ກ່າວກັບບຸກຄົນນັ້ນດັ່ງນີ້ວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ"

ແມ່ນເທື່ອທີ ໒ ບຸກຄົນນັ້ນກໍຍັງນິ່ງ

ແມ່ນເທື່ອທີ ໓ ທ່ານພຣະມະຫາໂມກຄັນລານະກໍໄດ້ກ່າວກັບບຸກຄົນນັ້ນດັ່ງນີ້ວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ"

ແມ່ນເທື່ອທີ ໓ ບຸກຄົນນັ້ນກໍຍັງນິ່ງ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະຈັບແຂນບຸກຄົນນັ້ນດຶງໃຫ້ອອກໄປນອກຊຸ້ມປະຕູ ໃສ່ກອນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າພຣະອົງໃຫ້ຜູ້ນັ້ນອອກໄປພົ້ນແລ້ວ ບໍລິສັດບໍລິສຸດແລ້ວ ຂໍພຣະຜູ້ມີພຣະພາກເຈົ້າໂຜດຍົກປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມກຄັນລານະ ໜ້າອັດສະຈັນຈິງ ໂມກຄັນລານະ ເປັນເລື້ອງ ຍັງບໍ່ເຄີຍຜາກົດ ໂມຄະບຸຣຸດຖ້າຈົນວ່າຖືກດຶງແຂນອອກໄປ"

## ໒. ມະຫາສະມຸດເທອັດຖັດສະຣິຍະ

### ວ່າດ້ວຍຄວາມອັດສະຈັນຂອງມະຫາສະມຸດ ໘ ປະການ[១]

[໓໘໒] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໃນມະຫາສະມຸດ ມີສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ໘ ປະການ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ໘ ປະການ ຄື

໑. ມະຫາສະມຸດຕໍ່າໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ

ພິກຂຸທັງຫຼາຍ ຂໍ້ທີ່ມະຫາສະມຸດຕໍ່າໄປໂດຍລໍາດັບ ລາດໄປໂດຍລໍາດັບ ເລິກລົງໄປໂດຍລໍາດັບ ບໍ່ເລິກຊັນດິ່ງໄປທັນທີ ນີ້ເປັນສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໑ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໒. (ນໍ້າໃນ) ມະຫາສະມຸດມີປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ

ພິກຂຸທັງຫຼາຍ ຂໍ້ທີ່ (ນໍ້າໃນ) ມະຫາສະມຸດມີປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໒ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນ ມະຫາສະມຸດ

໓. ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ

ພິກຂຸທັງຫຼາຍ ຂໍ້ທີ່ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ນີ້ເປັນສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໓ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໔. ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ມະຫາສະມຸດທັງໝົດ

ພິກຂຸທັງຫຼາຍ ຂໍ້ທີ່ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງ ສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ມະຫາສະມຸດທັງໝົດ ນີ້ ເປັນສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໔ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວ ຕ່າງພາກັນຍິນດີໃນມະຫາສະມຸດ

໕. ແມ່ນໍ້າສາຍໃດສາຍໜຶ່ງໃນໂລກທີ່ໄຫຼລວມລົງສູ່ມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້

ພິກຂຸທັງຫຼາຍ ຂໍ້ທີ່ແມ່ນໍ້າສາຍໃດສາຍໜຶ່ງໃນໂລກທີ່ໄຫຼລວມລົງສູ່ມະຫາສະມຸດແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ນີ້ເປັນສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໕ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໖. ມະຫາສະມຸດມີຣົດດຽວ ຄື ຣົດເຄັມ

ພິກຂຸທັງຫຼາຍ ຂໍ້ທີ່ມະຫາສະມຸດມີຣິດດຽວ ຄື ຣິດເຄັມ ນີ້ເປັນສິ່ງທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໖ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ກ. ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ

ພິກຂຸທັງຫຼາຍ ຂໍ້ທີ່ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ນີ້ເປັນສິ່ງທີ່ໜ້າອັດສະຈັບບໍ່ເຄີຍຜາກົດປະການທີ ກ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໘. ມະຫາສະມຸດເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ ປາມະຫາຕິມິງຄະລະ ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດແດ່ ໒໐໐ ໂຍດແດ່ ໓໐໐ ໂຍດແດ່ ໔໐໐ ໂຍດແດ່ ໕໐໐ ໂຍດແດ່

ພິກຂຸທັງຫຼາຍ ຂໍ້ທີ່ມະຫາສະມຸດເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ ປາມະຫາຕິມິງຄະລະ ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດແດ່ ໒໐໐ ໂຍດແດ່ ໓໐໐ ໂຍດແດ່ ໔໐໐ ໂຍດແດ່ ໕໐໐ ໂຍດແດ່ ນີ້ເປັນຄວາມອັດສະຈັນບໍ່ເຄີຍຜາກົດປະການທີ ໘ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວ ຕ່າງພາກັນຍິນດີໃນມະຫາສະມຸດ

## ໓. ອິມັດສະມິງທຳມະວິນະເຍອັດຖັດສະຣິຍະ

## ວ່າດ້ວຍຄວາມອັດສະຈັນໃນພຣະທຳວິໄນ ໘ ປະການ

[໓໘໕] ພິກຂຸທັງຫຼາຍ ໃນທຳວິໄນນີ້ ມີທຳທີ່ໜ້າອັດສະຈັບບໍ່ເຄີຍຜາກົດ ໘ ປະການ ທີ່ພວກພິກຂຸພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້ຄືກັນ

ທຳທີ່ໜ້າອັດສະຈັບບໍ່ເຄີຍຜາກົດ ໘ ປະການ ຄື

໑. ໃນທຳວິໄນນີ້ ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ຄື

ມະຫາສະມຸດຕໍ່າໄປໂດຍລໍາດັບ ລາດໄປໂດຍລໍາດັບ ເລິກລົງໄປໂດຍລໍາດັບ ບໍ່ເລິກຊັນດິ່ງໄປທັນທີ

ພິກຂຸທັງຫຼາຍ ຂໍ້ທີ່ໃນທໍາວິໄນນີ້ ມີການສຶກສາໄປຕາມລໍາດັບ ມີການພໍ່າເພັງໄປຕາມລໍາດັບ ມີການປະຕິບັດໄປຕາມລໍາດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ນີ້ເປັນທໍາທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໑ ໃນທໍາວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນ ແລ້ວຕ່າງພາກັນຍິນດີໃນທໍາວິໄນນີ້

໒. ສາວົກທັງຫຼາຍຂອງເຮົາຍ່ອມບໍ່ລະເມີດສິກຂາບົດທີເຮົາບັນຍັດໄວ້ ແມ່ນຍ້ອນເຫດແຫ່ງຊີວິດ ຄື (ນໍ້າໃນ) ມະຫາສະມຸດມີປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ

ພິກຂຸທັງຫຼາຍ ຂໍ້ທີ່ສາວົກທັງຫຼາຍຂອງເຮົາຍ່ອມບໍ່ລະເມີດສິກຂາບົດທີເຮົາບັນຍັດໄວ້ ແມ່ນຍ້ອນເຫດແຫ່ງຊີວິດ ນີ້ເປັນທໍາທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໒ ໃນທໍາວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທໍາວິໄນນີ້

໓. ບຸກຄົນໃດທຸສິນມີບາບທໍາ ປະພຶດບໍ່ສະອາດ ໜ້າລັງກຽດ ປົກປິດພຶດຕິກໍາ ບໍ່ແມ່ນສະມະນະແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ປຽກຊຸ່ມ ເປັນຄືຂີ້ເຫຍື່ອ ສົງກໍບໍ່ຢູ່ຮ່ວມກັບບຸກຄົນນັ້ນ ສົງຍ່ອມປະຊຸມກັນນໍາບຸກຄົນນັ້ນອອກໄປທັນທີ ແມ່ນບຸກຄົນນັ້ນຈະນັ່ງຢູ່ໃນທ່າມກາງພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກບຸກຄົນນັ້ນ ຄືມະຫາສະມຸດບໍ່ຢູ່ ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ

ພິກຂຸທັງຫຼາຍ ຂໍ້ທີ່ບຸກຄົນໃດທຸສິນ ມີບາບທໍາ ປະພຶດບໍ່ສະອາດ ໜ້າລັງກຽດ ປົກປິດພຶດຕິກໍາ ບໍ່ແມ່ນສະມະນະແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ປຽກຊຸ່ມ ເປັນຄືຂີ້ເຫຍື່ອ ສົງບໍ່ຢູ່ຮ່ວມກັບບຸກຄົນນັ້ນ ສົງຍ່ອມປະຊຸມກັນນໍາບຸກຄົນນັ້ນອອກໄປທັນທີ ແມ່ນບຸກຄົນນັ້ນຈະນັ່ງຢູ່ໃນທ່າມກາງພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກບຸກຄົນນັ້ນ ນີ້ເປັນທໍາທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໓ ໃນທໍາວິໄນທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນ ທໍາວິໄນນີ້

໔. ວັນນະ ໔ ເຫຼົ່ານີ້ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນມາບວດໃນທໍາວິໄນທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມ ລວມຮຽກວ່າສະມະນະເຊື້ອສາຍສາກະຍະບຸດທັງໝົດ ຄືມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິ

ຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມ ລວມຮຽກວ່າ ມະຫາສະມຸດທັງໝົດ

ພິກຂຸທັງຫຼາຍ ຂໍ້ທີ່ວັນນະ ໔ ເຫຼົ່ານີ້ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນມາບວດໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມ ລວມຮຽກວ່າ ສະມະນະເຊື້ອສາຍສາກະຍະບຸດ ນີ້ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໔ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໕. ແມ່ນຖ້າພິກຂຸຈຳນວນຫຼາຍ ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ກໍບໍ່ເຮັດໃຫ້ນິບພານຂາດຫຼືເຕັມໄດ້ ຄືແມ່ນ້ຳສາຍໃດສາຍໜຶ່ງໃນໂລກທີ່ໄຫຼລວມລົງສູ່ມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດ ໃຫ້ມະຫາສະມຸດຂາດຫຼືເຕັມໄດ້

ພິກຂຸທັງຫຼາຍ ຂໍ້ທີ່ແມ່ນຖ້າພິກຂຸຈຳນວນຫຼາຍ ປະຣິນິບພານດ້ວຍອະນຸປາທິເສສະນິບພານ ທາດ ກໍບໍ່ເຮັດໃຫ້ນິບພານຂາດຫຼືເຕັມໄດ້ ນີ້ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ປະການທີ ໕ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໖. ທຳວິໄນນີ້ມີຣົດດຽວຄືວິມຸດຕິຣົດ (ຄວາມລຸດພົ້ນ) ຄືມະຫາສະມຸດມີຣົດດຽວ ຄືຣົດເຄັມ

ພິກຂຸທັງຫຼາຍ ຂໍ້ທີ່ທຳວິໄນນີ້ມີຣົດດຽວຄືວິມຸດຕິຣົດ(ຄວາມລຸດພົ້ນ) ນີ້ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໖ ໃນທຳວິໄນທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໗. ທຳວິໄນນີ້ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຄືມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ

ພິກຂຸທັງຫຼາຍ ຂໍ້ທີ່ທຳວິໄນນີ້ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນີ້ເປັນຄວາມອັດສະຈັນບໍ່ເຄີຍຜາກົດປະການທີ ໗ ໃນທຳວິໄນທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໗. ທຳວິໄນນີ້ເປັນບ່ອນຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອບັນລຸໂສດາປັດຕິຜົນ ພຣະສະກິທາຄາມີ ບຸກຄົນຜູ້ປະຕິບັດເພື່ອບັນລຸດກິທາຄາມີຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອບັນລຸອະນາຄາມີຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອບັນລຸອະຣະຫັດຕະຜົນ ຄືມະຫາສະມຸດ ເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ ປາມະຫາຕິມິງຄະລະ ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດແດ່ ໘໐໐ ໂຍດແດ່ ໓໐໐ ໂຍດແດ່ ໔໐໐ ໂຍດແດ່ ໕໐໐ ໂຍດແດ່

ພິກຂຸທັງຫຼາຍ ຂໍ້ທີ່ທຳວິໄນນີ້ເປັນບ່ອນຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອບັນລຸໂສດາປັດຕິຜົນ ພຣະສະກິທາຄາມີ ບຸກຄົນຜູ້ປະຕິບັດເພື່ອບັນລຸສະກິທາຄາມີຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອບັນລຸອະນາຄາມີຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອບັນລຸອະຣະຫັດຕະຜົນ ນີ້ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໗ ໃນທຳວິໄນ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້໊

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

ຍິ່ງອັດ ຍິ່ງຮົ່ວ ເປີດແລ້ວບໍ່ຮົ່ວ ຍ້ອນແນວນັ້ນ ເພິ່ງເປີດສິ່ງທີ່ອັດ
ເມື່ອເປັນດັ່ງນີ້ ສິ່ງທີ່ເປີດນັ້ນກໍຈະບໍ່ຮົ່ວ໌

## ໔. ປາຕິໂມກຂະສະວະນາຣະຫະ

## ວ່າດ້ວຍຜູ້ຄວນຟັງປາຕິໂມກ

### ເລື້ອງຊົງໃຫ້ພິກຂຸສົງຍົກປາຕິໂມກຂຶ້ນສະແດງເອງ

[໓໗໖] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຕັ້ງແຕ່ບັດນີ້ເປັນຕົ້ນໄປ ເຮົາຈະບໍ່ກະທຳອຸໂປສົດ ບໍ່ຍົກປາຕິໂມກຂຶ້ນສະແດງ ພິກຂຸທັງຫຼາຍ ຕັ້ງແຕ່ນີ້ໄປພວກທ່ານເພິ່ງກະທຳອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງເອງ

ພິກຂຸທັງຫຼາຍ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ເຮົາຈະກະທຳອຸໂປສົດ ຈະຍົກປາຕິໂມກຂຶ້ນ ສະແດງໃນບໍລິສັດທີ່ບໍ່ບໍລິສຸດ ພິກຂຸທັງຫຼາຍ ພິກຂຸຜູ້ມີອາບັດຕິດໂຕບໍ່ເພິ່ງຟັງປາຕິໂມກ ອົງໃດຟັງ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ງົດປາຕິໂມກແກ່ພິກຂຸຜູ້ມີອາບັດຕິດໂຕນັ້ນ

ພິກຂຸທັງຫຼາຍ ສົງເພິ່ງງົດປາຕິໂມກແບບນີ້ ໃນມື້ອຸໂປສົດ ໑໔ ຄ່ຳ ຫຼື ໑໕ ຄ່ຳນັ້ນ ເມື່ອບຸກຄົນນັ້ນເຂົ້າຮ່ວມປະຊຸມສົງ ເພິ່ງປະກາດຂຶ້ນໃນທ່າມກາງສົງວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ມີອາບັດຕິດໂຕ ຂ້າພະເຈົ້າຈະງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ສົງບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ ປາຕິໂມກເປັນອັນງົດແລ້ວ"

## ເລື້ອງພວກພິກຂຸສັບພັກຄີງົດປາຕິໂມກ

ສະໄໝນັ້ນ ພວກພິກຂຸສັບພັກຄີເປີກສາກັນວ່າ "ໃຜ ໆ ບໍ່ຮູ້ຈັກພວກເຮົາ" ມີອາບັດຕິດໂຕ ຟັງປາຕິໂມກ ພິກຂຸຜູ້ເຖຣະທັງຫຼາຍຜູ້ຮູ້ວາຣະຈິດຂອງຜູ້ອື່ນ ບອກພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ພວກພິກຂຸສັບພັກຄີຊື່ນີ້ ໆ ເປີກສາກັນວ່າ ໃຜ ໆ ບໍ່ຮູ້ຈັກພວກເຮົາ ມີອາບັດຕິດໂຕ ຟັງປາຕິໂມກ"

ພວກພິກຂຸສັບພັກຄີໄດ້ຟັງຂ່າວວ່າ "ພິກຂຸຜູ້ເຖຣະທັງຫຼາຍຜູ້ຮູ້ວາຣະຈິດຂອງຜູ້ອື່ນບອກແກ່ພິກຂຸທັງຫຼາຍວ່າ ພວກພິກຂຸສັບພັກຄີຊື່ນີ້ ໆ ເປີກສາກັນວ່າ ໃຜ ໆ ບໍ່ຮູ້ຈັກພວກເຮົາ ມີອາບັດຕິດໂຕ ຟັງປາຕິໂມກ"

ພິກຂຸສັບພັກຄີພວກນັ້ນເປີກສາກັນວ່າ "ພິກຂຸທັງຫຼາຍຜູ້ມີສິນດີງາມຈະງົດປາຕິໂມກ ແກ່ພວກເຮົາກ່ອນ" ຈຶ່ງຟ້າວງົດປາຕິໂມກແກ່ພິກຂຸທັງຫຼາຍຜູ້ບໍລິສຸດບໍ່ມີອາບັດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ

ບັນດາພິກຂຸຜູ້ມັກໜ້ອຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງງົດປາຕິໂມກແກ່ພິກຂຸທັງຫຼາຍຜູ້ບໍລິສຸດບໍ່ມີອາບັດ ຍ້ອນເລື້ອງບໍ່ສົມຄວນຍ້ອນເຫດບໍ່ສົມຄວນນໍ"

ຄັ້ງນັ້ນແລ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີງົດປາຕິໂມກແກ່ພິກຂຸທັງຫຼາຍຜູ້ບໍລິສຸດ ບໍ່ມີອາບັດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງງົດປາຕິໂມກແກ່ພິກຂຸ ຜູ້ບໍລິສຸດບໍ່ມີອາບັດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ອົງໃດງົດ ຕ້ອງອາບັດທຸກກົດ"

# ໕. ທຳມິກາທຳມິກະປາຕິໂມກຂັດຖະປະນະ

## ວ່າດ້ວຍການງົດປາຕິໂມກຊອບທຳແລະບໍ່ຊອບທຳ

[໓໒໗] ພິກຂຸທັງຫຼາຍ ການງົດປາຕິໂມກບໍ່ຊອບທຳ ໑ ຢ່າງ ການງົດປາຕິໂມກຊອບທຳ ໑ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໒ ຢ່າງ ການງົດປາຕິໂມກຊອບທຳ ໒ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໓ ຢ່າງ ການງົດປາຕິໂມກຊອບທຳ ໓ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໔ ຢ່າງ ການງົດປາຕິໂມກຊອບທຳ ໔ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໕ ຢ່າງ ການງົດປາຕິໂມກຊອບທຳ ໕ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໖ ຢ່າງ ການງົດປາຕິໂມກຊອບທຳ ໖ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໗ ຢ່າງ ການງົດປາຕິໂມກຊອບທຳ ໗ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໘ ຢ່າງ ການງົດປາຕິໂມກຊອບທຳ ໘ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໙ ຢ່າງ ການງົດປາຕິໂມກຊອບທຳ ໙ ຢ່າງ ການງົດປາຕິໂມກບໍ່ຊອບທຳ ໑໐ ຢ່າງ ການງົດປາຕິໂມກຊອບທຳ ໑໐ ຢ່າງ

ການງົດປາຕິໂມກບໍ່ຊອບທຳ ໑ ຢ່າງ ຄື
ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນ ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໑ ຢ່າງ
ການງົດປາຕິໂມກຊອບທຳ ໑ ຢ່າງ ຄື
ງົດປາຕິໂມກຍ້ອນສີລະວິບັດມີມູນ ນີ້ເປັນການງົດປາຕິໂມກຊອບທຳ ໑ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໒ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໒ ຢ່າງ
ການງົດປາຕິໂມກຊອບທຳ ໒ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນ

ນີ້ເປັນການງົດປາຕິໂມກຊອບທຳ ໒ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໓ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນ

໓. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໓ ຢ່າງ
ການງົດປາຕິໂມກຊອບທຳ ໓ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນ
໓. ງົດປາຕິໂມກຍ້ອນທິດຖິວິບັດມີມູນ

ນີ້ເປັນການງົດປາຕິໂມກຊອບທຳ ໓ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໔ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນ
໓. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນ
໔. ງົດປາຕິໂມກຍ້ອນອາຊີວະວິບັດບໍ່ມີມູນ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໔ ຢ່າງ
ການງົດປາຕິໂມກຊອບທຳ ໔ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນ
໒. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນ
໓. ງົດປາຕິໂມກຍ້ອນທິດຖິວິບັດມີມູນ
໔. ງົດປາຕິໂມກຍ້ອນອາຊີວະວິບັດມີມູນ

ນີ້ເປັນການງົດປາຕິໂມກຊອບທຳ ໔ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໕ ຢ່າງ ຄື

໑. ງົດປາຕິໂມກຍ້ອນອາບັດປາຣາຊິກບໍ່ມີມູນ
໒. ງົດປາຕິໂມກຍ້ອນອາບັດສັງຄາທິເສດບໍ່ມີມູນ
໓. ງົດປາຕິໂມກຍ້ອນອາບັດປາຈິດຕີບໍ່ມີມູນ
໔. ງົດປາຕິໂມກຍ້ອນອາບັດປະຕິເທສະນີຍະບໍ່ມີມູນ
໕. ງົດປາຕິໂມກຍ້ອນອາບັດທຸກກົດບໍ່ມີມູນ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໕ ຢ່າງ

ການງົດປາຕິໂມກຊອບທຳ ໕ ຢ່າງ ຄື

໑. ງົດປາຕິໂມກຍ້ອນອາບັດປາຣາຊິກມີມູນ
໒. ງົດປາຕິໂມກຍ້ອນອາບັດສັງຄາທິເສດມີມູນ
໓. ງົດປາຕິໂມກຍ້ອນອາບັດປາຈິດຕີມີມູນ
໔. ງົດປາຕິໂມກຍ້ອນອາບັດປະຕິເທສະນີຍະມີມູນ
໕. ງົດປາຕິໂມກຍ້ອນອາບັດທຸກກົດມີມູນ

ນີ້ເປັນການງົດປາຕິໂມກຊອບທຳ ໕ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໖ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໒. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸເຮັດ
໕. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໖. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸເຮັດ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໖ ຢ່າງ
ການງົດປາຕິໂມກຊອບທຳ ໖ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໒. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸເຮັດ
໕. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໖. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸເຮັດ

ນີ້ເປັນການງົດປາຕິໂມກຊອບທຳ ໖ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໗ ຢ່າງ ຄື

໑. ງົດປາຕິໂມກຍ້ອນອາບັດປາຣາຊິກບໍ່ມີມູນ
໒. ງົດປາຕິໂມກຍ້ອນອາບັດສັງຄາທິເສດບໍ່ມີມູນ
໓. ງົດປາຕິໂມກຍ້ອນອາບັດຖຸນລັດໄຈບໍ່ມີມູນ

໔. ງົດປາຕິໂມກຍ້ອນອາບັດປາຈິດຕີບໍ່ມີມູນ
໕. ງົດປາຕິໂມກຍ້ອນອາບັດປະຕິເທສະນີຍະບໍ່ມີມູນ
໖. ງົດປາຕິໂມກຍ້ອນອາບັດທຸກກົດບໍ່ມີມູນ
໗. ງົດປາຕິໂມກຍ້ອນອາບັດທຸບພາສິດບໍ່ມີມູນ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໗ ຢ່າງ
ການງົດປາຕິໂມກຊອບທຳ ໗ ຢ່າງ ຄື

໑. ງົດປາຕິໂມກຍ້ອນອາບັດປາຣາຊິກມີມູນ
໒. ງົດປາຕິໂມກຍ້ອນອາບັດສັງຄາທິເສດມີມູນ
໓. ງົດປາຕິໂມກຍ້ອນອາບັດຖຸນລັດໄຈມີມູນ
໔. ງົດປາຕິໂມກຍ້ອນອາບັດປາຈິດຕີມີມູນ
໕. ງົດປາຕິໂມກຍ້ອນອາບັດປະຕິເທສະນີຍະມີມູນ
໖. ງົດປາຕິໂມກຍ້ອນອາບັດທຸກກົດມີມູນ
໗. ງົດປາຕິໂມກຍ້ອນອາບັດທຸບພາສິດມີມູນ

ນີ້ເປັນການງົດປາຕິໂມກຊອບທຳ ໗ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໘ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໒. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸເຮັດ
໕. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໖. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸເຮັດ
໗. ງົດປາຕິໂມກຍ້ອນອາຊີວະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໘. ງົດປາຕິໂມກຍ້ອນອາຊີວະວິບັດບໍ່ມີມູນທີ່ພິກຂຸເຮັດ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໘ ຢ່າງ
ການງົດປາຕິໂມກຊອບທຳ ໘ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໒. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ

໔. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸເຮັດ
໕. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໖. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸເຮັດ
໗. ງົດປາຕິໂມກຍ້ອນອາຊີວະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໘. ງົດປາຕິໂມກຍ້ອນອາຊີວະວິບັດມີມູນທີ່ພິກຂຸເຮັດ

ນີ້ເປັນການງົດປາຕິໂມກຊອບທຳ ໘ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໙ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນສີລະວິບັດບໍ່ມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໕. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸເຮັດ
໖. ງົດປາຕິໂມກຍ້ອນອາຈາຣະວິບັດບໍ່ມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ
໗. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸບໍ່ໄດ້ເຮັດ
໘. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸເຮັດ
໙. ງົດປາຕິໂມກຍ້ອນທິດຖິວິບັດບໍ່ມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ

ນີ້ເປັນການງົດປາຕິໂມກບໍ່ຊອບທຳ ໙ ຢ່າງ
ການງົດປາຕິໂມກຊອບທຳ ໙ ຢ່າງ ຄື

໑. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸເຮັດ
໓. ງົດປາຕິໂມກຍ້ອນສີລະວິບັດມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ
໔. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໕. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸເຮັດ
໖. ງົດປາຕິໂມກຍ້ອນອາຈາຣະວິບັດມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ
໗. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸບໍ່ໄດ້ເຮັດ
໘. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸເຮັດ
໙. ງົດປາຕິໂມກຍ້ອນທິດຖິວິບັດມີມູນທີ່ພິກຂຸທັງເຮັດແລະບໍ່ໄດ້ເຮັດ

ນີ້ເປັນການງົດປາຕິໂມກຊອບທຳ ໙ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໑໐ ຢ່າງ ຄື

໑. ພິກຂຸຜູ້ເປັນປາຣາຊິກບໍ່ນັ່ງຢູ່ໃນບໍລິສັດນັ້ນ
໒. ຄໍາເວົ້າຫາຣືບຜູ້ເປັນປາຣາຊິກບໍ່ໄດ້ຄ້າງຢູ່
໓. ພິກຂຸຜູ້ບອກຄືນສິກຂາບໍ່ນັ່ງຢູ່ໃນບໍລິສັດນັ້ນ
໔. ຄໍາເວົ້າຫາຣືບຜູ້ບອກຄືນສິກຂາບໍ່ໄດ້ຄ້າງຢູ່
໕. ພິກຂຸຮ່ວມສາມັກຄີທີ່ຊອບທໍາ
໖. ບໍ່ຄ້ານສາມັກຄີທີ່ຊອບທໍາ
໗. ຄໍາເວົ້າຫາຣືບການຄ້ານສາມັກຄີທີ່ຊອບທໍາບໍ່ຄ້າງຢູ່
໘. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດ ບໍ່ມີຢູ່
໙. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ບໍ່ມີຢູ່
໑໐. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ ບໍ່ມີຢູ່

ນີ້ເປັນການງົດປາຕິໂມກບໍ່ຊອບທໍາ ໑໐ ຢ່າງ
ການງົດປາຕິໂມກຊອບທໍາ ໑໐ ຢ່າງ ຄື

໑. ພິກຂຸຜູ້ເປັນປາຣາຊິກນັ່ງຢູ່ໃນບໍລິສັດນັ້ນ
໒. ຄໍາເວົ້າຫາຣືບຜູ້ເປັນປາຣາຊິກໄດ້ຄ້າງຢູ່
໓. ພິກຂຸຜູ້ບອກຄືນສິກຂານັ່ງຢູ່ໃນບໍລິສັດນັ້ນ
໔. ຄໍາເວົ້າຫາຣືບຜູ້ບອກຄືນສິກຂາໄດ້ຄ້າງຢູ່
໕. ພິກຂຸບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ
໖. ພິກຂຸຄ້ານສາມັກຄີທີ່ຊອບທໍາ
໗. ຄໍາເວົ້າຫາຣືບການຄ້ານສາມັກຄີທີ່ຊອບທໍາຄ້າງຢູ່
໘. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດມີຢູ່
໙. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດມີຢູ່
໑໐. ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດມີຢູ່

ນີ້ເປັນການງົດປາຕິໂມກຊອບທໍາ ໑໐ ຢ່າງ

## ໖. ທໍາມິກະປາຕິໂມກຂັດຖະປະນະ

## ວ່າດ້ວຍການງົດປາຕິໂມກທີ່ຊອບທໍາ

[໓໘໘] ທີ່ຊື່ວ່າ ພິກຂຸຜູ້ເປັນປາຣາຊິກນັ່ງຢູ່ໃນບໍລິສັດນັ້ນ ຄື

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸເຫັນພິກຂຸຕ້ອງທຳຄືປາຣາຊິກ ດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ຕ້ອງທຳຄືປາຣາຊິກ ພິກຂຸບໍ່ເຫັນພິກຂຸຜູ້ຕ້ອງທຳຄືປາຣາຊິກກໍຈິງ ແຕ່ພິກຂຸອື່ນບອກພິກຂຸ (ນັ້ນ) ວ່າ "ພິກຂຸຊື່ນີ້ຕ້ອງທຳຄືປາຣາຊິກ" ພິກຂຸບໍ່ເຫັນພິກຂຸຜູ້ຕ້ອງທຳຄືປາຣາຊິກ ທັງພິກຂຸອື່ນກໍບໍ່ໄດ້ບອກພິກຂຸ (ນັ້ນ) ວ່າ "ພິກຂຸຊື່ນີ້ຕ້ອງທຳຊື່ປາຣາຊິກ" ແຕ່ພິກຂຸ(ຜູ້ຕ້ອງທຳຄືປາຣາຊິກ)ນັ້ນເອງບອກ ພິກຂຸວ່າ "ຂ້ານ້ອຍຕ້ອງທຳຄືປາຣາຊິກ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄ່ຳນັ້ນ ເມື່ອບຸກຄົນ ນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນນີ້ຕ້ອງທຳຄືປາຣາຊິກ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຍັງຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທຳ

[໓໗໙] ເມື່ອງົດປາຕິໂມກແກ່ພິກຂຸແລ້ວ ບໍລິສັດເຊົາປະຊຸມຍ້ອນອັນຕະລາຍແນວໃດແນວໜຶ່ງ ໃນອັນຕະລາຍ ໑໐ ຢ່າງ ຄື

໑. ພຣະຣາຊາສະເດັດມາ
໒. ໂຈນມາປຸ້ນ
໓. ໄຟໄໝ້
໔. ນ້ຳໄຫຼຖ້ວມມາ
໕. ຄົນມາຫຼາຍ
໖. ຜີເຂົ້າສິງພິກຂຸ
໗. ສັດຮ້າຍເຂົ້າມາ
໘. ງູຮ້າຍເລືອເຂົ້າມາ
໙. ພິກຂຸຈະເຖິງແກ່ຊີວິດ
໑໐. ມີອັນຕະລາຍແກ່ພົມມະຈັນ

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າໃນອາວາດນັ້ນຫຼືອາວາດອື່ນ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄຳເວົ້າຜາຣົບປາຣາຊິກຂອງບຸກຄົນຊື່ນີ້ຍັງຄ້າງຢູ່ເລື້ອງນັ້ນຍັງບໍ່ໄດ້ວິນິດໄສ ຖ້າສົງພ້ອມກັນແລ້ວສົງເພິ່ງວິນິດໄສເລື້ອງນັ້ນ"

ຖ້າເພິ່ງໄດ້ຢ່າງນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄ່ຳນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄໍາເວົ້າຜາຣິບປາຣາຊິກຂອງບຸກຄົນຊື່ນີ້ຍັງຄ້າງຢູ່ເລື້ອງນັ້ນຍັງບໍ່ໄດ້ວິນິດໄສ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຍັງຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໓໙໐] ທີ່ຊື່ວ່າ ພິກຂຸຜູ້ບອກຄືນສິກຂານັ່ງຢູ່ໃນບໍລິສັດນັ້ນ ຄື

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸເຫັນພິກຂຸບອກຄືນສິກຂາ ດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ບອກຄືນສິກຂາ ພິກຂຸ(ນັ້ນ)ບໍ່ເຫັນພິກຂຸຜູ້ບອກຄືນສິກຂາກໍຈິງ ແຕ່ພິກຂຸອື່ນບອກພິກຂຸ(ນັ້ນ)ວ່າ "ພິກຂຸນີ້ບອກຄືນສິກຂາ" ພິກຂຸ(ນັ້ນ)ບໍ່ເຫັນພິກຂຸຜູ້ບອກຄືນສິກຂາ ທັງພິກຂຸອື່ນກໍບໍ່ບອກພິກຂຸ (ນັ້ນ )ວ່າ "ພິກຂຸຊື່ນີ້ບອກຄືນສິກຂາ" ແຕ່ພິກຂຸ (ຜູ້ບອກຄືນສິກຂາ) ນັ້ນເອງ ບອກພິກຂຸວ່າ "ຂ້ານ້ອຍບອກຄືນສິກຂາ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນ ນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນນີ້ບອກຄືນສິກຂາ ຂ້າພະເຈົ້າງົດປາຕິໂມກ ແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຍັງຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໓໙໑] ເມື່ອງົດປາຕິໂມກແກ່ພິກຂຸແລ້ວ ບໍລິສັດເຊົາປະຊຸມຍ້ອນອັນຕະລາຍແນວໃດແນວໜຶ່ງໃນອັນຕະລາຍ ໑໐ ຢ່າງ ຄື

໑. ພຣະຣາຊາສະເດັດມາ

ฯลฯ

໑໐. ມີອັນຕະລາຍແກ່ພົມມະຈັນ

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ເມື່ອຜູ້ນັ້ນຢູ່ພ້ອມໜ້າໃນອາວາດນັ້ນຫຼືອາວາດອື່ນ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄໍາເວົ້າຜາຣິບການບອກຄືນສິກຂາຂອງບຸກຄົນຊື່ນີ້ຍັງຄ້າງຢູ່ ເລື້ອງນັ້ນຍັງບໍ່ໄດ້ວິນິດໄສ ຖ້າສົງພ້ອມກັນແລ້ວເພິ່ງວິນິດໄສເລື້ອງນັ້ນ"

ຖ້າເພິ່ງໄດ້ຢ່າງນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄໍາເວົ້າຜາຣົບການບອກຄືນສິກຂາຂອງບຸກຄົນຊື່ນີ້ຍັງຄ້າງຢູ່ ເລື່ອງນັ້ນຍັງບໍ່ໄດ້ວິນິດໄສ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຍັງຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໓໙໔] ທີ່ຊື່ວ່າ ພິກຂຸບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ ຄື

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຫັນພິກຂຸບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ ພິກຂຸ (ນັ້ນ) ບໍ່ເຫັນພິກຂຸຜູ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາກໍຈິງ ແຕ່ພິກຂຸອື່ນບອກພິກຂຸ (ນັ້ນ)ວ່າ "ພິກຂຸຊື່ນີ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ" ພິກຂຸ(ນັ້ນ)ບໍ່ເຫັນພິກຂຸຜູ້ບໍ່ເຂົ້າຮ່ວມ ສາມັກຄີທີ່ຊອບທໍາ ທັງພິກຂຸອື່ນກໍບໍ່ບອກພິກຂຸ(ນັ້ນ)ວ່າ "ພິກຂຸຊື່ນີ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ" ແຕ່ພິກຂຸ(ຜູ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ)ນັ້ນເອງບອກພິກຂຸວ່າ "ຂ້ານ້ອຍບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າເພິ່ງປະກາດທ່າມກາງສົງດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ບໍ່ເຂົ້າຮ່ວມສາມັກຄີທີ່ຊອບທໍາ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໓໙໓] ທີ່ຊື່ວ່າ ພິກຂຸຄ້ານສາມັກຄີທີ່ຊອບທໍາ ຄື

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຫັນພິກຂຸຜູ້ຄ້ານສາມັກຄີທີ່ຊອບທໍາດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ຄ້ານສາມັກຄີທີ່ຊອບທໍາ ພິກຂຸ(ນັ້ນ)ບໍ່ເຫັນພິກຂຸຜູ້ຄ້ານສາມັກຄີທີ່ຊອບທໍາກໍຈິງ ແຕ່ພິກຂຸອື່ນບອກພິກຂຸ(ນັ້ນ)ວ່າ "ພິກຂຸຊື່ນີ້ຄ້ານສາມັກຄີທີ່ຊອບທໍາ" ພິກຂຸ(ນັ້ນ)ບໍ່ເຫັນພິກຂຸຜູ້ຄ້ານສາມັກຄີທີ່ຊອບທໍາ ພິກຂຸອື່ນກໍບໍ່ບອກພິກຂຸ(ນັ້ນ)ວ່າ "ພິກຂຸຊື່ນີ້ຄ້ານສາມັກຄີທີ່ຊອບທໍາ" ແຕ່ພິກຂຸ(ຜູ້ຄ້ານສາມັກຄີທີ່ຊອບທໍາ)ນັ້ນເອງບອກພິກຂຸວ່າ "ຂ້ານ້ອຍຄ້ານສາມັກຄີທີ່ຊອບທໍາ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າເພິ່ງປະກາດທ່າມກາງສົງ ດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ຄ້ານສາມັກຄີທີ່ຊອບທໍາ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າການງົດປາຕິໂມກຊອບທໍາ

[໓໒໔] ເມື່ອງົດປາຕິໂມກແລ້ວ ບໍລິສັດເຊົາປະຊຸມຍ້ອນອັນຕະລາຍແນວໃດແນວໜຶ່ງໃນອັນຕະລາຍ ໑໐ ຢ່າງ ຄື

໑. ພຣະຣາຊາສະເດັດມາ ৳ລ৳
໑໐. ມີອັນຕະລາຍແກ່ພົມມະຈັນ

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າໃນອາວາດນັ້ນຫຼືອາວາດອື່ນ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄໍາເວົ້າຜາຣົບການຄ້ານສາມັກຄີທີ່ຊອບທໍາ ຂອງບຸກຄົນຊື່ນີ້ຍັງຄ້າງຢູ່ ເລື້ອງນັ້ນຍັງບໍ່ໄດ້ວິນິດໄສ ຖ້າສົງພ້ອມກັນແລ້ວສົງເພິ່ງວິນິດໄສເລື້ອງນັ້ນ"

ຖ້າເພິ່ງໄດ້ຢ່າງນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄໍາເວົ້າຜາຣົບການຄ້ານສາມັກຄີທີ່ຊອບທໍາ ຂອງບຸກຄົນຊື່ນີ້ຍັງຄ້າງຢູ່ ເລື້ອງນັ້ນຍັງບໍ່ໄດ້ວິນິດໄສ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໓໒໕] ທີ່ຊື່ວ່າ ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດມີຢູ່ ຄື

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດ ດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ພິກຂຸນັ້ນມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສ ພິກຂຸ(ນັ້ນ)ບໍ່ເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນແລະມີຜູ້ນຶກສົງໄສຍ້ອນສີລະວິບັດກໍຈິງ ແຕ່ພິກຂຸອື່ນບອກພິກຂຸ(ນັ້ນ)ວ່າ "ພິກຂຸຊື່ນີ້ມີຜູ້ເຫັນ ມີຜູ້ໄດ້ຍິນແລະມີຜູ້ນຶກສົງໄສຍ້ອນສີລະວິບັດ" ພິກຂຸ(ນັ້ນ)ບໍ່ເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນແລະ ມີຜູ້ນຶກສົງໄສຍ້ອນສີລະວິບັດ ທັງພິກຂຸອື່ນກໍບໍ່ບອກພິກຂຸ(ນັ້ນ)ວ່າ "ພິກຂຸຊື່ນີ້ ມີຜູ້ເຫັນ ມີຜູ້ໄດ້ຍິນແລະມີຜູ້ນຶກສົງໄສ" ແຕ່ພິກຂຸ(ທີ່ມີຜູ້ເຫັນມີຜູ້ໄດ້ຍິນແລະມີຜູ້ນຶກສົງໄສຍ້ອນສີລະວິບັດ) ນັ້ນເອງບອກພິກຂຸວ່າ "ຂ້ານ້ອຍມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄໍ່ານັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງ ດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນສີລະວິບັດ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທໍາ

[໖໕໖] ທີ່ຊື່ວ່າ ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະ ມີຜູ້ນຶກສົງໄສຍ້ອນອາຈາຣະວິບັດມີຢູ່ ຄື

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍທີ່ເປັນເຫດໃຫ້ພິກຂຸນັ້ນມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ພິກຂຸ(ນັ້ນ)ບໍ່ເຫັນພິກຂຸ ທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດກໍຈິງ ແຕ່ພິກຂຸອື່ນບອກພິກຂຸ (ນັ້ນ)ວ່າ "ພິກຂຸຊື່ນີ້ ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ" ພິກຂຸ (ນັ້ນ)ບໍ່ເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ທັງພິກຂຸອື່ນກໍບໍ່ບອກພິກຂຸ(ນັ້ນ) ວ່າ "ພິກຂຸຊື່ນີ້ ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ແຕ່ພິກຂຸ(ທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ)ນັ້ນເອງບອກພິກຂຸວ່າ "ຂ້ານ້ອຍ ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄ່ຳນັ້ນ ເມື່ອບຸກຄົນ ນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນອາຈາຣະວິບັດ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທຳ

[໖໕໗] ທີ່ຊື່ວ່າ ພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດມີຢູ່ ຄື

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດດ້ວຍອາການ ດ້ວຍລັກສະນະ ດ້ວຍເຄື່ອງໝາຍ ທີ່ເປັນເຫດໃຫ້ພິກຂຸນັ້ນມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ ພິກຂຸ(ນັ້ນ)ບໍ່ເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດກໍຈິງ ແຕ່ພິກຂຸອື່ນບອກພິກຂຸ(ນັ້ນ) ວ່າ "ພິກຂຸຊື່ນີ້ ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ" ພິກຂຸ(ນັ້ນ)ບໍ່ເຫັນພິກຂຸທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ ທັງພິກຂຸອື່ນກໍບໍ່ບອກພິກຂຸ(ນັ້ນ) ວ່າ "ພິກຂຸຊື່ນີ້ ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ" ແຕ່ພິກຂຸ (ທີ່ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ)ນັ້ນເອງບອກພິກຂຸວ່າ "ຂ້ານ້ອຍມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ"

ພິກຂຸທັງຫຼາຍ ພິກຂຸຫວັງຢູ່ ໃນມື້ອຸໂປສົດ ໑໔ ຫຼື ໑໕ ຄ່ຳນັ້ນ ເມື່ອບຸກຄົນ ນັ້ນຢູ່ພ້ອມໜ້າ ເພິ່ງປະກາດທ່າມກາງສົງດ້ວຍໄດ້ເຫັນນັ້ນ ດ້ວຍໄດ້ຍິນນັ້ນ ດ້ວຍນຶກສົງໄສນັ້ນວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນຊື່ນີ້ມີຜູ້ເຫັນ ມີຜູ້ໄດ້ຍິນ ແລະມີຜູ້ນຶກສົງໄສຍ້ອນທິດຖິວິບັດ ຂ້າພະເຈົ້າງົດປາຕິໂມກແກ່ບຸກຄົນນັ້ນ ເມື່ອບຸກຄົນນັ້ນຢູ່ພ້ອມໜ້າບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງ" ຊື່ວ່າ ການງົດປາຕິໂມກຊອບທຳ

ການງົດປາຕິໂມກຊອບທຳ ມີ ໑໐ ຢ່າງນີ້ແລ

**ປະຖົມພານະວານ ຈົບ**

# ໗. ອັດຕາທານອັງຄະ

## ວ່າດ້ວຍອົງແຫ່ງອະທິກອນທີ່ຕົນເພິ່ງຮັບ

[໓໙໗] ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອແລ້ວ ຖວາຍອະພິວາດແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພິກຂຸຜູ້ປະສົງຈະຮັບ(ຊຳຮະ)ອະທິກອນ ຄວນຮັບອະທິກອນປະກອບດ້ວຍອົງທີ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະສົງຈະຮັບອະທິກອນ ເພິ່ງຮັບອະທິກອນປະກອບດ້ວຍອົງ ໕ ຄື

໑. ພິກຂຸຜູ້ປະສົງຈະຮັບອະທິກອນ ເພິ່ງພິຈາລະນາແນວນີ້ວ່າ "ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ເຖິງເວລາທີ່ຈະຮັບອະທິກອນນີ້ຫຼືບໍ່ເຖິງນໍ" ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ຍັງບໍ່ແມ່ນເວລາທີ່ຈະຮັບອະທິກອນນີ້ ບໍ່ແມ່ນເຖິງເວລາ" ກໍບໍ່ຄວນຮັບອະທິກອນນັ້ນ

໒. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ເຖິງເວລາທີ່ຈະຮັບອະທິກອນນີ້ ບໍ່ແມ່ນຍັງບໍ່ເຖິງເວລາ" ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ "ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ອະທິກອນທີ່ເຮົາຈະຮັບນີ້ເປັນເລື້ອງຈິງແທ້ບໍ" ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ອະທິກອນທີ່ຈະຮັບນີ້ບໍ່ຈິງ ບໍ່ແມ່ນເລື້ອງຈິງ" ກໍບໍ່ຄວນຮັບອະທິກອນນັ້ນ

໓. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ອະທິກອນນີ້ເປັນເລື້ອງຈິງ ບໍ່ແມ່ນເລື້ອງບໍ່ຈິງ" ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ "ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ອະທິກອນນີ້ມີປະໂຫຍດ ຫຼືບໍ່ມີ" ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ອະທິກອນນີ້ບໍ່ປະກອບດ້ວຍປະໂຫຍດ ບໍ່ແມ່ນປະກອບດ້ວຍປະໂຫຍດ" ກໍບໍ່ຄວນຮັບອະທິກອນນັ້ນ

໔. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ອະທິກອນນີ້ປະກອບດ້ວຍປະໂຫຍດ ບໍ່ແມ່ນບໍ່ປະກອບດ້ວຍປະໂຫຍດ" ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ "ເຮົາເມື່ອຮັບອະທິກອນນີ້ຈະໄດ້ພິກຂຸຜູ້ເຄີຍພົບເຫັນ ເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳ ໂດຍຖືກຕ້ອງດ້ວຍວິໄນບໍ" ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ເຮົາເມື່ອຮັບອະທິກອນນີ້ໄວ້ເຮົາຈະບໍ່ໄດ້ພິກຂຸຜູ້ເຄີຍພົບເຫັນເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳ ໂດຍຖືກຕ້ອງດ້ວຍວິໄນ" ກໍບໍ່ຄວນຮັບອະທິກອນນັ້ນ

໕. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ເຮົາເມື່ອຮັບອະທິກອນນີ້ໄວ້ ເຮົາຈະໄດ້ພິກຂຸຜູ້ເຄີຍພົບເຫັນເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳ ໂດຍຖືກຕ້ອງດ້ວຍວິໄນ" ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ "ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງ ວິວາດ ສົງແຕກກັນ ສົງຮ້າວຮານ ສົງແບ່ງແຍກ ສົງເປັນຕ່າງ ໆ ກັນບໍ" ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງ ວິວາດກັນ ສົງແຕກກັນ ສົງຮ້າວຮານ ສົງແບ່ງແຍກ ສົງເປັນຕ່າງ ໆ ກັນ" ກໍບໍ່ຄວນຮັບອະທິກອນນັ້ນ

ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ "ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະບໍ່ເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງ ວິວາດ ສົງແຕກກັນ ສົງຮ້າວຮານ ສົງແບ່ງ ແຍກ ສົງເປັນຕ່າງ ໆ ກັນ" ຄວນຮັບອະທິກອນນັ້ນ

ອຸບາລີ ອະທິກອນເຊິ່ງປະກອບດ້ວຍອົງ ໕ ທີ່ພິກຂຸຮັບແລ້ວຈັກບໍ່ກະທຳໃຫ້ເດືອດຮ້ອນໃນພາຍຫຼັງ ດ້ວຍປະການດັ່ງນີ້

## ๗. ໂຈທະເກນະປັດຈະເວກຂິຕັບພະທຳມະ

## ວ່າດ້ວຍຄຸນສົມບັດທີ່ຜູ້ໂຈດເພິ່ງພິຈາລະນາ

[໓໙໙] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນທໍ່ໃດ ຈຶ່ງຈະໂຈດຜູ້ອື່ນໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນ ໕ ຢ່າງ ແລ້ວຈຶ່ງໂຈດຜູ້ອື່ນ ຄື

໑. ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາມີຄວາມປະພຶດທາງກາຍບໍລິສຸດບໍ່ນໍ ເຮົາປະກອບດ້ວຍຄວາມປະພຶດ ທາງກາຍທີ່ບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ຄຸນສົມບັດຂໍ້ນີ້ເຮົາມີຢູ່ຫຼືບໍ່ມີນໍ" ຖ້າພິກຂຸບໍ່ແມ່ນຜູ້ມີຄວາມປະພຶດທາງກາຍບໍລິສຸດ ປະກອບດ້ວຍຄວາມປະພຶດທາງກາຍທີ່ບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ "ເຊີນທ່ານຕັ້ງໃຈຮູ້ຄວາມປະພຶດ ທາງກາຍສາກ່ອນເທີ້ນ" ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໒. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ "ເຮົາມີຄວາມປະພຶດທາງວາຈາບໍລິສຸດບໍ່ນໍ ເຮົາປະກອບດ້ວຍຄວາມປະພຶດທາງວາຈາບໍລິສຸດບໍ່ເສຍຫາຍ ບໍ່ບົກຜ່ອງ ຄຸນສົມບັດ ຂໍ້ນີ້ເຮົາມີຫຼືບໍ່ມີນໍ" ຖ້າພິກຂຸບໍ່ແມ່ນຜູ້ມີຄວາມປະພຶດທາງວາຈາບໍລິສຸດ ປະກອບດ້ວຍຄວາມປະພຶດທາງວາຈາບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ "ເຊີນທ່ານຕັ້ງໃຈຮູ້ຄວາມປະພຶດທາງວາຈາສາກ່ອນເທີ້ນ" ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໓. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ "ເຮົາມີເມດຕາຈິດ ບໍ່ອາຄາດພະຍາບາດເພື່ອນພົມມະຈາຣີບໍ່ນໍ ຄຸນສົມບັດ ຂໍ້ນີ້ເຮົາມີບໍ່ມີນໍ" ຖ້າພິກຂຸບໍ່ແມ່ນຜູ້ມີເມດຕາຈິດ ບໍ່ອາຄາດ ພະຍາບາດເພື່ອນພົມມະຈາຣີ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ "ເຊີນທ່ານມີເມດຕາຈິດໃນເພື່ອນພົມມະຈາຣີສາກ່ອນເທີ້ນ" ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໔. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ "ເຮົາເປັນພະຫູສູດ ຊົງສຸຕະ ມີການສັ່ງສົມສຸຕະບໍ່ນໍ ເຮົາໄດ້ສະດັບຫຼາຍ ຊົງຈຳໄດ້ແມ່ນຍຳຄ່ອງປາກ ຂຶ້ນໃຈ ຮູ້ແຈ້ງດ້ວຍປັນຍາເຊິ່ງທຳງາມເບື້ອງຕົ້ນ ງາມທ່າມກາງ ງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ພ້ອມທັງພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນບໍ່ນໍ ຄຸນສົມບັດຂໍ້ນີ້ເຮົາມີຫຼືບໍ່ມີນໍ" ຖ້າພິກຂຸບໍ່ໄດ້ເປັນພະຫູສູດ ຊົງສຸຕະ ມີການສັ່ງສົມສຸຕະ ໄດ້ສະດັບຫຼາຍ ຊົງຈຳໄດ້ແມ່ນຍຳ ຄ່ອງປາກ ຂຶ້ນໃຈ ຮູ້ແຈ້ງດ້ວຍປັນຍາເຊິ່ງທຳງາມເບື້ອງຕົ້ນ ງາມທ່າມກາງ ງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ພ້ອມທັງພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ວ່າ "ເຊີນທ່ານສຶກສາພຣະປະຣິຍັຕິສາກ່ອນເທີ້ນ" ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໕. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ "ເຮົາຊົງຈຳປາຕິໂມກທັງສອງໄດ້ແມ່ນຍຳໂດຍພິດສະດານ ຈຳແນກຖືກຕ້ອງ ຈັດລະບຽບຖືກຕ້ອງ ວິນິດໄສຖືກຕ້ອງໂດຍສຸດຕະໂດຍອະນຸພະຍັນຊະນະບໍ່ນໍ ຄຸນສົມບັດຂໍ້ນີ້ເຮົາມີຫຼືບໍ່ມີນໍ" ຖ້າພິກຂຸບໍ່ແມ່ນຜູ້ຊົງຈຳປາຕິໂມກທັງສອງໄດ້ແມ່ນຍຳໂດຍພິດສະດານ ຈຳແນກຖືກຕ້ອງ ຈັດລະບຽບຖືກຕ້ອງ ວິນິດໄສຖືກຕ້ອງໂດຍສຸດຕະໂດຍອະນຸພະຍັນຊະນະ(ຕາມຂໍ້ ຕາມອັກສອນ) ພິກຂຸ ຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ວ່າ "ເຊີນທ່ານສຶກສາພຣະວິໄນໃຫ້ຊ່ຽວຊານ ສາກ່ອນເທີ້ນ" ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນ ໕ ຢ່າງນີ້ ຈຶ່ງໂຈດຜູ້ອື່ນ

## ໗. ໂຈທະເນນະອຸປັດຖາເປຕັບພະທຳມະ

## ວ່າດ້ວຍຄຸນສົມບັດທີ່ຜູ້ໂຈດເພິ່ງຕັ້ງໄວ້ໃນຕົນ

[໔໐໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງຄຸນສົມບັດທີ່ໃດໄວ້ໃນຕົນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງຄຸນສົມບັດ ໕ ຢ່າງໄວ້ໃນຕົນ ຄື

໑. ເຮົາຈະກ່າວໂດຍການທີ່ຄວນ ຈະບໍ່ກ່າວໂດຍການບໍ່ຄວນ
໒. ເຮົາຈະກ່າວຄຳຈິງ ຈະບໍ່ກ່າວຄຳຕົວະ
໓. ເຮົາຈະກ່າວຄຳສຸພາບ ຈະບໍ່ກ່າວຄຳຫຍາບ
໔. ເຮົາຈະກ່າວຄຳມີປະໂຫຍດ ຈະບໍ່ກ່າວຄຳຂາດປະໂຫຍດ
໕. ເຮົາຈະກ່າວດ້ວຍເມດຕາຈິດ ຈະບໍ່ມຸ້ງຮ້າຍ

ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງຄຸນສົມບັດ ໕ ຢ່າງນີ້ໄວ້ໃນຕົນ ຈຶ່ງໂຈດຜູ້ອື່ນ

# ໑໐. ໂຈທະກະຈຸທິຕະກະປະຕິສັງຍຸດຕະກະຖາ

## ວ່າດ້ວຍເລື້ອງຂອງຜູ້ໂຈດແລະຜູ້ຖືກໂຈດ

[໔໐໑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດໂດຍບໍ່ຊອບທຳ ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການທໍ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ພິກຂຸຜູ້ໂຈດໂດຍບໍ່ຊອບທຳ ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການ ໕ ຢ່າງ ຄື

໑. ທ່ານໂຈດໂດຍການບໍ່ຄວນ ບໍ່ໂຈດໂດຍການທີ່ຄວນ ຈຶ່ງສົມຄວນເດືອດຮ້ອນ
໒. ທ່ານໂຈດດ້ວຍເລື້ອງບໍ່ຈິງ ບໍ່ໂຈດດ້ວຍເລື້ອງຈິງ ຈຶ່ງສົມຄວນເດືອດຮ້ອນ
໓. ທ່ານໂຈດດ້ວຍຄຳຫຍາບ ບໍ່ໂຈດດ້ວຍຄຳສຸພາບ ຈຶ່ງສົມຄວນເດືອດຮ້ອນ
໔. ທ່ານໂຈດດ້ວຍເລື້ອງທີບໍ່ປະກອບດ້ວຍປະໂຫຍດ ບໍ່ໂຈດດ້ວຍເລື້ອງທີປະກອບດ້ວຍປະໂຫຍດ ຈຶ່ງສົມຄວນເດືອດຮ້ອນ
໕. ທ່ານມີຈິດມຸ້ງຮ້າຍໆໂຈດ ບໍ່ມີເມດຕາຈິດ ຈຶ່ງສົມຄວນເດືອດຮ້ອນ

ອຸບາລີ ພິກຂຸຜູ້ໂຈດໂດຍບໍ່ຊອບທຳ ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການ ໕ ຢ່າງເຫຼົ່ານີ້ ຂໍ້ນັ້ນເປັນຍ້ອນເຫດອັນໃດ ຍ້ອນພິກຂຸແມ່ນອື່ນບໍ່ເພິ່ງສຳຄັນບຸກຄົນທີ່ເພິ່ງໂຈດດ້ວຍເລື້ອງບໍ່ຈິງ"

## ເລື້ອງຜູ້ຖືກໂຈດໂດຍບໍ່ຊອບທຳບໍ່ຕ້ອງເດືອດຮ້ອນ

ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ຖືກໂຈດໂດຍບໍ່ຊອບທຳ ບໍ່ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການທໍ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ພິກຂຸຜູ້ຖືກໂຈດໂດຍບໍ່ຊອບທຳ ບໍ່ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການ ໕ ຢ່າງ ຄື

໑. ທ່ານຖືກໂຈດໂດຍການບໍ່ຄວນ ບໍ່ຖືກໂຈດໂດຍການທີ່ຄວນ ຈຶ່ງບໍ່ສົມຄວນເດືອດຮ້ອນ
໒. ທ່ານຖືກໂຈດດ້ວຍເລື້ອງບໍ່ຈິງ ບໍ່ແມ່ນຖືກໂຈດດ້ວຍເລື້ອງຈິງ ຈຶ່ງບໍ່ສົມຄວນເດືອດຮ້ອນ
໓. ທ່ານຖືກໂຈດດ້ວຍຄຳຫຍາບ ບໍ່ຖືກໂຈດດ້ວຍຄຳສຸພາບ ຈຶ່ງບໍ່ສົມຄວນເດືອດຮ້ອນ

໔. ທ່ານຖືກໂຈດດ້ວຍເລື້ອງທີ່ບໍ່ເປັນປະໂຫຍດ ບໍ່ແມ່ນຖືກໂຈດດ້ວຍເລື້ອງທີ່ເປັນປະໂຫຍດ ຈຶ່ງບໍ່ສົມຄວນເດືອດຮ້ອນ
໕. ທ່ານຖືກໂຈດຍ້ອນຄວາມມຸ້ງຮ້າຍ ບໍ່ແມ່ນຖືກໂຈດຍ້ອນເມດຕາຈິດ ຈຶ່ງບໍ່ສົມຄວນເດືອດຮ້ອນ

ອຸບາລີ ພິກຂຸຜູ້ຖືກໂຈດໂດຍບໍ່ຊອບທຳ ບໍ່ເພິ່ງເຖິງຄວາມເດືອດຮ້ອນດ້ວຍອາການ ໕ ຢ່າງເຫຼົ່ານີ້"

## ເລື້ອງຜູ້ເປັນໂຈດໂດຍຖືກຕ້ອງຕາມທຳບໍ່ຕ້ອງເດືອດຮ້ອນ

ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ເປັນໂຈດໂດຍຖືກຕ້ອງຕາມທຳ ບໍ່ເພິ່ງເດືອດຮ້ອນດ້ວຍ ອາການທໍ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ພິກຂຸຜູ້ເປັນໂຈດໂດຍຖືກຕ້ອງຕາມທຳ ບໍ່ເພິ່ງເດືອດຮ້ອນດ້ວຍອາການ ໕ ຢ່າງ ຄື

໑. ທ່ານໂຈດໂດຍການທີ່ຄວນ ບໍ່ແມ່ນໂຈດໂດຍການບໍ່ຄວນ ຈຶ່ງບໍ່ສົມຄວນເດືອດຮ້ອນ
໒. ທ່ານໂຈດດ້ວຍເລື້ອງຈິງ ບໍ່ແມ່ນໂຈດດ້ວຍເລື້ອງບໍ່ຈິງ ຈຶ່ງບໍ່ສົມຄວນເດືອດຮ້ອນ
໓. ທ່ານໂຈດດ້ວຍຄຳສຸພາບ ບໍ່ແມ່ນໂຈດດ້ວຍຄຳຫຍາບ ຈຶ່ງບໍ່ສົມຄວນເດືອດຮ້ອນ
໔. ທ່ານໂຈດດ້ວຍເລື້ອງທີ່ເປັນປະໂຫຍດ ບໍ່ແມ່ນໂຈດດ້ວຍເລື້ອງທີ່ບໍ່ເປັນປະໂຫຍດ ຈຶ່ງບໍ່ສົມຄວນເດືອດຮ້ອນ
໕. ທ່ານມີເມດຕາຈິດໂຈດ ບໍ່ໄດ້ມຸ້ງຮ້າຍ ຈຶ່ງບໍ່ສົມຄວນເດືອດຮ້ອນ

ອຸບາລີ ພິກຂຸຜູ້ເປັນໂຈດໂດຍຖືກຕ້ອງຕາມທຳ ບໍ່ເພິ່ງເດືອດຮ້ອນດ້ວຍອາການ ໕ ຢ່າງນີ້ ຂໍ້ນັ້ນເປັນຍ້ອນເຫດໃດ ຍ້ອນພິກຂຸອື່ນກໍເພິ່ງສຳຄັນບຸກຄົນທີ່ເພິ່ງໂຈດດ້ວຍເລື້ອງຈິງ"

## ຜູ້ຖືກໂຈດໂດຍຖືກຕ້ອງຕາມທຳຕ້ອງເດືອດຮ້ອນ

ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ຖືກໂຈດໂດຍຖືກຕ້ອງຕາມທຳ ເພິ່ງເດືອດຮ້ອນດ້ວຍອາການທໍ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ພິກຂຸຜູ້ຖືກໂຈດໂດຍຖືກຕ້ອງຕາມທຳ ເພິ່ງເດືອດຮ້ອນດ້ວຍອາການ ໕ ຢ່າງ ຄື

໑. ທ່ານຖືກໂຈດໂດຍການທີ່ຄວນ ບໍ່ແມ່ນການອັນບໍ່ຄວນ ຈຶ່ງສົມຄວນເດືອດຮ້ອນ
໒. ທ່ານຖືກໂຈດດ້ວຍເລື້ອງຈິງ ບໍ່ແມ່ນເລື້ອງບໍ່ຈິງ ຈຶ່ງສົມຄວນເດືອດຮ້ອນ

໓. ທ່ານຖືກໂຈດດ້ວຍຄຳສຸພາບ ບໍ່ແມ່ນຄຳຫຍາບ ຈຶ່ງສົມຄວນເດືອດຮ້ອນ
໔. ທ່ານຖືກໂຈດດ້ວຍເລື້ອງທີເປັນປະໂຫຍດ ບໍ່ແມ່ນບໍ່ເປັນປະໂຫຍດ ຈຶ່ງສົມຄວນເດືອດຮ້ອນ
໕. ທ່ານຖືກໂຈດດ້ວຍເມດຕາຈິດ ບໍ່ແມ່ນຍ້ອນມຸ້ງຮ້າຍ ຈຶ່ງສົມຄວນເດືອດຮ້ອນ

ອຸບາລີ ພິກຂຸຜູ້ຖືກໂຈດໂດຍຖືກຕ້ອງຕາມທຳ ເພິ່ງເດືອດຮ້ອນດ້ວຍອາການ ໕ ຢ່າງນີ້”

## ຄຸນສົມບັດຂອງຜູ້ເປັນໂຈດ ໕ ຢ່າງ

ທ່ານພຣະອຸບາລີທູນຖາມວ່າ “ພິກຂຸຜູ້ໂຈດປະສົງຈະໂຈດຄົນອື່ນ ເພິ່ງມະນະສິການຄຸນສົມບັດພາຍໃນຕົນທີ່ໃດແລ້ວຈຶ່ງໂຈດຜູ້ອື່ນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອຸບາລີ ພິກຂຸຜູ້ໂຈດ ປະສົງຈະໂຈດຄົນອື່ນ ເພິ່ງມະນະສິການຄຸນສົມບັດພາຍໃນຕົນ ໕ ຢ່າງ ແລ້ວຈຶ່ງໂຈດຜູ້ອື່ນ ຄື

໑. ມີຄວາມກາຣຸນ
໒. ມຸ້ງປະໂຫຍດ
໓. ມີຄວາມອີດູ
໔. ມຸ້ງອອກຈາກອາບັດ
໕. ຢຶດວິໄນໄວ້ເປັນແນວທາງ

ອຸບາລີ ພິກຂຸຜູ້ເປັນໂຈດ ປະສົງຈະໂຈດຄົນອື່ນ ເພິ່ງມະນະສິການຄຸນສົມບັດພາຍໃນຕົນ ໕ ຢ່າງເຫຼົ່ານີ້ກ່ອນ ແລ້ວຈຶ່ງໂຈດຜູ້ອື່ນ”

## ຜູ້ຖືກໂຈດເພິ່ງຕັ້ງຢູ່ໃນທຳ ໒ ຢ່າງ

ທ່ານພຣະອຸບາລີທູນຖາມວ່າ “ພິກຂຸຜູ້ຖືກໂຈດ ເພິ່ງຕັ້ງຢູ່ໃນທຳທີ່ໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸບາລີ ພິກຂຸຜູ້ຖືກໂຈດ ເພິ່ງຕັ້ງຢູ່ໃນທຳ ໒ ຢ່າງ ຄື

໑. ຄວາມຈິງ
໒. ຄວາມບໍ່ຂຸ່ນເຄືອງ

**ທຸຕິຍະພານະວານ ຈົບ**

**ປາຕິໂມກຂັຕຖະປົນຂັນທະກະທີ ໙ ຈົບ**

## ໃນຂັນທະກະນີ້ມີ ໑໐ ເລື້ອງ ໔ ພານະວານ

## ລວມເລື້ອງທີ່ມີໃນປາຕິໂມກຂັດຖະປະນະຂັນທະກະ

ເລື້ອງໃນມື້ອຸໂປສົດ ພິກຂຸຜູ້ມີບາບຖືກໄລ່ ໓ ຄັ້ງ
ບໍ່ຍອມອອກໄປ ຖືກພຣະໂມກຄັນລານະດຶງອອກໄປ
ເລື້ອງຄວາມອັດສະຈັນໃນພຣະທຳວິໄນ
ຄື ມີການສຶກສາໄປຕາມລຳດັບ
ປຽບດ້ວຍມະຫາສະມຸດທີ່ຕ່ຳລາດເລິກລົງຕາມລຳດັບ

ພຣະສາວົກບໍ່ລະເມີດສິກຂາບົດ
ປຽບດ້ວຍມະຫາສະມຸດມີປົກກະຕິບໍ່ລົ້ນຝັ່ງ
ສົງຍ່ອມຂັບໄລ່ຜູ້ທຸສີນອອກ
ປຽບດ້ວຍມະຫາສະມຸດຊັດຊາກສົບຂຶ້ນຝັ່ງ
ວັນນະ ໔ ມາບວດເປັນບັນພະຊິດແລ້ວ
ຍ່ອມລະຊື່ແລະໂຄດເດີມ ປຽບດ້ວຍແມ່ນ້ຳໃຫຍ່
ໄຫຼລົງສູ່ມະຫາສະມຸດແລ້ວຍ່ອມລະຊື່ເດີມ
ພິກຂຸຈຳນວນຫຼາຍປະຣິນິບພານ
ປຽບດ້ວຍນ້ຳໄຫຼລົງມະຫາສະມຸດ
ພຣະທຳວິໄນມີວິມຸດຕິຣົດແນວດຽວ
ປຽບດ້ວຍມະຫາສະມຸດມີຣົດເຄັມແນວດຽວ
ພຣະທຳວິໄນມີຣັດຕະນະຫຼາຍ
ເປັນບ່ອນຢູ່ຂອງພຣະອະຣິຍະບຸກຄົນ ໘ ຈຳພວກ
ປຽບດ້ວຍມະຫາສະມຸດເປັນບ່ອນຢູ່ຂອງສັດຂະໜາດໃຫຍ່
ແລ້ວຍັງຄຸນໃນພຣະສາດສະໜາໃຫ້ດຳລົງຢູ່
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ງົດປາຕິໂມກ
ແກ່ຜູ້ມີອາບັດຕິດໂຕໃນມື້ອຸໂປສົດ

ພວກພິກຂຸສັບພັກຄີເປີກສາກັນວ່າໃຜ ໆ ບໍ່ຮູ້ຈັກເຮົາ
ທັງທີ່ມີອາບັດຕິດໂຕກໍຍັງເຮັດອຸໂປສົດແລ້ວຢ້ານວ່າ
ພິກຂຸຜູ້ມີສີນດີງາມຈະງົດປາຕິໂມກແກ່ຕົນ
ຈຶ່ງຟ້າວກ່າວໂທດຜູ້ອື່ນກ່ອນ

ການງົດປາຕິໂມກບໍ່ຊອບທຳ ໑ ຢ່າງ
ການງົດປາຕິໂມກຊອບທຳ ໑ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໒ ຢ່າງ
ການງົດປາຕິໂມກຊອບທຳ ໒ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໓ ຢ່າງ
ການງົດປາຕິໂມກຊອບທຳ ໓ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໔ ຢ່າງ
ການງົດປາຕິໂມກຊອບທຳ ໔ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໕ ຢ່າງ
ການງົດປາຕິໂມກຊອບທຳ ໕ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໖ ຢ່າງ
ການງົດປາຕິໂມກຊອບທຳ ໖ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໗ ຢ່າງ
ການງົດປາຕິໂມກຊອບທຳ ໗ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໘ ຢ່າງ
ການງົດປາຕິໂມກຊອບທຳ ໘ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໙ ຢ່າງ
ການງົດປາຕິໂມກຊອບທຳ ໙ ຢ່າງ
ການງົດປາຕິໂມກບໍ່ຊອບທຳ ໑໐ ຢ່າງ
ການງົດປາຕິໂມກຊອບທຳ ໑໐ ຢ່າງ

ພິກຂຸງົດປາຕິໂມກຍ້ອນວິບັດ ໔ ຢ່າງ ຄື ສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ແລະອາຊີວະວິບັດ (ທີ່ຊອບທຳແລະບໍ່ຊອບທຳ)

ພິກຂຸງົດປາຕິໂມກຍ້ອນອາບັດ ໕ ກອງ ຄື ປາຣາຊິກ ສັງຄາທິເສດ ປາຈິດຕີ ປະຕິເທສະນິຍະ ແລະທຸກກົດ (ທີ່ຊອບທຳແລະບໍ່ຊອບທຳ)

ພິກຂຸງົດປາຕິໂມກຍ້ອນວິບັດ ໓ ຄື ສີລະວິບັດ ອາຈາຣະວິບັດແລະທິດຖິວິບັດທີ່ພິກຂຸເຮັດແລະບໍ່ໄດ້ເຮັດ (ທີ່ຊອບທຳແລະບໍ່ຊອບທຳ)

ພິກຂຸງົດປາຕິໂມກຍ້ອນອາບັດ ໗ ກອງ ຄື ປາຣາຊິກ ສັງຄາທິເສດ ຖຸນລັດໄຈ ປາຈິດຕີ ປະຕິເທສະນິຍະ ທຸກກົດແລະ

ທຸບພາສິດ(ທີ່ຊອບທຳແລະບໍ່ຊອບທຳ)

ພິກຂຸງົດປາຕິໂມກ ຍ້ອນວິບັດ ໔ ຄື ສີລະວິບັດ ອາຈາຣະວິບັດ ທິດຖິວິບັດແລະອາຊີວະວິບັດ ທີ່ພິກຂຸເຮັດແລະບໍ່ໄດ້ເຮັດ (ທີ່ຊອບທຳແລະບໍ່ຊອບທຳ)

ພິກຂຸງົດປາຕິໂມກຍ້ອນວິບັດ ໑ ວິທີ ຄື ຍ້ອນສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ທີ່ພິກຂຸເຮັດ ບໍ່ໄດ້ເຮັດ ທັງທີ່ເຮັດແລະບໍ່ໄດ້ເຮັດ (ທີ່ຊອບທຳແລະບໍ່ຊອບທຳ)

ພຣະຜູ້ມີພຣະພາກເຈົ້າຕັດແກ່ຜູ້ຮູ້ຕາມຄວາມເປັນຈິງຢ່າງນີ້ ພິກຂຸງົດປາຕິໂມກມີລັກສະນະ ໑໐ ຄື

(໑) ພິກຂຸເປັນປາຣາຊິກ

(໒) ຄຳເວົ້າຜາຣິບຜູ້ເປັນປາຣາຊິກໄດ້ຄ້າງຢູ່

(໓) ພິກຂຸບອກຄືນສິກຂາ

(໔) ຄຳເວົ້າຜາຣິບຜູ້ບອກຄືນສິກຂາໄດ້ຄ້າງຢູ່

(໕) ພິກຂຸບໍ່ຮ່ວມສາມັກຄີ

(໖) ເວົ້າຄ້ານສາມັກຄີ

(໗) ຄຳຄ້ານສາມັກຄີຄ້າງຢູ່

(໘-໑໐) ມີຜູ້ໄດ້ເຫັນໄດ້ຍິນແລະນຶກສົງໄສຍ້ອນສີລະວິບັດ ອາຈາຣະວິບັດແລະທິດຖິວິບັດ

ພິກຂຸງົດປາຕິໂມກຍ້ອນເຫັນເອງ ຜູ້ອື່ນບອກທ່ານຫຼື ຜູ້ເປັນປາຣາຊິກນັ້ນບອກຄວາມຈິງແກ່ທ່ານ

ບໍລິສັດເຊົາປະຊຸມ ຍ້ອນອັນຕະລາຍ ໑໐ ຢ່າງ ຄື ພຣະຣາຊາ ໂຈນ ໄຟ ນ້ຳ ມະນຸດ ອະມະນຸດ ສັດຮ້າຍ ສັດເລືອຄານ ຊີວິດ ແລະພົມມະຈັນ ອະທິບາຍຄວາມເລື້ອງງົດ ປາຕິໂມກທີ່ຊອບທຳແລະບໍ່ຊອບທຳຕາມທີ່ກຳນົດໄວ້

ພິກຂຸຜູ້ໂຈດເພິ່ງຕັ້ງຄຸນສົມບັດພາຍໃນຕົນ ຄື ກ່າວໂດຍການທີ່ຄວນ ກ່າວຄຳຈິງ ຄຳທີ່ມີປະໂຫຍດ ຈະເປັນພັກພວກມີພິດຖຽງກັນເປັນຕົ້ນ ຜູ້ເປັນໂຈດມີກາຍ ວາຈາບໍລິສຸດ ມີເມດຕາຈິດ ເປັນພະຫູສູດ ຮູ້ປາຕິໂມກທັງສອງຝ່າຍ

ພິກຂຸເພິ່ງໂຈດໂດຍການອັນຄວນ ກ່າວດ້ວຍເລື້ອງຈິງ
ດ້ວຍຄຳສຸພາບ ດ້ວຍຄຳທີ່ມີປະໂຫຍດ
ດ້ວຍເມດຕາຈິດຍ້ອນຖືກໂຈດໂດຍບໍ່
ຊອບທຳພິກຂຸເດືອດຮ້ອນ
ກໍເພິ່ງບັນເທົາຄວາມເດືອດຮ້ອນ
ພິກຂຸຜູ້ໂຈດແລະຜູ້ຖືກໂຈດຊອບທຳ
ເພິ່ງບັນເທົາຄວາມເດືອດຮ້ອນ

ພຣະຜູ້ມີພຣະພາກເຈົ້າຊົງປະກາດຂໍ້ປະຕິບັດຂອງພິກຂຸຜູ້ຈະໂຈດໄວ້
໕ ຢ່າງ ຄື ຄວາມກາຣຸນ ມຸ້ງປະໂຫຍດ ມີຄວາມອີດູ
ການອອກຈາກອາບັດແລະຍຶດພຣະວິໄນໄວ້ເປັນແນວທາງ
ຜູ້ຖືກໂຈດເພິ່ງຕັ້ງຢູ່ໃນຄວາມຈິງແລະບໍ່ຂຸ່ນເຄືອງ

**ປາຕິໂມກຂັດຖະປະນະຂັນທະກະ ຈົບ**

# ໑໐. ພິກຂຸນີຂັນທະກະ

## ໑. ປະຖົມພານະວານ

### ໑. ມະຫາປະຊາປະຕິໂຄຕະມີວັດຖຸ

#### ວ່າດ້ວຍເລື້ອງພຣະນາງມະຫາປະຊາບໍດີໂຄຕະມີ

[໒໐໒] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິໂຄທາຣາມ ເມືອງກະບິນລະພັດ ແຄວ້ນສັກກະ[໑] ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ ທີ່ສົມຄວນ ພຣະນາງມະຫາປະຊາບໍດີໂຄຕະມີຜູ້ຢືນຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍປະທານອະໄຣກາດ ມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດໄວ້ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ໂຄຕະມີ ທ່ານຢ່າພໍໃຈການທີ່ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ແມ່ນເທື່ອທີ ໒ ໗ລ໗

ແມ່ນເທື່ອທີ ໓ ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນວ່າ "ຂໍປະທານອະໄຣກາດມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດໄວ້ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ໂຄຕະມີ ທ່ານຢ່າພໍໃຈການທີ່ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ລຳດັບນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີຊົງດຳຣິວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງ ປະກາດໄວ້" ຊົງເປັນທຸກເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ກັນແສງຢູ່ພ້ອມຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຊົງກະທຳປະທັກຂິນແລ້ວສະເດັດກັບໄປ

ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນເມືອງກະບິນລະພັດ ຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນເວສາລີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນເວສາລີ

ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄາຣະສາລາ ປ່າມະຫາວັນ ໃນນະຄອນເວສາລີນັ້ນ

ເວລານັ້ນ ພຣະນາງມະຫາປະຊາບໍດີໂຄຕະມີປົງພຣະເກສາ ຊົງນຸ່ງຫົ່ມຜ້າກາສາຍະພ້ອມດ້ວຍນາງສາກິຍານີຈຳນວນຫຼາຍ ສະເດັດໄປທາງນະຄອນເວສາລີ ສະເດັດເຂົ້າໄປສູ່ກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ ໂດຍລຳດັບ ເວລານັ້ນ ພຣະນາງມະຫາປະຊາບໍດີໂຄຕະມີພຣະບາດໄຂ່ພອງ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ຊຸ້ມປະຕູຊັ້ນນອກ

ທ່ານພຣະອານົນເຫັນພຣະນາງມະຫາປະຊາບໍດີໂຄຕະມີພຣະບາດໄຂ່ພອງ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ຊຸ້ມປະຕູຊັ້ນນອກ ຈຶ່ງຖາມດັ່ງນີ້ວ່າ "ພຣະນາງໂຄຕະມີ ຍ້ອນເຫດໃດ ພຣະອົງຈຶ່ງມີພຣະບາດໄຂ່ພອງ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ຊຸ້ມປະຕູຊັ້ນນອກ"

ພຣະນາງຕັດຕອບວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້"

ທ່ານພຣະອານົນກ່າວວ່າ "ພຣະນາງໂຄຕະມີ ຖ້າເປັນແນວນັ້ນ ຂໍພຣະອົງຈົ່ງຖ້າຢູ່ບ່ອນນີ້ຈັກ ໜ້ອຍ ຈົນກວ່າອາດຕະມາຈະທູນຂໍພຣະຜູ້ມີພຣະພາກເຈົ້າໃຫ້ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້"

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ທ່ານພຣະອານົນຜູ້ນັ່ງຢູ່ ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະນາງມະຫາປະຊາບໍດີໂຄຕະມີ ພຣະບາດໄຂ່ພອງ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ຊຸ້ມປະຕູຊັ້ນນອກດ້ວຍຄິດວ່າ ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມາຕຸຄາມອອກບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ຂໍປະທານວະໂຣກາດ ຂໍມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ອານົນ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ແມ່ນເທື່ອທີ ໒ ທ່ານພຣະອານົນກໍໄດ້ຂາບທູນກັບພຣະຜູ້ມີພຣະພາກເຈົ້າວ່າ "ຂໍປະທານ ວະໂຣກາດ ຂໍມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະ ຖາຄົດເຈົ້າ ຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ອານົນ ທ່ານຢ່າພໍໃຈການທີ່ມາຕຸຄາມ ໄດ້ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດຊົງປະກາດໄວ້ເລີຍ"

ແມ່ນເທື່ອທີ ໓ ທ່ານພຣະອານົນກໍໄດ້ຂາບທູນກັບພຣະຜູ້ມີພຣະພາກເຈົ້າວ່າ "ຂໍປະທານ ວະໂຣກາດ ຂໍມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະ ຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ອານົນ ທ່ານຢ່າພໍໃຈການທີ່ມາຕຸຄາມ ໄດ້ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດຊົງປະກາດໄວ້ເລີຍ"

ລຳດັບນັ້ນ ທ່ານພຣະອານົນຄິດວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມາຕຸຄາມ ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະອົງຊົງປະກາດໄວ້ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງທູນຂໍພຣະອົງໃຫ້ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະ ຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍອຸບາຍບາງຢ່າງ"

ຄັ້ງນັ້ນ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ມາຕຸຄາມອອກ ຈາກ ເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ຈະ ສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກິທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນໄດ້ບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ມາຕຸຄາມອອກຈາກເຮືອນບວດເປັນບັນພະ ຊິດ ໃນທຳວິໄນທີ່ຕະຖາຄົດຊົງປະກາດໄວ້ ສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ສກິທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນໄດ້"

ທ່ານພຣະອານົນຂາບທູນວ່າ "ຖ້າມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນພຣະ ທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກິທາຄາມິ ຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນໄດ້ ພຣະນາງມະຫາປະຊາບໍດີໂຄຕະມີຜູ້ເປັນພຣະ ມາຕຸດສາ ຂອງພຣະຜູ້ມີພຣະພາກເຈົ້າ ຊົງມີອຸປະກາຣະຫຼາຍ ເຄີຍປະຄັບປະຄອງເບິ່ງແຍງ ຖວາຍກະສຽນທາຣະ (ນ້ຳນົມ) ເມື່ອພຣະຊົນນີສະຫວັນຄົດ ໄດ້ໃຫ້ພຣະຜູ້ມີພຣະພາກເຈົ້າດື່ມ

ກະສຽນທາຣະ ຂໍປະທານອະໄຣກາດ ຂໍມາຕຸຄາມ ເພື່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າປະກາດໄວ້ແລ້ວດ້ວຍເທີ້ນ ຂ້ານ້ອຍ”

## ໔. ອັດຖະຄະຣຸທຳມະ

### ວ່າດ້ວຍຄະຣຸທຳ ໘ ຂໍ້

[໔໐໓] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອານົນ ຖ້າພຣະນາງມະຫາປະຊາບໍດີໂຄຕະມີຮັບຄະຣຸທຳ ໘ ຂໍ້ (ການຮັບຄະຣຸທຳ) ນັ້ນແລຈຶ່ງເປັນການອຸປະສົມບົດຂອງພຣະນາງມະຫາປະຊາບໍດີໂຄຕະມີນັ້ນ ຄື

໑. ພິກຂຸນີເຖິງຈະບວດໄດ້ ໑໐໐ ພັນສາ ກໍຕ້ອງກະທຳການຂາບໄຫວ້ ຕ້ອນຮັບ ກະທຳອັນຊະລີກຳ ກະທຳສາມີຈິກຳແກ່ພິກຂຸຜູ້ບວດແມ່ນໃນມື້ນັ້ນທຳຂໍ້ ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໒. ພິກຂຸນີບໍ່ເພິ່ງຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ[๑] ທຳຂໍ້ນີ້ພິກຂຸນີເພິ່ງ ສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໓. ພິກຂຸນີເພິ່ງຫວັງທຳ ໒ ຢ່າງ ຄື ຖາມອຸໂປສົດແລະໄປຮັບໂອວາດຈາກພິກຂຸສົງທຸກເຄິ່ງເດືອນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໔. ພິກຂຸນີຈຳພັນສາແລ້ວເພິ່ງປະວາຣະນາໃນສົງ ໒ ຝ່າຍ ໂດຍສະຖານ ໓ ຄື ໄດ້ເຫັນ ໄດ້ຟັງ ຫຼືໄດ້ນຶກສົງໄສ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໕. ພິກຂຸນີຕ້ອງຄະຣຸທຳແລ້ວເພິ່ງປະພຶດປັກຂະມານັດໃນສົງ ໒ ຝ່າຍ ທຳ ຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໖. ພິກຂຸນີເພິ່ງສະແຫວງຫາການອຸປະສົມບົດໃນສົງ ໒ ຝ່າຍໃຫ້ແກ່ສິກຂະມານາທີ່ສຶກສາທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໗. ພິກຂຸນີບໍ່ເພິ່ງດ່າ ບໍ່ເພິ່ງກ່າວໂທດພິກຂຸ ບໍ່ວ່າກໍລະນີໃດ ໆ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໘. ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຫ້າມພິກຂຸນີສັ່ງສອນພິກຂຸ ແຕ່ບໍ່ຫ້າມພິກຂຸສັ່ງສອນພິກຂຸນີ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

ອານົນ ຖ້າພຣະນາງມະຫາປະຊາບໍດີໂຄຕະມີຮັບຄະຣຸທຳ ໘ ຂໍ້ນີ້ (ການຮັບຄະຣຸທຳ) ນັ້ນແລຈຶ່ງເປັນການອຸປະສົມບົດຂອງພຣະນາງມະຫາປະຊາບໍດີໂຄຕະມີນັ້ນ

ລຳດັບນັ້ນ ທ່ານພຣະອານົນຮຽນຄະຣຸທຳ ໘ ຈາກພຣະຜູ້ມີພຣະພາກເຈົ້າແລ້ວເຂົ້າໄປຫາພຣະນາງມະຫາປະຊາບໍດີໂຄຕະມີເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບພຣະນາງມະຫາປະຊາບໍດີໂຄຕະມີດັ່ງນີ້ວ່າ "ພຣະນາງໂຄຕະມີ ຖ້າພຣະນາງຮັບຄະຣຸທຳ ໘ (ການຮັບຄະຣຸທຳ)ນັ້ນແລຈະເປັນການອຸປະສົມບົດຂອງພຣະນາງ ຄື

໑. ພິກຂຸນີເຖິງຈະບວດໄດ້ ໑໐໐ ພັນສາ ກໍຕ້ອງກະທຳການຂາບໄຫວ້ ຕ້ອນຮັບ ກະທຳອັນຊະລີກຳ ກະທຳສາມີຈິກຳແກ່ພິກຂຸຜູ້ບວດແມ່ນໃນມື້ນັ້ນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດ ຊີວິດ
໒. ພິກຂຸນີບໍ່ເພິ່ງຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸທັງຫຼາຍ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໓. ພິກຂຸນີເພິ່ງຫວັງທຳ ໒ ຢ່າງ ຄື ຖາມອຸໂປສົດແລະໄປຮັບໂອວາດຈາກພິກຂຸສົງທຸກເຄິ່ງເດືອນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໔. ພິກຂຸນີຈຳພັນສາແລ້ວເພິ່ງປະວາຣະນາໃນສົງ ໒ ຝ່າຍ ໂດຍສະຖານ ໓ ຄື ໄດ້ເຫັນ ໄດ້ຟັງ ຫຼືໄດ້ນຶກສົງໄສ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໕. ພິກຂຸນີຕ້ອງຄະຣຸທຳແລ້ວເພິ່ງປະພຶດປັກຂະມານັດໃນສົງ ໒ ຝ່າຍ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໖. ພິກຂຸນີເພິ່ງສະແຫວງຫາການອຸປະສົມບົດໃນສົງ ໒ ຝ່າຍໃຫ້ແກ່ສິກຂະມານາທີ່ສຶກສາທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໗. ພິກຂຸນີບໍ່ເພິ່ງດ່າ ບໍ່ເພິ່ງກ່າວໂທດພິກຂຸ ບໍ່ວ່າກໍລະນີໃດ ໆ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ
໘. ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຫ້າມພິກຂຸນີສັ່ງສອນພິກຂຸ ແຕ່ບໍ່ຫ້າມພິກຂຸສັ່ງສອນພິກຂຸນີ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

ພຣະນາງໂຄຕະມີ ຖ້າພຣະອົງຮັບຄະຣຸທຳ ໘ ນີ້ (ການຮັບຄະຣຸທຳ)ນັ້ນແລຈະເປັນການອຸປະສົມບົດຂອງພຣະອົງ"

ພຣະນາງມະຫາປະຊາບໍດີໂຄຕະມີກ່າວວ່າ "ທ່ານອານົນ ຂ້ານ້ອຍຍອມຮັບຄະຣຸທຳ ໘ ຂໍ້ນີ້ ປະຕິບັດບໍ່ລະເມີດໄປຈົນຕະຫຼອດຊີວິດຢ່າງແນ່ນອນ ປຽບຄືຍິງສາວຫຼືຊາຍໜຸ່ມຜູ້ມັກແຕ່ງໂຕ ເມື່ອອາບນ້ຳດຳຫົວແລ້ວໄດ້ພວງອຸບົນ ພວງມະລິ ຫຼືພວງລຳດວນ ກໍໃຊ້ມືທັງສອງປະຄອງຮັບໄວ້ເໜືອຫົວສັນນັ້ນ"

ຕໍ່ມາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ບັດແລ້ວຖວາຍອະພິວາດແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະນາງມະຫາປະຊາບໍດີໂຄຕະມີຍອມຮັບຄະຣຸທຳ ໘ ຂໍ້ແລ້ວ ພຣະມາຕຸດສາຂອງພຣະອົງອຸປະສົມບົດແລ້ວຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າມາຕຸຄາມຈະບໍ່ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ແລ້ວ ພົມມະຈັນຈະດຳລົງຢູ່ໄດ້ດົນ ສັດທຳຈະດຳລົງຢູ່ເຖິງ ໑,໐໐໐ ປີ ແຕ່ຍ້ອນມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນ ທີ່ຕະຖາຄົດປະກາດໄວ້ແລ້ວ ບັດນີ້ພົມມະຈັນຈະດຳລົງຢູ່ໄດ້ບໍ່ດົນ ສັດທຳຈະຕັ້ງຢູ່ໄດ້ພຽງ ໕໐໐ ປີທໍ່ນັ້ນ[๑]

ອານົນ ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດຈະບໍ່ຕັ້ງຢູ່ໄດ້ດົນ ປຽບຄືຕະກູນໜຶ່ງທີ່ມີສະຕີຫຼາຍ ມີບຸຣຸດໜ້ອຍຈະຖືກໂຈນປຸ້ນຊັບທຳຮ້າຍໄດ້ງ່າຍ

ອານົນ ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດຈະບໍ່ຕັ້ງຢູ່ໄດ້ດົນ ຄືບົ້ງທີ່ລົງໃນນາເຂົ້າສາລີ ເຊິ່ງອຸດົມສົມບູນກໍເຮັດໃຫ້ນາເຂົ້ານັ້ນບໍ່ຕັ້ງຢູ່ໄດ້ດົນ

ອານົນ ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດຈະບໍ່ຕັ້ງຢູ່ໄດ້ດົນ ຄືເພ້ຍທີ່ລົງໃນໄຮ່ອ້ອຍທີ່ອຸດົມສົມບູນກໍເຮັດໃຫ້ໄຮ່ອ້ອຍນັ້ນບໍ່ຕັ້ງຢູ່ໄດ້ດົນ

ອານົນ ເຮົາບັນຍັດຄະຣຸທຳ ໘ ແກ່ພິກຂຸນີທັງຫຼາຍ ເຊິ່ງພິກຂຸນີທັງຫຼາຍບໍ່ເພິ່ງລະເມີດໄປຈົນຕະຫຼອດຊີວິດ ກໍຄືຄົນກັ້ນທຳນົບທີ່ສະໃຫຍ່ ເພື່ອປ້ອງກັນບໍ່ໃຫ້ນ້ຳໄຫຼ (ເຂົ້າ) ອອກໄປສັນນັ້ນ"

**ອັດຖະຄະຣຸທຳມະ ຈົບ**

## ៦. ພິກຂຸນີອຸປະສຳປະທານຸຊານະນາ

### ວ່າດ້ວຍການອະນຸຍາດໃຫ້ອຸປະສົມບົດພິກຂຸນີ

[໔໐໔] ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ເຖິງທີ່ ປະທັບ ເມື່ອເຖິງແລ້ວຖວາຍອະພິວາດ ໄດ້ຢືນຢູ່ທີ່ສົມຄວນ ພຣະນາງມະຫາປະຊາບໍດີໂຄຕະມີ ຜູ້ຢືນຢູ່ ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້ານ້ອຍຈະປະຕິບັດແນວໃດ ກັບນາງສາກິຍານີພວກນີ້ ຂ້ານ້ອຍ"

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພຣະນາງມະຫາປະຊາບໍດີໂຄຕະມີເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທໍາມີກະຖາ

ລໍາດັບນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທໍາມີກະຖາ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທໍາປະທັກຂິນແລ້ວສະເດັດກັບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທໍາມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍອຸປະສົມບົດພິກຂຸນີທັງຫຼາຍ"

ຕໍ່ມາ ພິກຂຸນີເຫຼົ່ານັ້ນ ກ່າວກັບພຣະນາງມະຫາປະຊາບໍດີໂຄຕະມີດັ່ງນີ້ວ່າ "ແມ່ເຈົ້າຍັງບໍ່ໄດ້ອຸປະສົມບົດ ແຕ່ພວກເຮົາອຸປະສົມບົດແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າພິກຂຸທັງຫຼາຍເພິ່ງໃຫ້ອຸປະສົມບົດພິກຂຸນີທັງຫຼາຍ"

ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປຫາທ່ານພຣະອານົນເຖິງທີ່ພັກ ບັດແລ້ວ ອະພິວາດໄດ້ຢືນຢູ່ທີ່ສົມຄວນ ໄດ້ຂາບຮຽນທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ພິກຂຸນີເຫຼົ່ານັ້ນກ່າວແນວນີ້ວ່າ ແມ່ເຈົ້າຍັງບໍ່ໄດ້ອຸປະສົມບົດ ແຕ່ພວກເຮົາອຸປະສົມບົດແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸທັງຫຼາຍເພິ່ງໃຫ້ອຸປະສົມບົດພິກຂຸນີທັງຫຼາຍ"

ລໍາດັບນັ້ນ ທ່ານພຣະອານົນຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ບັດແລ້ວຖວາຍອະພິວາດ ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະນາງມະຫາປະຊາບໍດີໂຄຕະມີໄດ້ກ່າວກັບຂ້າພຣະອົງແນວນີ້ວ່າ ທ່ານອານົນ ພິກຂຸນີທັງຫຼາຍກ່າວກັບຂ້ານ້ອຍແນວນີ້ວ່າ ແມ່ເຈົ້າຍັງບໍ່ໄດ້ອຸປະສົມບົດ ແຕ່ພວກເຮົາອຸປະສົມບົດແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸທັງຫຼາຍເພິ່ງໃຫ້ອຸປະສົມບົດພິກຂຸນີທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ໃນເວລາທີ່ພຣະນາງມະຫາປະຊາບໍດີໂຄຕະມີຮັບຄະຣຸທໍາ ໘ ກໍຊື່ວ່າໄດ້ອຸປະສົມບົດແລ້ວ"

## ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນຂໍພອນ

[໔໐໕] ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປຫາທ່ານພຣະອານົນເຖິງທີ່ພັກ ບັດແລ້ວອະພິວາດ ໄດ້ຢືນຢູ່ທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ຂ້ານ້ອຍຈະທູນຂໍພອນແນວໜຶ່ງຈາກພຣະຜູ້ມີພຣະພາກເຈົ້າວ່າ ຂໍປະທານວະໂຣກາດ ພຣະຜູ້ມີພຣະພາກເຈົ້າເພິ່ງອະນຸຍາດການຂາບ ການລຸກຮັບ ການໄຫວ້ ສາມີຈິກຳແກ່ພິກຂຸທັງຫຼາຍ ແລະພິກຂຸນີທັງຫຼາຍຕາມລຳດັບພັນສາເທີ້ນ ຂ້ານ້ອຍ"

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ບັດແລ້ວຖວາຍອະພິວາດ ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພຣະນາງມະຫາປະຊາບໍດີໂຄຕະມີໄດ້ກ່າວກັບຂ້າພຣະອົງແນວນີ້ວ່າ ທ່ານອານົນ ຂ້ານ້ອຍຈະທູນ ຂໍພອນແນວໜຶ່ງຈາກພຣະຜູ້ມີພຣະພາກເຈົ້າວ່າ ຂໍປະທານວະໂຣກາດ ພຣະຜູ້ມີພຣະພາກເຈົ້າເພິ່ງອະນຸຍາດການຂາບ ການລຸກຮັບ ການໄຫວ້ ສາມີຈິກຳແກ່ພິກຂຸທັງຫຼາຍ ແລະພິກຂຸນີທັງຫຼາຍຕາມລຳດັບພັນສາເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ຕະຖາຄົດຈະອະນຸຍາດ ການຂາບ ການລຸກຮັບ ການໄຫວ້ ສາມີຈິກຳແກ່ມາຕຸຄາມ ອານົນ ຍ້ອນພວກເດຍຣະຖີ ເຫຼົ່ານີ້ຜູ້ກ່າວທຳໄວ້ບໍ່ດີກໍຍັງບໍ່ຂາບ ບໍ່ລຸກຮັບ ບໍ່ໄຫວ້ ບໍ່ເຮັດສາມີຈິກຳແກ່ມາຕຸຄາມ ເປັນຫຍັງຕະຖາຄົດຈະອະນຸຍາດການຂາບ ການລຸກຮັບ ການໄຫວ້ ສາມີຈິກຳແກ່ມາຕຸຄາມນໍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຂາບ ບໍ່ເພິ່ງລຸກຮັບ ບໍ່ເພິ່ງໄຫວ້ ບໍ່ເພິ່ງເຮັດສາມີຈິກຳແກ່ມາຕຸຄາມ ອົງໃດເຮັດ ຕ້ອງອາບັດທຸກກົດ"

## ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນຖາມເຖິງສິກຂາບົດ

ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອ ເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຢືນຢູ່ທີ່ສົມຄວນ ພຣະນາງມະຫາປະຊາບໍດີ ໂຄຕະມີຜູ້ຢືນຢູ່ ທີ່ສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພວກ ຂ້າພຣະອົງຈະປະຕິບັດໃນສິກຂາບົດຂອງພິກຂຸນີທັງຫຼາຍທີ່ເປັນສາທາລະນະບັນຍັດ[໑]ກັບພິກຂຸທັງຫຼາຍແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຄຕະມີ ພວກທ່ານຈົ່ງສິກສາສິກຂາບົດຂອງພິກຂຸນີທັງຫຼາຍ ທີ່ເປັນສາທາລະນະບັນຍັດກັບພິກຂຸທັງຫຼາຍ ຄືທີ່ພິກຂຸທັງຫຼາຍສິກສາກັນສັນນັ້ນ"

ພຣະນາງທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ພວກຂ້າພຣະອົງຈະປະຕິບັດໃນສິກຂາບົດຂອງ ພິກຂຸນີທັງຫຼາຍທີ່ເປັນອະສາທາລະນະບັນຍັດ[໑] ກັບພິກຂຸທັງຫຼາຍແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຄຕະມີ ພວກທ່ານຈົ່ງສຶກສາສິກຂາບົດຂອງພິກຂຸນີທັງຫຼາຍ ທີ່ເປັນອະສາທາລະນະບັນຍັດ ກັບພິກຂຸທັງຫຼາຍຕາມທີ່ເຮົາບັນຍັດໄວ້"

## ລັກສະນະຕັດສິນພຣະທຳວິໄນ ໘ ປະການ[໒]

[໔໐໖] ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ບັດແລ້ວຖວາຍອະພິວາດ ໄດ້ຢືນຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍປະທານວະໂຮກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ ທີ່ເມື່ອຂ້າພຣະອົງຟັງແລ້ວ ຈະເພິ່ງຫຼີກຫຼີກຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍໃຈຢູ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຄຕະມີ ທ່ານຮູ້ທຳເຫຼົ່າໃດວ່າ

໑. ທຳເຫຼົ່ານີ້ເປັນໄປເພື່ອຄວາມກຳໜັດ ບໍ່ເປັນໄປເພື່ອຄາຍຄວາມກຳໜັດ
໒. ທຳເຫຼົ່ານີ້ເປັນໄປເພື່ອຄວາມປະກອບໄວ້ ບໍ່ເປັນໄປເພື່ອຄວາມພາກ
໓. ທຳເຫຼົ່ານີ້ເປັນໄປເພື່ອການສະສົມ ບໍ່ເປັນໄປເພື່ອການບໍ່ສະສົມ
໔. ທຳເຫຼົ່ານີ້ເປັນໄປເພື່ອຄວາມມັກຫຼາຍ ບໍ່ເປັນໄປເພື່ອຄວາມມັກໜ້ອຍ
໕. ທຳເຫຼົ່ານີ້ເປັນໄປເພື່ອຄວາມບໍ່ສັນໂດດ ບໍ່ເປັນໄປເພື່ອຄວາມສັນໂດດ
໖. ທຳເຫຼົ່ານີ້ເປັນໄປເພື່ອຄວາມຄຸກຄີໝູ່ຄະນະ ບໍ່ເປັນໄປເພື່ອຄວາມສະຫງັດ
໗. ທຳເຫຼົ່ານີ້ເປັນໄປເພື່ອຄວາມຂີ້ຄ້ານ ບໍ່ເປັນໄປເພື່ອຜາຣົບຄວາມພຽນ
໘. ທຳເຫຼົ່ານີ້ເປັນໄປເພື່ອຄວາມເປັນຄົນລ້ຽງຍາກ ບໍ່ເປັນໄປເພື່ອຄວາມເປັນຄົນລ້ຽງງ່າຍ

ໂຄຕະມີ ທ່ານເພິ່ງຈື່ໄວ້ໂດຍສ່ວນດຽວວ່າ ນັ້ນບໍ່ແມ່ນທຳ ນັ້ນບໍ່ແມ່ນວິໄນ ນັ້ນບໍ່ແມ່ນສັດຖຸສາດ

ໂຄຕະມີ ທ່ານຮູ້ທຳເຫຼົ່າໃດວ່າ

໑. ທຳເຫຼົ່ານີ້ເປັນໄປເພື່ອຄວາມຄາຍກຳໜັດ ບໍ່ເປັນໄປເພື່ອຄວາມກຳໜັດ
໒. ທຳເຫຼົ່ານີ້ເປັນໄປເພື່ອຄວາມພາກ ບໍ່ເປັນໄປເພື່ອຄວາມປະກອບໄວ້
໓. ທຳເຫຼົ່ານີ້ເປັນໄປເພື່ອການບໍ່ສະສົມ ບໍ່ເປັນໄປເພື່ອຄວາມສະສົມ
໔. ທຳເຫຼົ່ານີ້ເປັນໄປເພື່ອຄວາມມັກໜ້ອຍ ບໍ່ເປັນໄປເພື່ອຄວາມມັກຫຼາຍ
໕. ທຳເຫຼົ່ານີ້ເປັນໄປເພື່ອຄວາມສັນໂດດ ບໍ່ເປັນໄປເພື່ອຄວາມບໍ່ສັນໂດດ

ຜ. ທຳເຫຼົ່ານີ້ເປັນໄປເພື່ອຄວາມສະຫງັດ ບໍ່ເປັນໄປເພື່ອຄວາມຄຸກຄີໝູ່ຄະນະ
ກ. ທຳເຫຼົ່ານີ້ເປັນໄປເພື່ອຜາຣົບຄວາມພຽນ ບໍ່ເປັນໄປເພື່ອຄວາມຂີ້ຄ້ານ
ຖ. ທຳເຫຼົ່ານີ້ເປັນໄປເພື່ອຄວາມເປັນຄົນລ້ຽງງ່າຍ ບໍ່ເປັນໄປເພື່ອຄວາມເປັນຄົນລ້ຽງຍາກ

ໂຄຕະມີ ທ່ານຈົ່ງຈື່ໄວ້ໂດຍສ່ວນດຽວວ່າ "ນັ້ນເປັນທຳ ນັ້ນເປັນວິໄນ ນັ້ນເປັນສັດຖຸສາດ"

## ຊົງອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງ

[໔໐ກ] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີທັງຫຼາຍ
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພາກໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງ ແກ່ພິກຂຸນີທັງຫຼາຍ" ຕໍ່ມາ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ໃຜນໍຄວນຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີທັງຫຼາຍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພາກໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີທັງຫຼາຍ"
ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າໄປເຖິງສຳນັກຂອງພິກຂຸນີທັງຫຼາຍແລ້ວຍົກປາຕິໂມກຂຶ້ນສະແດງ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີເຫຼົ່ານີ້ເປັນພັນລະຍາຂອງພິກຂຸເຫຼົ່ານີ້ ພິກຂຸນີເຫຼົ່ານີ້ເປັນຊູ້ຂອງພິກຂຸເຫຼົ່ານີ້ ບັດນີ້ ພິກຂຸເຫຼົ່ານີ້ຈະອະພິຣົມກັບພິກຂຸນີ ເຫຼົ່ານີ້"

ບັນດາພິກຂຸຜູ້ມັກໜ້ອຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກພຸດທະເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີທັງຫຼາຍ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ພິກຂຸນີທັງຫຼາຍຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີທັງຫຼາຍນຳກັນ"

ພິກຂຸນີທັງຫຼາຍບໍ່ຮູ້ວ່າ "ຈະຍົກປາຕິໂມກຂຶ້ນສະແດງແນວໃດ"
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພາກໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍອະທິບາຍ ໃຫ້ພິກຂຸນີທັງຫຼາຍຮູ້ວ່າ ເພິ່ງຍົກປາຕິໂມກຂຶ້ນສະແດງແນວນີ້"

ຊົງອະນຸຍາດໃຫ້ພິກຂຸນີຮັບອາບັດຂອງກັນແລະກັນ

[໔໐໗] ສະໄໝນັ້ນ ພິກຂຸນີທັງຫຼາຍບໍ່ເຮັດຄືນອາບັດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພາກໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເຮັດຄືນອາບັດບໍ່ໄດ້ ອົງໃດບໍ່ເຮັດຄືນ ຕ້ອງອາບັດທຸກກົດ"

ພິກຂຸນີທັງຫຼາຍບໍ່ຮູ້ວ່າ "ເພິ່ງເຮັດຄືນອາບັດແນວນີ້" ພິກຂຸທັງຫຼາຍຈຶ່ງໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍບອກພິກຂຸນີ ທັງຫຼາຍວ່າ ພວກທ່ານເພິ່ງເຮັດຄືນອາບັດແນວນີ້"

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ໃຜນໍເພິ່ງຮັບອາບັດຂອງພິກຂຸນີ

ທັງຫຼາຍ" ຈຶ່ງໄປນຳເລື້ອງນີ້ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍຮັບອາບັດ ຂອງພິກຂຸນີທັງຫຼາຍ"

ສະໄໝນັ້ນ ພິກຂຸນີທັງຫຼາຍພົບພິກຂຸທີ່ຖະໜົນແດ່ ຮ່ອມແດ່ ທາງສາມແຍກແດ່ ໄດ້ວາງບາດໄວ້ເທິງພື້ນ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ປະນົມມື ເຮັດຄືນອາບັດ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີເຫຼົ່ານີ້ເປັນພັນລະຍາຂອງພິກຂຸເຫຼົ່ານີ້ ພິກຂຸນີເຫຼົ່ານີ້ເປັນຊູ້ຂອງພິກຂຸເຫຼົ່ານີ້ ພິກຂຸແລະພິກຂຸນີລ່ວງເກີນກັນຕອນກາງຄືນ ເວລານີ້ກຳລັງຂໍຂະມາ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພາກໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍບໍ່ເພິ່ງຮັບອາບັດຂອງພິກຂຸນີທັງຫຼາຍ ອົງໃດຮັບ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີທັງຫຼາຍຮັບອາບັດຂອງພິກຂຸນີທັງຫຼາຍ"

ພິກຂຸນີທັງຫຼາຍບໍ່ຮູ້ວ່າ "ຈະເພິ່ງຮັບອາບັດແນວນີ້" ຈຶ່ງໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

พระผู้มีพระพาภเจ้้ารับสั่ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍບອກ ພິກຂຸນີ ທັງຫຼາຍວ່າ ພວກທ່ານເພິ່ງຮັບອາບັດແນວນີ້"

## ຊົງອະນຸຍາດໃຫ້ເຮັດກຳເປັນຕົ້ນ

[໔໐໙] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ເຮັດກຳ[๑] ແກ່ພິກຂຸນີທັງຫຼາຍ ພິກຂຸທັງຫຼາຍ ຈຶ່ງນຳ ເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດກຳແກ່ພິກຂຸນີ ທັງຫຼາຍ"

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ໃຜນໍເພິ່ງເຮັດກຳແກ່ພິກຂຸນີທັງຫຼາຍ" ຈຶ່ງໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍເຮັດກຳ ແກ່ພິກຂຸນີທັງຫຼາຍ"

ສະໄໝນັ້ນ ພິກຂຸນີທັງຫຼາຍທີ່ຖືກເຮັດກຳແລ້ວ ພົບພິກຂຸທີ່ຖະໜົນແດ່ ຮ່ອມແດ່ ທາງສາ ມແຍກແດ່ ໄດ້ວາງບາດໄວ້ເທິງພື້ນ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ຂໍຂະ ມາວ່າ "ຈະບໍ່ເຮັດແນວນີ້ອີກ"

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີເຫຼົ່ານີ້ເປັນພັນລະຍາຂອງພິກຂຸເຫຼົ່າ ນີ້ ພິກຂຸນີເຫຼົ່ານີ້ເປັນຊູ້ຂອງພິກຂຸເຫຼົ່ານີ້ ພິກຂຸແລະພິກຂຸນີເຫຼົ່ານີ້ລ່ວງເກີນກັນຕອນກາງຄືນ ເວລານີ້ກຳລັງຂໍຂະມາ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍບໍ່ເພິ່ງເຮັດກຳແກ່ພິກຂຸນີ ທັງຫຼາຍ ອົງໃດເຮັດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີທັງຫຼາຍ ເຮັດ ກຳແກ່ພິກຂຸນີທັງຫຼາຍ"

ພິກຂຸນີທັງຫຼາຍບໍ່ຮູ້ວ່າ "ຈະເພິ່ງເຮັດກຳແນວນີ້" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍບອກ ພິກຂຸນີ ທັງຫຼາຍວ່າ ພວກທ່ານເພິ່ງເຮັດກຳແນວນີ້"

[໔໑໐] ສະໄໝນັ້ນ ພິກຂຸນີທັງຫຼາຍໝາງໃຈ ວິວາດຜິດຖຽງກັນ ໃຊ້ຫອກຄືປາກ ສຽບ ແທງກັນ ທ່າມກາງສົງ ບໍ່ອາດຈະລະງັບອະທິກອນນັ້ນໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍລະງັບອະທິກອນ ຂອງພິກຂຸນີທັງຫຼາຍ"

ສະໄໝນັ້ນ ພິກຂຸທັງຫຼາຍກຳລັງລະງັບອະທິກອນຂອງພິກຂຸນີທັງຫຼາຍ ເມື່ອພິກຂຸທັງຫຼາຍ ກຳລັງວິນິດໄສອະທິກອນຢູ່ ຜາກົດມີພິກຂຸນີທັງຫຼາຍທີ່ເຂົ້າກຳ°ແດ່ ຕ້ອງອາບັດແດ່ ພິກຂຸນີທັງຫຼາຍກ່າວແນວນີ້ວ່າ "ດີແລ້ວທ່ານຜູ້ຈະເລີນ ຂໍພຣະຜູ້ເປັນເຈົ້າທັງຫຼາຍຈົ່ງເຮັດກຳ ແກ່ພິກຂຸນີທັງຫຼາຍ ຂໍພຣະຜູ້ເປັນເຈົ້າທັງຫຼາຍຈົ່ງຮັບອາບັດຂອງພິກຂຸນີທັງຫຼາຍ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸທັງຫຼາຍເພິ່ງລະງັບອະທິກອນຂອງພິກຂຸນີທັງຫຼາຍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍມອບການ ລົງໂທດພິກຂຸນີທັງຫຼາຍໃຫ້ແກ່ພິກຂຸນີທັງຫຼາຍ ເພື່ອໃຫ້ພິກຂຸນີທັງຫຼາຍລົງໂທດພິກຂຸນີທັງຫຼາຍກັນເອງ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍມອບການປົງອາບັດຂອງພິກຂຸນີທັງຫຼາຍໃຫ້ແກ່ພິກຂຸນີທັງຫຼາຍ ເພື່ອໃຫ້ພິກຂຸນີທັງຫຼາຍຮັບອາບັດກັບພິກຂຸນີທັງຫຼາຍນຳກັນ"

ສະໄໝນັ້ນ ພິກຂຸນີອັນເຕວາສີນີຂອງພິກຂຸນີອຸບົນວັນນາ ຕິດຕາມພຣະຜູ້ມີພຣະພາກເຈົ້າຮຽນພຣະວິໄນຢູ່ ໆ ປີ ນາງກັບມີສະຕິຟັ່ນເຟືອນ ພຣະວິໄນທີ່ຮຽນໄວ້ກໍເລີເລືອນ ນາ ຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າປະສົງຈະສະເດັດໄປນະຄອນສາວັດຖີ ຈຶ່ງຄິດວ່າ "ເຮົາຕິດຕາມພຣະຜູ້ມີພຣະພາກເຈົ້າ ຮຽນພຣະວິໄນຢູ່ ໆ ປີ ຈົນສະຕິຟັ່ນເຟືອນ ພຣະວິໄນທີ່ເຄີຍຮຽນໄວ້ ກໍເລີເລືອນການທີ່ມາຕຸຄາມຈະຕິດຕາມພຣະຜູ້ມີພຣະພາກເຈົ້າໄປຈົນຕະຫຼອດຊີວິດເປັນເລື້ອງຍາກ ເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ພິກຂຸນີທັງຫຼາຍຈຶ່ງບອກຄວາມນັ້ນແກ່ພິກຂຸທັງຫຼາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍສອນວິໄນ ແກ່ພິກຂຸນີທັງຫຼາຍໄດ້"

**ປະຖົມພານະວານ ຈົບ**

## ໔. ທຸຕິຍະພານະວານ

[໔໑໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະຄອນເວສາລີຕາມພຣະອັດທະຍາໄສ ແລ້ວສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາ

ວັດຖີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະຄະຫະບໍດີ ໃນນະຄອນ ສາວັດຖີນັ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ນ້ຳຕົມຫົດພິກຂຸນີທັງຫຼາຍ ດ້ວຍຄິດວ່າ "ບາງເທື່ອພິກຂຸນີທັງຫຼາຍຈະຮັກພວກເຮົາແດ່"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ນ້ຳຕົມຫົດພິກຂຸນີທັງຫຼາຍ ອົງໃດຫົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນທະກຳພິກຂຸຜູ້ປະພຶດເຊັ່ນນັ້ນ"

ສະໄໝນັ້ນ ພິກຂຸເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາຈະເພິ່ງລົງທັນທະກຳແນວໃດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງປະກາດໃຫ້ຮູ້ວ່າ ພິກຂຸນັ້ນບໍ່ຄວນໄຫວ້"[໑]

## ພິກຂຸສະແດງອະໄວຍະວະອວດພິກຂຸນີ

ສະໄໝນັ້ນ ພວກພິກຂຸສັບພັກຄີເປີດກາຍສະແດງແກ່ພິກຂຸນີທັງຫຼາຍ ເປີດຂາອ່ອນສະແດງແກ່ພິກຂຸນີທັງຫຼາຍ ເປີດອົງຄະຊາດສະແດງແກ່ພິກຂຸນີທັງຫຼາຍ ເວົ້າກ້ຽວພິກຂຸນີທັງຫຼາຍ ຊັກຊວນບຸຣຸດໃຫ້ມາຄົບຫາຮັກກັບພິກຂຸນີທັງຫຼາຍ ດ້ວຍຄິດວ່າ "ພິກຂຸນີທັງຫຼາຍ ຈະຮັກພວກເຮົາແດ່"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເປີດກາຍສະແດງແກ່ພິກຂຸນີທັງຫຼາຍ ບໍ່ເພິ່ງເປີດຂາອ່ອນສະແດງແກ່ພິກຂຸນີທັງຫຼາຍ ຯລຯ ບໍ່ເພິ່ງເປີດອົງຄະຊາດສະແດງແກ່ ພິກຂຸນີທັງຫຼາຍ ຯລຯ ບໍ່ເພິ່ງເວົ້າກ້ຽວພິກຂຸນີທັງຫຼາຍ ຯລຯ ບໍ່ເພິ່ງຊັກຊວນບຸຣຸດໃຫ້ມາຄົບຫາຮັກກັບພິກຂຸນີທັງຫຼາຍ ອົງໃດເພິ່ງຊັກຊວນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນທະກຳພິກຂຸຜູ້ປະພຶດເຊັ່ນນັ້ນ"

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາເພິ່ງລົງທັນທະກຳແນວໃດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງປະກາດໃຫ້ຮູ້ວ່າ ພິກຂຸນັ້ນບໍ່ຄວນໄຫວ້"

ຕໍ່ມາ ພວກພິກຂຸນີສັບພັກຄີໃຊ້ນ້ຳຕົມຫົດພິກຂຸທັງຫຼາຍ ດ້ວຍຄິດວ່າ "ພິກຂຸທັງຫຼາຍຈະຮັກພວກເຮົາແດ່"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ນ້ຳຕົມຫົດພິກຂຸທັງຫຼາຍ ອົງໃດຫົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນທະກຳແກ່ ພິກຂຸນີຜູ້ປະພຶດແນວນີ້"

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາຈະລົງທັນທະກຳແນວໃດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫ້າມ"

ເມື່ອພິກຂຸທັງຫຼາຍຫ້າມແລ້ວ ພິກຂຸນີທັງຫຼາຍກໍຍັງບໍ່ຍອມເຊື່ອ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ງົດການໃຫ້ໂອວາດ"

## ພິກຂຸນີສະແດງອະໄວຍະວະອວດພິກຂຸ

ສະໄໝນັ້ນ ພວກພິກຂຸນີສັບພັກຄີເປີດກາຍສະແດງແກ່ພິກຂຸທັງຫຼາຍ ເປີດຖັນສະແດງແກ່ພິກຂຸທັງຫຼາຍ ເປີດຂາອ່ອນສະແດງແກ່ພິກຂຸທັງຫຼາຍ ເປີດອົງກຳເນີດສະແດງແກ່ພິກຂຸທັງຫຼາຍ ເວົ້າກັ່ງວພິກຂຸທັງຫຼາຍ ຊັກຊວນສະຕີໃຫ້ມາຄົບຫາຮັກກັບພິກຂຸທັງຫຼາຍ ດ້ວຍຄິດວ່າ "ພິກຂຸທັງຫຼາຍຈະຮັກພວກເຮົາແດ່"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງເປີດກາຍສະແດງແກ່ພິກຂຸທັງຫຼາຍ ຯລຯ ບໍ່ເພິ່ງເປີດຖັນສະແດງແກ່ພິກຂຸທັງຫຼາຍ ຯລຯ ບໍ່ເພິ່ງເປີດຂາອ່ອນສະແດງແກ່ພິກຂຸທັງຫຼາຍ ຯລຯ ບໍ່ເພິ່ງເປີດອົງກຳເນີດສະແດງແກ່ພິກຂຸທັງຫຼາຍ ຯລຯ ບໍ່ເພິ່ງເວົ້າກັ່ງວພິກຂຸທັງຫຼາຍ ຯລຯ ບໍ່ເພິ່ງຊັກຊວນສະຕີໃຫ້ມາຄົບຫາຮັກກັບພິກຂຸທັງຫຼາຍ ອົງໃດຊັກຊວນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນທະກຳແກ່ພິກຂຸນີຜູ້ປະພຶດເຊັ່ນນັ້ນ"

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາເພິ່ງລົງທັນທະກຳແນວໃດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫ້າມ"

ເມື່ອພິກຂຸທັງຫຼາຍຫ້າມແລ້ວ ພິກຂຸນີທັງຫຼາຍກໍຍັງບໍ່ຍອມເຊື່ອ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ງົດໂອວາດ"

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ການເຮັດອຸໂປສົດຮ່ວມກັບພິກຂຸນີທີ່ຖືກງົດໂອວາດແລ້ວ ຄວນບໍນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີທັງຫຼາຍບໍ່ເພິ່ງເຮັດອຸໂປສົດຮ່ວມ ກັບພິກຂຸນີທີ່ຖືກງົດໂອວາດ ຈົນກວ່າອະທິກອນນັ້ນຈະລະງັບໄປ"

## ເລື້ອງງົດໂອວາດ

[໔໑໘] ສະໄໝນັ້ນ ທ່ານພຣະອຸທາຍີງົດໂອວາດແລ້ວຫຼີກຈາຣິກໄປ ພິກຂຸນີທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະຜູ້ເປັນເຈົ້າອຸທາຍີ ຈຶ່ງງົດໂອວາດແລ້ວຫຼີກຈາຣິກໄປນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍບໍ່ເພິ່ງງົດໂອວາດແລ້ວຈາຣິກໄປ ອົງໃດທ່ຽວຈາຣິກໄປ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ໂງ່ຈ້າບໍ່ສະຫຼາດ ງົດໂອວາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ໂງ່ຈ້າບໍ່ສະຫຼາດ ບໍ່ເພິ່ງງົດໂອວາດ ອົງໃດງົດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍງົດໂອວາດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງງົດໂອວາດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ອົງໃດງົດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍງົດໂອວາດແລ້ວບໍ່ໃຫ້ຄຳວິນິດໄສ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸງົດໂອວາດແລ້ວຈະບໍ່ໃຫ້ຄຳວິນິດໄສ ບໍ່ໄດ້ ອົງໃດບໍ່ໃຫ້ ຕ້ອງອາບັດທຸກກົດ"

[໔໑໓] ສະໄໝນັ້ນ ພິກຂຸນີທັງຫຼາຍບໍ່ຍອມໄປຮັບໂອວາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ໄປຮັບໂອວາດບໍ່ໄດ້ ອົງໃດບໍ່ໄປ ເພິ່ງປັບອາບັດຕາມທຳ"[១]

ສະໄໝນັ້ນ ພິກຂຸນີສົງພາກັນໄປຮັບໂອວາດ(ພ້ອມກັນ)ທັງໝົດ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີເຫຼົ່ານີ້ເປັນພັນລະຍາຂອງພິກຂຸເຫຼົ່ານີ້ ພິກຂຸນີເຫຼົ່ານີ້ເປັນຊູ້ຂອງພິກຂຸເຫຼົ່ານີ້ ບັດນີ້ພິກຂຸແລະພິກຂຸນີເຫຼົ່ານີ້ຈະອະພິຣົມກັນ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີສົງບໍ່ເພິ່ງໄປຮັບໂອວາດ(ພ້ອມກັນ)ທັງໝົດ ຖ້າໄປ(ພ້ອມກັນ)ທັງໝົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ພິກຂຸນີ ໔-໕ ອົງ ໄປຮັບໂອວາດ"

ສະໄໝນັ້ນ ພິກຂຸນີ ໔-໕ ອົງໄປຮັບໂອວາດ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ພິກຂຸນີເຫຼົ່ານີ້ເປັນພັນລະຍາຂອງພິກຂຸທັງຫຼາຍເຫຼົ່ານີ້ ພິກຂຸນີເຫຼົ່ານີ້ເປັນຊູ້ຂອງພິກຂຸເຫຼົ່ານີ້ ບັດນີ້ພິກຂຸແລະພິກຂຸນີເຫຼົ່ານີ້ຈະອະພິຣົມກັນ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໄປຮັບໂອວາດ ໔-໕ ອົງ ຖ້າພວກທ່ານໄປ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີ ໒-໓ ອົງ ໄປຮັບໂອວາດ"

## ວິທີຮັບໂອວາດຂອງພິກຂຸນີ

ພິກຂຸນີທັງຫຼາຍເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງຂາບຕີນ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ພຣະຜູ້ເປັນເຈົ້າ ພິກຂຸນີສົງຂາບຕີນພິກຂຸສົງ ແລະຂໍເຂົ້າຮັບໂອວາດ ໄນຍະວ່າ ພິກຂຸນີສົງຈົ່ງໄດ້ການເຂົ້າຮັບໂອວາດ"

ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງ ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ພິກຂຸນີສົງຂາບຕີນພິກຂຸສົງ ແລະຂໍການເຂົ້າຮັບໂອວາດ ໄນຍະວ່າ ພິກຂຸນີສົງຈົ່ງໄດ້ການ ເຂົ້າຮັບໂອວາດ"

ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງເພິ່ງຖາມວ່າ "ພິກຂຸລາງອົງທີ່ສົງແຕ່ງຕັ້ງໃຫ້ສອນພິກຂຸນີ ມີຢູ່ບໍ"

ຖ້າພິກຂຸລາງອົງທີ່ສົງແຕ່ງຕັ້ງໃຫ້ເປັນຜູ້ສອນພິກຂຸນີ ມີຢູ່ ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງເພິ່ງກ່າວວ່າ "ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ສອນພິກຂຸນີ ພິກຂຸນີສົງຈົ່ງເຂົ້າໄປຫາພິກຂຸນັ້ນ"

ຖ້າພິກຂຸລາງອົງທີ່ສົງແຕ່ງຕັ້ງໃຫ້ສອນພິກຂຸນີບໍ່ມີຢູ່ ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງເພິ່ງຖາມວ່າ "ທ່ານອົງໃດສາມາດສອນພິກຂຸນີໄດ້ບໍ" ຖ້າພິກຂຸລາງອົງສາມາດກ່າວສອນ ພິກຂຸນີໄດ້ແລະມີຄຸນສົມບັດ ໘ ຢ່າງ ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງເພິ່ງສູດແຕ່ງຕັ້ງແລ້ວ ປະກາດວ່າ "ພິກຂຸຊື່ນີ້ສົງແຕ່ງຕັ້ງໃຫ້ເປັນຜູ້ສອນພິກຂຸນີ ພິກຂຸນີສົງຈົ່ງເຂົ້າໄປຫາພິກຂຸນັ້ນ"

ຖ້າບໍ່ມີໃຜສາມາດຈະສອນພິກຂຸນີໄດ້ ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງ ເພິ່ງບອກວ່າ "ບໍ່ມີອົງໃດທີ່ສົງແຕ່ງຕັ້ງໃຫ້ສອນພິກຂຸນີ ພິກຂຸນີສົງຈົ່ງເປັນຢູ່ດ້ວຍອາການທີ່ໜ້າເຫຼື້ອມໃສເທີ້ນ"

[໔໑໔] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ຍອມຮັບໃຫ້ໂອວາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍຈະບໍ່ຮັບໃຫ້ໂອວາດບໍ່ໄດ້ ອົງໃດບໍ່ຮັບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນຄົນໂງ່ຈ້າ ພິກຂຸນີທັງຫຼາຍພາກັນໄປຫາພິກຂຸນັ້ນ ໄດ້ກ່າວດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດ"

ພິກຂຸນັ້ນຕອບວ່າ "ນາງທັງຫຼາຍ ອາດຕະມາເປັນຄົນໂງ່ຈ້າ ຈະຮັບໃຫ້ໂອວາດໄດ້ແນວໃດກັນ"

ພິກຂຸນີທັງຫຼາຍກ່າວວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດເທີ້ນ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແນວນີ້ວ່າ ພິກຂຸທັງຫຼາຍເພິ່ງຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍົກເວັ້ນພິກຂຸຜູ້ໂງ່ຈ້າ ເຮົາອະນຸຍາດໃຫ້ ພິກຂຸທັງຫຼາຍທີ່ເຫຼືອຮັບໃຫ້ໂອວາດ"

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ພິກຂຸນີທັງຫຼາຍພາກັນເຂົ້າໄປຫາພິກຂຸນັ້ນແລ້ວໄດ້ກ່າວດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດ"

ພິກຂຸນັ້ນຕອບວ່າ "ນາງທັງຫຼາຍ ອາດຕະມາເປັນໄຂ້ ຈະຮັບໃຫ້ໂອວາດໄດ້ແນວໃດກັນ"
ພິກຂຸນີທັງຫຼາຍກ່າວວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດເທີ້ນ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ຍົກເວັ້ນພິກຂຸຜູ້ໂງ່ຈ້າ ພິກຂຸທັງຫຼາຍທີ່ເຫຼືອເພິ່ງຮັບໃຫ້ໂອວາດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍົກເວັ້ນພິກຂຸຜູ້ໂງ່ຈ້າແລະພິກຂຸເປັນໄຂ້ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍທີ່ເຫຼືອເພິ່ງຮັບໃຫ້ໂອວາດ"

ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງກຽມຈະເດີນທາງ ພິກຂຸນີທັງຫຼາຍພາກັນເຂົ້າໄປຫາພິກຂຸນັ້ນໄດ້ກ່າວດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດ"

ພິກຂຸນັ້ນຕອບວ່າ "ນາງທັງຫຼາຍ ອາດຕະມາກຳລັງຈະເດີນທາງ ຈະຮັບໃຫ້ໂອວາດ ໄດ້ແນວໃດກັນ"

ພິກຂຸນີທັງຫຼາຍກ່າວວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດເທີ້ນ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແນວນີ້ວ່າ ຍົກເວັ້ນພິກຂຸຜູ້ໂງ່ຈ້າແລະພິກຂຸເປັນໄຂ້ ພິກຂຸທັງຫຼາຍ ທີ່ເຫຼືອເພິ່ງຮັບໃຫ້ໂອວາດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍົກເວັ້ນພິກຂຸຜູ້ໂງ່ຈ້າ ພິກຂຸເປັນໄຂ້ ແລະ ພິກຂຸກຳລັງຈະເດີນທາງ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍທີ່ເຫຼືອຮັບໃຫ້ໂອວາດ"

ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ໃນປ່າ ພິກຂຸນີທັງຫຼາຍພາກັນເຂົ້າໄປຫາພິກຂຸນັ້ນ ໄດ້ກ່າວດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດ"

ພິກຂຸນັ້ນຕອບວ່າ "ນາງທັງຫຼາຍ ອາດຕະມາຢູ່ໃນປ່າ ຈະຮັບໃຫ້ໂອວາດໄດ້ແນວໃດກັນ"

ພິກຂຸນີທັງຫຼາຍກ່າວວ່າ "ພຣະຜູ້ເປັນເຈົ້າ ທ່ານໂຜດຮັບໃຫ້ໂອວາດເທີ້ນ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ແນວນີ້ວ່າ ຍົກເວັ້ນພິກຂຸໂງ່ຈ້າ ພິກຂຸເປັນໄຂ້ແລະພິກຂຸຜູ້ກຳລັງຈະເດີນທາງ ພິກຂຸທັງຫຼາຍທີ່ເຫຼືອເພິ່ງຮັບໃຫ້ໂອວາດ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຢູ່ປ່າຮັບໃຫ້ໂອວາດ ແລະນັດໝາຍວ່າ ເຮົາຈະກັບມາໃນບ່ອນນັ້ນ"

[໔໑໕] ສະໄໝນັ້ນ ພິກຂຸທັງຫຼາຍຮັບໃຫ້ໂອວາດແລ້ວບໍ່ບອກ (ໂອວາດ) ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ບອກໂອວາດບໍ່ໄດ້ ອົງໃດບໍ່ບອກ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍຮັບໃຫ້ໂອວາດແລ້ວບໍ່ຍອມກັບມາບອກ (ໂອວາດ) ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ກັບມາບອກໂອວາດບໍ່ໄດ້ອົງໃດບໍ່ກັບມາບອກ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍບໍ່ໄປທີ່ນັດໝາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ໄປທີ່ນັດໝາຍບໍ່ໄດ້ ອົງໃດ ບໍ່ໄປ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸນີຮັດສີຂ້າງ

[໔໑໖] ສະໄໝນັ້ນ ພິກຂຸນີທັງຫຼາຍໃຊ້ສາຍແອວຜືນຍາວ ພິກຂຸນີເຫຼົ່ານັ້ນໃຊ້ຜ້ານັ້ນ ຮັດສີຂ້າງ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ສາຍແອວຜືນຍາວ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດສາຍແອວທີ່ຮັດໄດ້ຮອບດຽວແກ່ພິກຂຸນີ ພິກຂຸນີບໍ່ເພິ່ງໃຊ້ສາຍແອວນັ້ນຮັດສີຂ້າງ ອົງໃດຮັດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍໃຊ້ແຜ່ນໄມ້ສານຮັດສີຂ້າງ ໃຊ້ແຜ່ນໜັງຮັດສີຂ້າງ ໃຊ້ແຜ່ນຜ້າ ຂາວຮັດສີຂ້າງ ໃຊ້ຊ້ອງຜ້າຮັດສີຂ້າງ ໃຊ້ກຽວຜ້າຮັດສີຂ້າງ ໃຊ້ຜ້າຜືນນ້ອຍຮັດສີຂ້າງ ໃຊ້ຊ້ອງຜ້າຜືນນ້ອຍຮັດສີຂ້າງ ໃຊ້ກຽວຜ້າຜືນນ້ອຍຮັດສີຂ້າງ ໃຊ້ຊ້ອງຖັກດ້ວຍດ້າຍຮັດສີຂ້າງ ໃຊ້ກຽວດ້າຍຮັດສີຂ້າງ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ບໍຣິໂພກກາມ"
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ແຜ່ນໄມ້ສານຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ແຜ່ນໜັງຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ແຜ່ນຜ້າຂາວຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ຊ້ອງຜ້າຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ກຽວຜ້າຮັດສີຂ້າງ ຯລຯ. ບໍ່ເພິ່ງໃຊ້ຜ້າຜືນນ້ອຍຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ຊ້ອງຜ້າຜືນນ້ອຍຮັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ກຽວຜ້າຜືນນ້ອຍຮັດສີຂ້າງ ຯລຯ ບໍ່

ເພິ່ງໃຊ້ຊ້ອງຖັກດ້ວຍດ້າຍຣັດສີຂ້າງ ຯລຯ ບໍ່ເພິ່ງໃຊ້ກຽວດ້າຍຣັດສີຂ້າງ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸນີນວດກາຍ

ສະໄໝນັ້ນ ພິກຂຸນີທັງຫຼາຍໃຊ້ກະດູກແຂ່ງງົວຂັດສີຕະໂພກ ໃຊ້ໄມ້ມີສັນຖານຄືຄາງງົວນວດຕະໂພກ ນວດມື ນວດຫຼັງມື ນວດຕີນ ນວດຫຼັງຕີນ ນວດຂາອ່ອນ ນວດໜ້າ ນວດຣີມຝີປາກ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ກະດູກແຂ່ງງົວຂັດສີຕະໂພກ ຯລຯ ບໍ່ເພິ່ງໃຊ້ໄມ້ມີສັນຖານຄືຄາງງົວນວດຕະໂພກ ຯລຯ ບໍ່ເພິ່ງນວດມື ຯລຯ ບໍ່ເພິ່ງນວດຫຼັງມື ຯລຯ ບໍ່ເພິ່ງນວດຕີນ ຯລຯ ບໍ່ເພິ່ງນວດຫຼັງຕີນ ຯລຯ ບໍ່ເພິ່ງນວດຂາອ່ອນ ຯລຯ ບໍ່ເພິ່ງນວດໜ້າ ຯລຯ ບໍ່ເພິ່ງນວດຣີມຝີປາກ ອົງໃດນວດ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸນີທາໜ້າ

[໔໑໗] ສະໄໝນັ້ນ ພວກພິກຂຸນີສັບພັກຄີທາໜ້າ ຯລຯ ຖູໜ້າ ຯລຯ ຜັດໜ້າ ຯລຯ ເຈີມໜ້າ ດ້ວຍມະໂນສີລາ ຯລຯ ຍ້ອມໂຕ ຯລຯ ຍ້ອມໜ້າ ຯລຯ ຍ້ອມທັງໂຕແລະໜ້າ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງທາໜ້າ ຯລຯ ບໍ່ເພິ່ງຖູໜ້າ ຯລຯ ບໍ່ເພິ່ງຜັດໜ້າ ຯລຯ ບໍ່ເຈີມໜ້າດ້ວຍມະໂນສີລາ ຯລຯ ບໍ່ເພິ່ງຍ້ອມໂຕ ຯລຯ ບໍ່ເພິ່ງຍ້ອມໜ້າ ຯລຯ ບໍ່ເພິ່ງຍ້ອມທັງໂຕແລະໜ້າ ອົງໃດເຮັດ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍແຕ້ມໜ້າ ຯລຯ ທາແກ້ມ ຯລຯ. ຫຼີ້ນຫູຫຼີ້ນຕາ ຯລຯ ຢືນຈອບທີ່ປະຕູ ຯລຯ ໃຫ້ຜູ້ອື່ນຟ້ອນລຳ ຯລຯ ຕັ້ງສຳນັກຍິງແພດສະຫຍາ ຯລຯ ຕັ້ງຮ້ານຂາຍສຸຣາ ຯລຯ ຕັ້ງຮ້ານຂາຍຊີ້ນ ອອກຮ້ານຂາຍຂອງຕ່າງ ໆ ຯລຯ ປະກອບການຄ້າກຳໄລ ຯລຯ ປະກອບການຄ້າຂາຍ ຯລຯ ໃຊ້ຂ້າທາດ ໃຫ້ປິ່ນນິບັດ ຯລຯ ໃຊ້ທາສີໃຫ້ປິ່ນນິບັດ ຯລຯ ໃຊ້ກຳມະກອນຊາຍໃຫ້ປິ່ນນິບັດ ຯລຯ ໃຊ້ກຳມະກອນຍິງ ໃຫ້ປິ່ນນິບັດ ຯລຯ ໃຊ້ສັດເດຍຣັດສານໃຫ້ປິ່ນນິບັດ ຯລຯ ຂາຍຂອງສົດແລະຂອງສຸກ ຯລຯ ໃຊ້ສັນຖັດ ຂົນຈຽມຫຼໍ່

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ບໍຣິໂພກການ"
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີທັງຫຼາຍບໍ່ເພິ່ງແຕ້ມໜ້າ ຯລຯ ບໍ່ເພິ່ງທາແກ້ມ ຯລຯ ບໍ່ເພິ່ງຫຼິ້ນຫູຫຼິ້ນຕາ ຯລຯ ບໍ່ເພິ່ງຢືນຈອບທີ່ປະຕູ ຯລຯ ບໍ່ເພິ່ງໃຫ້ຜູ້ອື່ນຟ້ອນລຳ ຯລຯ ບໍ່ເພິ່ງຕັ້ງສຳນັກຍິງແພດສະຫຍາ ຯລຯ ບໍ່ເພິ່ງຕັ້ງຮ້ານຂາຍສຸຣາ ຯລຯ ບໍ່ເພິ່ງຕັ້ງຮ້ານຂາຍຊີ້ນ ຯລຯ ບໍ່ເພິ່ງອອກຮ້ານຂາຍຂອງຕ່າງ ໆ ຯລຯ ບໍ່ເພິ່ງປະກອບການຄ້າກຳໄລ ຯລຯ ບໍ່ເພິ່ງປະກອບການຄ້າຂາຍ ຯລຯ ບໍ່ເພິ່ງໃຊ້ຂ້າທາດໃຫ້ປົນນິບັດ ຯລຯ ບໍ່ເພິ່ງໃຊ້ທາສີໃຫ້ປົນນິບັດ ຯລຯ ບໍ່ເພິ່ງໃຊ້ກຳມະກອນຊາຍໃຫ້ປົນນິບັດ ຯລຯ ບໍ່ເພິ່ງໃຊ້ກຳມະກອນຍິງໃຫ້ປົນນິບັດ ຯລຯ ບໍ່ເພິ່ງໃຊ້ສັດເດຍຣັດສານໃຫ້ປົນນິບັດ ຯລຯ ບໍ່ເພິ່ງຂາຍຂອງສົດແລະຂອງສຸກ ຯລຯ ບໍ່ເພິ່ງໃຊ້ສັນຖັດຂົນຈຽມຫຼໍ່ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸນີໃຊ້ຈີວອນສີຂຽວລ້ວນເປັນຕົ້ນ

[໔໑໗] ສະໄໝນັ້ນ ພວກພິກຂຸນີສັບພັກຄີຫົ່ມຈີວອນສີຂຽວລ້ວນ ຯລຯ ຫົ່ມຈີວອນສີເຫຼືອງລ້ວນ ຯລຯ ຫົ່ມຈີວອນສີແດງລ້ວນ ຯລຯ ຫົ່ມຈີວອນສີບານເຢັນລ້ວນ ຯລຯ ຫົ່ມຈີວອນສີດຳລ້ວນ ຯລຯ ຫົ່ມຈີວອນສີແສດ ຯລຯ ຫົ່ມຈີວອນສີຊົມພູ ຯລຯ ຫົ່ມຈີວອນບໍ່ຕັດຊາຍ ຯລຯ ຫົ່ມຈີວອນມີຊາຍຍາວ ຯລຯ ຫົ່ມຈີວອນມີຊາຍ ເປັນລາຍດອກໄມ້ ຯລຯ ຫົ່ມຈີວອນມີຊາຍເປັນແຜ່ນ ຯລຯ ໃສ່ເສື້ອ ຯລຯ ໃສ່ໝວກ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ບໍຣິໂພກການ"
ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງຫົ່ມຈີວອນສີຂຽວລ້ວນ ຯລຯ ບໍ່ ເພິ່ງຫົ່ມຈີວອນສີເຫຼືອງລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີແດງລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີບານເຢັນລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີດຳລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີແສດລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີຊົມພູລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນບໍ່ຕັດຊາຍ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍຍາວ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍເປັນລາຍດອກໄມ້ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍເປັນແຜ່ນ ຯລຯ ບໍ່ເພິ່ງໃສ່ເສື້ອ ຯລຯ ບໍ່ເພິ່ງໃສ່ໝວກ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງພິໄນກຳຂອງພິກຂຸນີສົງ

[໔໑໗] ສະໄໝນັ້ນ ພິກຂຸນີອົງໜຶ່ງ ກຳລັງຈະມໍຣະນະພາບ ສັ່ງແນວນີ້ວ່າ "ເມື່ອເຮົາລ່ວງລັບໄປ ບໍຣິຂານຂອງເຮົາຈົ່ງເປັນຂອງສົງ" ບັນດາສະຫະທຳມິກເຫຼົ່ານັ້ນ ພິກຂຸທັງຫຼາຍ ກັບພິກຂຸນີທັງຫຼາຍໂຕ້ຖຽງກັນວ່າ "ບໍຣິຂານຕ້ອງເປັນຂອງພວກເຮົາ ບໍຣິຂານຕ້ອງເປັນຂອງພວກເຮົາ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າພິກຂຸນີກຳລັງຈະມໍຣະນະພາບສັ່ງແນວນີ້ວ່າ ເມື່ອເຮົາລ່ວງລັບໄປ ບໍຣິຂານຂອງເຮົາຈົ່ງເປັນຂອງສົງ ພິກຂຸສົງບໍ່ເປັນໃຫຍ່ໃນບໍຣິຂານນັ້ນ ບໍຣິຂານນັ້ນຕົກເປັນຂອງພິກຂຸນີສົງຝ່າຍດຽວ

ພິກຂຸທັງຫຼາຍ ຖ້າສິກຂະມານາກຳລັງຈະມໍຣະນະພາບ ຯລຯ

ພິກຂຸທັງຫຼາຍ ຖ້າສາມະເນຣີກຳລັງຈະມໍຣະນະພາບ ສັ່ງແນວນີ້ວ່າ ເມື່ອເຮົາລ່ວງລັບໄປບໍຣິຂານຂອງເຮົາຈົ່ງເປັນຂອງສົງ ພິກຂຸສົງບໍ່ເປັນໃຫຍ່ໃນບໍຣິຂານນັ້ນ ບໍຣິຂານນັ້ນຕົກເປັນຂອງພິກຂຸນີສົງຝ່າຍດຽວ

ພິກຂຸທັງຫຼາຍ ຖ້າພິກຂຸກຳລັງຈະມໍຣະນະພາບ ສັ່ງແນວນີ້ວ່າ ເມື່ອເຮົາລ່ວງລັບໄປບໍຣິຂານຂອງເຮົາຈົ່ງເປັນຂອງສົງ ພິກຂຸນີສົງບໍ່ເປັນໃຫຍ່ໃນບໍຣິຂານນັ້ນ ບໍຣິຂານນັ້ນຕົກເປັນ ຂອງພິກຂຸສົງຝ່າຍດຽວ

ພິກຂຸທັງຫຼາຍ ຖ້າສາມະເນນກຳລັງຈະມໍຣະນະພາບ ຯລຯ

ພິກຂຸທັງຫຼາຍ ຖ້າອຸປາສົກກຳລັງຈະຕາຍ ຯລຯ

ພິກຂຸທັງຫຼາຍ ຖ້າອຸປາສິກາກຳລັງຈະຕາຍ ຯລຯ

ພິກຂຸທັງຫຼາຍ ຖ້າຜູ້ອື່ນ(ນອກເໜືອຈາກນີ້)ກຳລັງຈະຕາຍ ສັ່ງແນວນີ້ວ່າ ເມື່ອເຮົາລ່ວງລັບໄປ ບໍຣິຂານຂອງເຮົາຈົ່ງເປັນຂອງສົງ ພິກຂຸນີສົງບໍ່ເປັນໃຫຍ່ໃນບໍຣິຂານນັ້ນ ບໍຣິຂານ ຕົກເປັນຂອງພິກຂຸສົງຝ່າຍດຽວ"

## ເລື້ອງພິກຂຸນີໃຊ້ໄຫຼ່ກະແທກພິກຂຸ

[໔໘໐] ສະໄໝນັ້ນ ສະຕີຄົນໜຶ່ງເປັນອະດີດພັນລະຍາຂອງນັກມວຍ ບວດໃນສຳນັກພິກຂຸນີ ນາງເຫັນພິກຂຸທຸບພົນລະພາບທີ່ຖະໜົນ ຈຶ່ງໃຊ້ໄຫຼ່ກະແທກໃຫ້ເຊ ພິກຂຸທັງຫຼາຍຕຳໜິ

ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸນີເຫັນພິກຂຸທຸບພົນລະພາບທີ່ຖະໜົນ ຈຶ່ງໃຊ້ໄຫຼ່ກະແທກໃຫ້ເຊນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ໄຫຼ່ກະແທກພິກຂຸ ອົງໃດໃຊ້ໄຫຼ່ກະແທກ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດພິກຂຸນີເຫັນພິກຂຸແລ້ວ ຫຼີກທາງໃຫ້ແຕ່ໄກ"

## ເລື້ອງພິກຂຸນີໃຊ້ບາດໃສ່ເດັກອ່ອນ

ສະໄໝນັ້ນ ຍິງຄົນໜຶ່ງເປັນແມ່ໝ້າຍຜົວຮ້າງ ໄດ້ຖືພາກັບຊາຍຊູ້ ນາງເຮັດລຸລູກແລ້ວໃຊ້ພິກຂຸນີຜູ້ທີ່ຕົນອຸບປະຖຳວ່າ "ແມ່ເຈົ້າ ທ່ານໂຜດໃຊ້ບາດໃສ່ເດັກອ່ອນນີ້ໄປ" ພິກຂຸນີວາງເດັກອ່ອນ ໃນບາດແລ້ວໃຊ້ສັງຄາຕິປົດຍ່າງໄປ

ສະໄໝນັ້ນ ພິກຂຸຜູ້ທ່ຽວບິນທະບາດອົງໜຶ່ງ ຕັ້ງໃຈສະມາທານວ່າ "ເຮົາຍັງບໍ່ໃຫ້ອາຫານທີ່ໄດ້ມາແກ່ພິກຂຸຫຼືພິກຂຸນີກ່ອນແລ້ວຈະບໍ່ຍອມສັນ"

ລຳດັບນັ້ນ ພິກຂຸນັ້ນໄດ້ພົບພິກຂຸນີອົງນັ້ນຈຶ່ງກ່າວວ່າ "ນາງເຊີນທ່ານຮັບອາຫານເທີ້ນ" ນາງປະຕິເສດວ່າ "ຢ່າເລີຍ ພຣະຜູ້ເປັນເຈົ້າ"

ແມ່ນເທື່ອທີ ໔ ພິກຂຸອົງນັ້ນກໍຍັງກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ນາງ ເຊີນທ່ານ ຮັບອາຫານເທີ້ນ" ນາງປະຕິເສດວ່າ "ຢ່າເລີຍ ພຣະຜູ້ເປັນເຈົ້າ"

ແມ່ນເທື່ອທີ ໓ ພິກຂຸອົງນັ້ນກໍຍັງກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ນາງ ເຊີນທ່ານ ຮັບອາຫານເທີ້ນ" ນາງປະຕິເສດວ່າ "ຢ່າເລີຍ ພຣະຜູ້ເປັນເຈົ້າ"

ພິກຂຸນັ້ນບອກວ່າ "ອາດຕະມາຕັ້ງໃຈສະມາທານວ່າ ຍັງບໍ່ໃຫ້ອາຫານທີ່ໄດ້ມາແກ່ພິກຂຸຫຼືພິກຂຸນີກ່ອນແລ້ວເຮົາຈະບໍ່ຍອມສັນ ເຊີນທ່ານຮັບເທີ້ນ"

ຄັ້ງນັ້ນ ພິກຂຸນີນັ້ນຖືກພິກຂຸນັ້ນຣົບເຮົ້າຈຶ່ງນຳບາດອອກໃຫ້ເບິ່ງ ບອກວ່າ "ພຣະຜູ້ເປັນເຈົ້າ ທ່ານຈົ່ງເບິ່ງເດັກອ່ອນໃນບາດ ທ່ານຢ່າບອກໃຜເດີ້"

ພິກຂຸຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸນີໃຊ້ບາດໃສ່ເດັກອ່ອນນຳອອກໄປນໍ" ແລ້ວນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້

ບັນດາພິກຂຸຜູ້ມັກໜ້ອຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸນີໃຊ້ບາດໃສ່ເດັກອ່ອນນຳອອກໄປນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ບາດໃສ່ເດັກອ່ອນນຳໄປ ອົງໃດໃສ່ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດພິກຂຸນີພົບພິກຂຸແລ້ວໃຫ້ນຳບາດອອກສະແດງ"

## ເລື້ອງພິກຂຸນີສະແດງກົ້ນບາດ

ສະໄໝນັ້ນ ພວກພິກຂຸນີສັບພັກຄີພົບພິກຂຸແລ້ວຫຼີກໃຫ້ເບິ່ງກົ້ນບາດ ພິກຂຸທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີພົບພິກຂຸແລ້ວຫຼີກໃຫ້ເບິ່ງກົ້ນ ບາດນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີພົບພິກຂຸແລ້ວບໍ່ເພິ່ງຫຼີກໃຫ້ເບິ່ງກົ້ນ ບາດ ອົງໃດສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດພິກຂຸນີເມື່ອພົບພິກຂຸ ແລ້ວຫງາຍບາດສະແດງ ແລະນິມົນພິກຂຸຮັບອາຫານທີ່ມີໃນບາດນັ້ນ"

## ເລື້ອງພິກຂຸນີເພ່ງເບິ່ງອະໄວຍະວະເພດບຸຣຸດ

ສະໄໝນັ້ນ ເຂົາຖິ້ມອົງຄະຊາດຂອງບຸຣຸດໄວ້ທີ່ຖະໜົນໃນນະຄອນສາວັດຖີ ພິກຂຸນີທັງຫຼາຍເພ່ງເບິ່ງ ອະໄວຍະວະເພດຂອງບຸຣຸດນັ້ນ ຄົນທັງຫຼາຍພາກັນໂຫ່ ພິກຂຸນີເຫຼົ່ານັ້ນເກີ້ເຂີນ ເມື່ອພິກຂຸນີ ເຫຼົ່ານັ້ນກັບເຖິງສຳນັກ ໄດ້ບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍອື່ນຮູ້ ບັນດາພິກຂຸນີຜູ້ມັກໜ້ອຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸນີທັງຫຼາຍຈຶ່ງເພ່ງເບິ່ງອະໄວຍະວະເພດຂອງບຸຣຸດນໍ"

ຄັ້ງນັ້ນແລ ພິກຂຸນີທັງຫຼາຍເຫຼົ່ານັ້ນບອກເລື້ອງນັ້ນແກ່ພິກຂຸທັງຫຼາຍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງເພ່ງເບິ່ງອະໄວຍະວະເພດຂອງບຸຣຸດ ອົງໃດເພ່ງເບິ່ງ ຕ້ອງອາບັດທຸກກົດ"

# ເລື້ອງພິກຂຸໃຫ້ອາມິດ

[໔໘໑] ສະໄໝນັ້ນ ຄົນທັງຫຼາຍຖວາຍອາມິດແກ່ພິກຂຸທັງຫຼາຍ ພິກຂຸທັງຫຼາຍໃຫ້ອາມິດແກ່ພິກຂຸນີທັງຫຼາຍ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງອາມິດ ທີ່ເຂົາຖວາຍໃຫ້ຕົນສັນ ພວກພຣະຜູ້ເປັນເຈົ້າຈຶ່ງໃຫ້ແກ່ຜູ້ອື່ນນໍ ພວກເຮົາບໍ່ຮູ້ຈັກໃຫ້ທານເອງບໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອາມິດທີ່ເຂົາໃຫ້ຕົນສັນ ພິກຂຸບໍ່ເພິ່ງໃຫ້ແກ່ຜູ້ອື່ນ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍມີອາມິດຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະ ຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖວາຍແກ່ສົງ"

ອາມິດກໍຍັງມີເຫຼືອເຟືອ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖວາຍເປັນຂອງສ່ວນບຸກຄົນໄດ້"

ສະໄໝນັ້ນ ພິກຂຸທັງຫຼາຍເກັບອາມິດໄວ້ຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີທັງຫຼາຍຮັບອາມິດທີ່ພິກຂຸທັງຫຼາຍມ້ຽນໄວ້ມາບໍຣິໂພກໄດ້"

ສະໄໝນັ້ນ ຊາວບ້ານຖວາຍອາມິດແກ່ພິກຂຸນີທັງຫຼາຍ ພິກຂຸນີທັງຫຼາຍຈຶ່ງຖວາຍແກ່ພິກຂຸທັງຫຼາຍ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງອາມິດທີ່ເຂົາຖວາຍໃຫ້ຕົນສັນ ພິກຂຸນີທັງຫຼາຍຈຶ່ງໃຫ້ແກ່ຜູ້ອື່ນນໍ ພວກເຮົາບໍ່ຮູ້ຈັກໃຫ້ທານເອງບໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອາມິດທີ່ເຂົາໃຫ້ຕົນສັນ ພິກຂຸນີບໍ່ເພິ່ງໃຫ້ ແກ່ຜູ້ອື່ນ ອົງໃດໃຫ້ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍມີອາມິດຫຼາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖວາຍສົງ"

ອາມິດກໍຍັງມີເຫຼືອເຟືອ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖວາຍເປັນຂອງສ່ວນບຸກຄົນໄດ້"

ສະໄໝນັ້ນ ອາມິດທີ່ພິກຂຸນີທັງຫຼາຍມ້ຽນໄວ້ມີຫຼາຍ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍຮັບອາມິດ ທີ່ພິກຂຸນີທັງຫຼາຍມ້ຽນໄວ້ມາສັນໄດ້"

## ເລື້ອງພິກຂຸນີຢືມເສນາສະນະ

[໔໘໘] ສະໄໝນັ້ນ ພິກຂຸທັງຫຼາຍມີເສນາສະນະຈໍານວນຫຼາຍ ແຕ່ພິກຂຸນີທັງຫຼາຍບໍ່ມີ ພິກຂຸນີທັງຫຼາຍຈຶ່ງສົ່ງທູດໄປຂໍວ່າ "ທ່ານຜູ້ຈະເລີນ ຂໍໂອກາດເທີ້ນ ຂໍພຣະຜູ້ເປັນເຈົ້າທັງຫຼາຍຈົ່ງໃຫ້ພວກເຮົາຢືມເສນາສະນະ"

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີທັງຫຼາຍນໍາເສນາສະນະໄປໃຊ້ໄດ້ຊົ່ວໄລຍະ"

## ເລື້ອງຜ້ານຸ່ງຂອງພິກຂຸນີ

ສະໄໝນັ້ນ ພິກຂຸນີທັງຫຼາຍມີຣະດູ ນັ່ງແດ່ ນອນແດ່ເທິງຕຽງທີ່ບຸໄວ້ ເທິງຕັ່ງທີ່ບຸໄວ້ ເສນາສະນະເປື້ອນໂລຫິດ

ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງນັ່ງ ບໍ່ເພິ່ງນອນເທິງຕຽງທີ່ບຸໄວ້ ອົງໃດນັ່ງຫຼືນອນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຜັດປ່ຽນ"

ຜ້າຜັດປ່ຽນເປື້ອນໂລຫິດ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຊັບໃນ"

ຜ້າຊັບໃນລຸດ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ເຊືອກມັດໄວ້ທີ່ຂາອ່ອນ"

ເຊືອກຂາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຊືອກຝັ້ນມັດແອວ"

ສະໄໝນັ້ນ ພວກພິກຂຸນີສັບພັກຄີໃຊ້ເຊືອກຝັ້ນມັດແອວຕະຫຼອດເວລາ ຄົນທັງຫຼາຍຕຳໜິປະນາມ ໂພນທະນາວ່າ "ຄືຍິງຄະລິຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ເຊືອກຝັ້ນມັດແອວຕະຫຼອດເວລາ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດເຊືອກຝັ້ນມັດແອວແກ່ພິກຂຸນີ ທີ່ມີຣະດູ"

**ທຸຕິຍະພານະວານ ຈົບ**

## ໓. ຕະຕິຍະພານະວານ

## ເລື້ອງອັນຕະຣາຍິກະທຳຂອງພິກຂຸນີ

[໔໘໓] ສະໄໝນັ້ນ ພິກຂຸນີທັງຫຼາຍທີ່ອຸປະສົມບົດແລ້ວປາກົດວ່າບໍ່ມີເຄື່ອງໝາຍເພດແດ່ ພຽງແຕ່ວ່າມີເຄື່ອງໝາຍເພດແດ່ ບໍ່ມີປະຈຳເດືອນແດ່ ມີປະຈຳເດືອນບໍ່ຢຸດແດ່ ໃຊ້ຜ້າຊັບສະເໝີແດ່ ເປັນຄົນໄຫຼຊຶມແດ່ ມີເດືອຍແດ່ ເປັນບັນເດາະຍິງແດ່ ມີລັກສະນະຄ້າຍຊາຍແດ່ ມີທະວານໜັກທະວານເບົາຕິດກັນແດ່ ມີສອງເພດ (ອຸພະໂຕພະຍັນຊະນະກະ) ແດ່ ຯລຯ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອບຖາມອັນຕະຣາຍິກະທຳ ໒໔ ປະການກັບສະຕີຜູ້ຈະອຸປະສົມບົດ

ພິກຂຸທັງຫຼາຍ ເພິ່ງສອບຖາມແນວນີ້

## ວິທີສອບຖາມອັນຕະຣາຍິກະທຳ

ທ່ານບໍ່ແມ່ນຜູ້ບໍ່ມີເຄື່ອງໝາຍເພດບໍ ບໍ່ແມ່ນພຽງແຕ່ວ່າມີເຄື່ອງໝາຍເພດບໍ ບໍ່ແມ່ນ ຜູ້ບໍ່ມີປະຈຳເດືອນບໍ ບໍ່ແມ່ນຜູ້ມີປະຈຳເດືອນບໍ່ຢຸດບໍ ບໍ່ແມ່ນຜູ້ໃຊ້ຜ້າຊັບສະເໝີບໍ ບໍ່ແມ່ນຄົນໄຫຼຊຶມບໍ ບໍ່ແມ່ນຜູ້ມີເດືອຍບໍ ບໍ່ແມ່ນເປັນບັນເດາະຍິງບໍ ບໍ່ແມ່ນຜູ້ມີລັກສະນະຄ້າຍຊາຍບໍ ບໍ່ແມ່ນຜູ້ມີທະວານໜັກທະວານເບົາຕິດກັນບໍ ບໍ່ແມ່ນຄົນສອງເພດບໍ ທ່ານມີພະຍາດເຫຼົ່ານີ້ບໍ ຄື ໂຣກຂີ້ທູດ ໂຣກຝີ ໂຣກກາກ ໂຣກມອງຄໍ່ ໂຣກລົມບ້າໝູ ທ່ານເປັນມະນຸດບໍ ທ່ານເປັນຍິງບໍ ທ່ານເປັນອິດສະຫຼະບໍ ທ່ານບໍ່ມີໜີ້ສິນບໍ ທ່ານບໍ່ເປັນຣາຊະພັດບໍ ມານດາບິດາຫຼືສາມີອະນຸຍາດແລ້ວບໍ ມີ

ອາຍຸຄົບ ໔໐ ປີບໍລິບູນແລ້ວບໍ ທ່ານມີບາດແລະຈີວອນຄົບແລ້ວບໍ ທ່ານຊື່ແນວໃດ ປະວັດຕິນີ[?] ຂອງທ່ານຊື່ແນວໃດ

ສະໄໝນັ້ນ ພິກຂຸທັງຫຼາຍກຳລັງຖາມອັນຕະຣາຍິກະທຳຂອງພິກຂຸນີທັງຫຼາຍ ສະຕິອຸປະສຳປະທາເປກຂາ (ຜູ້ມຸ້ງຈະອຸປະສົມບົດ) ຍ່ອມກະດາກອາຍເກີ້ເຂີນ ບໍ່ສາມາດຕອບໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະຕິອຸປະສຳປະທາເປກຂາ ຜູ້ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງແລ້ວ ໄປອຸປະສົມບົດໃນຝ່າຍພິກຂຸສົງໄດ້"[໔]

ສະໄໝນັ້ນ ພິກຂຸນີທັງຫຼາຍສອບຖາມອັນຕະຣາຍິກະທຳສະຕິອຸປະສຳປະທາເປກຂາຜູ້ຍັງບໍ່ໄດ້ຮັບການສອນຊ້ອມ ພວກທ່ານຍ່ອມກະດາກອາຍເກີ້ເຂີນບໍ່ສາມາດຕອບໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອນຊ້ອມກ່ອນແລ້ວສອບ ຖາມອັນຕະຣາຍິກະທຳພາຍຫຼັງ

ພິກຂຸນີທັງຫຼາຍໄດ້ສອນຊ້ອມທ່າມກາງສົງນັ້ນເອງ ສະຕິອຸປະສຳປະທາເປກຂາກໍຍັງກະດາກອາຍເກີ້ເຂີນ ບໍ່ສາມາດຕອບໄດ້ຄືເກົ່າ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອນຊ້ອມກັນໄດ້ໃນບ່ອນສົມຄວນ ແລ້ວຈຶ່ງສອບຖາມອັນຕະຣາຍິກະທຳທ່າມກາງສົງ

ພິກຂຸທັງຫຼາຍ ພິກຂຸນີທັງຫຼາຍເພິ່ງສອນຊ້ອມແນວນີ້

## ຄຳບອກບາດແລະຈີວອນ

[໔໔໔] ໃນເບື້ອງຕົ້ນ ເພິ່ງໃຫ້ອຸປະສຳປະທາເປກຂາຖືອຸປັດຊາ ເມື່ອໃຫ້ຖືອຸປັດຊາ ແລ້ວເພິ່ງບອກບາດແລະຈີວອນວ່າ "ນີ້ບາດ ນີ້ສັງຄາຕິ ນີ້ອຸດຕະຣາສົງ ນີ້ອັນຕະຣະວາສົກ ນີ້ຜ້າ ຮັດຖັນ ນີ້ຜ້າອາບນ້ຳຂອງທ່ານ ທ່ານຈົ່ງອອກໄປຢືນທີ່ນັ້ນ"

## ເລື້ອງພິກຂຸນີໂງ່ຈ້າສອນຊ້ອມ

ພິກຂຸນີທັງຫຼາຍຜູ້ໂງ່ຈ້າບໍ່ສະຫຼາດສອນຊ້ອມ ສະຕິອຸປະສຳປະທາເປກຂາໄດ້ຮັບການສອນ ຊ້ອມບໍ່ດີຈຶ່ງສະທົກສະທ້ານເກີ້ເຂີນ ບໍ່ສາມາດຕອບໄດ້

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີຜູ້ໂງ່ຈ້າບໍ່ສະຫຼາດບໍ່ເພິ່ງສອນຊ້ອມ ອົງໃດສອນຊ້ອມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີຜູ້ສະຫຼາດສາມາດ ສອນຊ້ອມ"

## ເລື້ອງພິກຂຸນີຍັງບໍ່ໄດ້ຮັບການແຕ່ງຕັ້ງສອນຊ້ອມ

ພິກຂຸນີທັງຫຼາຍຍັງບໍ່ໄດ້ຮັບແຕ່ງຕັ້ງກໍສອນຊ້ອມ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີຍັງບໍ່ໄດ້ຮັບແຕ່ງຕັ້ງບໍ່ເພິ່ງສອນຊ້ອມ ອົງໃດສອນຊ້ອມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີຜູ້ໄດ້ຮັບແຕ່ງຕັ້ງແລ້ວສອນຊ້ອມ

## ວິທີແຕ່ງຕັ້ງຕົນແລະກຳມະວາຈາ

ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງແຕ່ງຕັ້ງແບບນີ້ ຕົນເອງແຕ່ງຕັ້ງຕົນເອງກໍໄດ້ ພິກຂຸນີອີກອົງໜຶ່ງແຕ່ງຕັ້ງພິກຂຸນີອີກອົງໜຶ່ງກໍໄດ້

ແບບໃດນໍ ຊື່ວ່າຕົນເອງແຕ່ງຕັ້ງຕົນເອງ ຄື ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າຊື່ນີ້ຈະສອນຊ້ອມຜູ້ມີຊື່ນີ້ ແບບນີ້ ຊື່ວ່າຕົນເອງແຕ່ງຕັ້ງຕົນເອງ

## ວິທີແຕ່ງຕັ້ງຜູ້ອື່ນແລະກຳມະວາຈາ

ແບບໃດນໍ ຊື່ວ່າພິກຂຸນີອົງໜຶ່ງແຕ່ງຕັ້ງພິກຂຸນີອີກອົງໜຶ່ງ ຄື ພິກຂຸນີຜູ້ສະຫຼາດ ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ຖ້າສົງພ້ອມແລ້ວ ພິກຂຸນີທັງຫຼາຍຊື່ນີ້ເພິ່ງສອນຊ້ອມຜູ້ມີຊື່ນີ້ ແບບນີ້ ຊື່ວ່າພິກຂຸນີອື່ນແຕ່ງຕັ້ງພິກຂຸນີອື່ນ

ພິກຂຸນີຜູ້ໄດ້ຮັບແຕ່ງຕັ້ງແລ້ວນັ້ນເພິ່ງເຂົ້າໄປຫາອຸປະສຳປະທາເປກຂາແລ້ວ ກ່າວແບບນີ້ວ່າ ທ່ານຜູ້ມີຊື່ນີ້ ທ່ານຟັງເດີ ນີ້ເປັນການສັດ ການຈິງຂອງທ່ານ ເມື່ອພິກຂຸນີຜູ້ສອນຊ້ອມຖາມ

ໃນທ່າມກາງສົງເຖິງສິ່ງທີ່ເກີດ ສິ່ງທີ່ມີ ເພິ່ງບອກວ່າ "ມີ" ບໍ່ມີກໍເພິ່ງບອກວ່າ "ບໍ່ມີ" ທ່ານຢ່າສະທົກສະທ້ານ ຢ່າເກີ້ເຂີນ ພິກຂຸນີຜູ້ສອນຊ້ອມຈັກຖາມເຈົ້າແນວນີ້ວ່າ ທ່ານບໍ່ແມ່ນຜູ້ບໍ່ມີເຄື່ອງໝາຍເພດບໍ ບໍ່ແມ່ນພຽງແຕ່ວ່າມີເຄື່ອງໝາຍເພດບໍ ບໍ່ແມ່ນ ຜູ້ບໍ່ມີປະຈຳເດືອນບໍ ບໍ່ແມ່ນຜູ້ມີປະຈຳເດືອນບໍ່ຢຸດບໍ ບໍ່ແມ່ນຜູ້ໃຊ້ຜ້າຊັບສະເໝີບໍ ບໍ່ແມ່ນຄົນໄຫຼຊຶມບໍ ບໍ່ແມ່ນຜູ້ມີເດືອຍບໍ ບໍ່ແມ່ນເປັນບັນເດາະຍິງບໍ ບໍ່ແມ່ນຜູ້ມີລັກສະນະຄ້າຍຊາຍບໍ ບໍ່ແມ່ນຜູ້ມີທະວານໜັກທະວານເບົາຕິດກັນບໍບໍ່ແມ່ນຄົນສອງເພດບໍ ທ່ານມີພະຍາດເຫຼົ່ານີ້ບໍ ຄື ໂຣກຂີ້ທູດ ໂຣກຝີ ໂຣກກາກ ໂຣກມອງຄໍ່ ໂຣກລົມບ້າໝູ ທ່ານເປັນມະນຸດບໍ ທ່ານເປັນຍິງບໍ ທ່ານເປັນອິດສະຫຼະບໍ ທ່ານບໍ່ມີໜີ້ສິນບໍ ທ່ານບໍ່ເປັນຣາຊະພັດບໍ ມານດາບິດາຫຼືສາມີອະນຸຍາດແລ້ວບໍ ມີອາຍຸຄົບ ໒໐ ປີບໍລິບູນແລ້ວບໍ ທ່ານມີບາດແລະຈີວອນຄົບແລ້ວບໍ ທ່ານຊື່ແນວໃດ ປະວັດຕິນີຂອງທ່ານຊື່ແນວໃດ

## ເລື້ອງຫ້າມຜູ້ສອນຊ້ອມກັບອຸປະສຳປະທາເປກຂາຍ່າງມາພ້ອມກັນ

ພິກຂຸນີຜູ້ສອນຊ້ອມກັບສິກຂະມານາອຸປະສຳປະທາເປກຂາຍ່າງມາພ້ອມກັນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ພິກຂຸນີຜູ້ສອນຊ້ອມກັບອຸປະສຳປະທາເປກຂາ ບໍ່ເພິ່ງຍ່າງມາພ້ອມກັນ ພິກຂຸນີຜູ້ສອນຊ້ອມເພິ່ງຍ່າງມາກ່ອນ ແລ້ວປະກາດໃຫ້ສົງຮູ້ດ້ວຍຍັດຕິ ກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ຂ້ານ້ອຍສອນຊ້ອມທ່ານແລ້ວ ຖ້າສົງພ້ອມກັນແລ້ວ ຜູ້ມີຊື່ນີ້ເພິ່ງເຂົ້າມາໄດ້

ເພິ່ງຮຽກອຸປະສຳປະທາເປກຂາວ່າ "ທ່ານຈົ່ງເຂົ້າມາເທີ້ນ"

## ຄຳຂໍອຸປະສົມບົດຕໍ່ພິກຂຸນີສົງ

ເພິ່ງໃຫ້ອຸປະສຳປະທາເປກຂາຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍ ນັ່ງຢ່ອງຢໍ້ປະນົມມື ຂໍອຸປະສົມບົດວ່າ

ແມ່ເຈົ້າ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ສົງໂຜດຊ່ອຍອະນຸເຄາະຍົກຂ້ານ້ອຍຂຶ້ນເທີ້ນ

ແມ່ເຈົ້າ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໒ ສົງໂຜດຊ່ອຍອະນຸເຄາະຍົກຂ້ານ້ອຍຂຶ້ນເທີ້ນ

ແມ່ເຈົ້າ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໓ ສົງໂຜດຊ່ອຍອະນຸເຄາະຍົກຂ້ານ້ອຍຂຶ້ນເທີ້ນ

## ຄຳແຕ່ງຕັ້ງຕົນເພື່ອຖາມອັນຕະຣາຍິກະທຳ

ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າເພິ່ງຖາມອັນຕະຣາຍິກະທຳກັບຜູ້ມີຊື່ນີ້ດັ່ງນີ້

ທ່ານຜູ້ມີຊື່ນີ້ ທ່ານຟັງເດີ້ ນີ້ເປັນການສັດ ການຈິງຂອງທ່ານ ເຮົາຈະຖາມເຖິງສິ່ງທີ່ເກີດ ສິ່ງທີ່ມີ ເພິ່ງບອກວ່າ "ມີ" ບໍ່ມີກໍເພິ່ງບອກວ່າ "ບໍ່ມີ" ທ່ານບໍ່ແມ່ນຜູ້ບໍ່ມີເຄື່ອງໝາຍເພດບໍ ທ່ານບໍ່ແມ່ນພຽງແຕ່ວ່າມີເຄື່ອງໝາຍເພດບໍ ຯລຯ ທ່ານຊື່ແນວໃດ ປະວັດຕິນີຂອງທ່ານຊື່ແນວໃດ

## ຍັດຕິຈະຕຸດຖະກຳອຸປະສຳປະທາ

ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໔໔໕] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳ ທ່ານມີບາດແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີ ແມ່ເຈົ້າຊື່ນີ້ເປັນປະວັດຕິນີ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ບໍລິສຸດ ຈາກອັນຕະຣາຍິກະທຳທັງຫຼາຍ ທ່ານມີບາດແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ແມ່ເຈົ້າອົງໃດ ເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກໍກ່າວຄວາມນີ້ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳທັງຫຼາຍ ທ່ານມີບາດ ແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນ ເພິ່ງທັກທ້ວງ

ຜູ້ມີຊື່ນີ້ ສົງໃຫ້ອຸປະສົມບົດແລ້ວມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ຫຼັງຈາກນັ້ນ ພິກຂຸນີເພິ່ງພາທ່ານເຂົ້າໄປຫາພິກຂຸສົງ ໃຫ້ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງໃຫ້ຂາບຕີນພິກຂຸທັງຫຼາຍ ແລ້ວໃຫ້ນັ່ງຍ່ອງຍໍ້ ປະນົມມື ໃຫ້ກ່າວຄຳຂໍອຸປະສົມບົດວ່າ

## ຄຳຂໍອຸປະສົມບົດຕໍ່ພິກຂຸສົງ

ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດ ແລ້ວໃນສົງຝ່າຍດຽວ ບໍລິສຸດແລ້ວໃນພິກຂຸນີສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ສົງໂຜດອະນຸເຄາະຍົກຂ້ານ້ອຍຂຶ້ນດ້ວຍເທີ້ນ

ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດ ແລ້ວໃນສົງຝ່າຍດຽວ ບໍລິສຸດແລ້ວໃນພິກຂຸນີສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໒ ຂໍສົງໂຜດອະນຸເຄາະຍົກຂ້ານ້ອຍຂຶ້ນເທີ້ນ

ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດ ແລ້ວໃນສົງຝ່າຍດຽວ ບໍລິສຸດແລ້ວໃນພິກຂຸນີສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂ້ານ້ອຍຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໓ ຂໍສົງໂຜດອະນຸເຄາະຍົກຂ້ານ້ອຍຂຶ້ນເທີ້ນ

## ຍັດຕິຈະຕຸດຖະກຳອຸປະສຳປະທາ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໔ ຂ້າພະເຈົ້າກໍກ່າວຄວາມນີ້ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຜູ້ມີຊື່ນີ້ ສົງໃຫ້ອຸປະສົມບົດແລ້ວມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງການແທກເງົາເປັນຕົ້ນ

ຂະນະນັ້ນແລ ເພິ່ງແທກເງົາແດດ ບອກປະມານແຫ່ງລະດູ ບອກສ່ວນແຫ່ງມື້ ບອກສັງຄີຕິ[๑] ສັ່ງພິກຂຸນີທັງຫຼາຍວ່າ "ພວກທ່ານເພິ່ງບອກນິໄສ ໓ ແລະ ອະກະຣະນີຍະກິດ ໘ ແກ່ພິກຂຸນີນີ້"[๔]

### ອຸປະສົມບົດວິທີ ຈົບ

[໔໔໓] ສະໄໝນັ້ນ ພິກຂຸນີທັງຫຼາຍຍົກຍ້າຍບ່ອນນັ່ງໃນໂຮງສັນຈົນລ່ວງເວລາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຕາມລຳດັບພັນສາສຳລັບພິກຂຸນີ ໘ ອົງ ພິກຂຸນີທີ່ເຫຼືອອະນຸຍາດຕາມລຳດັບທີ່ມາ"

ສະໄໝນັ້ນ ພິກຂຸນີທັງຫຼາຍເປີກສາກັນວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຕາມລຳດັບພັນສາສຳລັບພິກຂຸນີທັງຫຼາຍ ໘ ອົງ ພິກຂຸນີທີ່ເຫຼືອອະນຸຍາດຕາມລຳດັບທີ່ມາ" ຈຶ່ງກັນທີ່ຕາມລຳດັບພັນສາໄວ້ສະເພາະພິກຂຸນີ ໘ ອົງທໍ່ນັ້ນ ພິກຂຸນີທີ່ເຫຼືອກັນໄວ້ຕາມລຳດັບທີ່ມາໃນທີ່ທຸກແຫ່ງ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນໂຮງສັນ ເຮົາອະນຸຍາດຕາມລຳດັບພັນສາ ສຳລັບພິກຂຸນີ ໘ ອົງ ພິກຂຸນີທີ່ເຫຼືອອະນຸຍາດຕາມລຳດັບທີ່ມາ ພິກຂຸນີບໍ່ເພິ່ງຫ້າມຕາມລຳດັບພັນສາໃນບ່ອນອື່ນ ອົງໃດຫ້າມ ຕ້ອງອາບັດທຸກກົດ"

# ເລື້ອງປະວາຣະນາ

[໔໔໗] ສະໄໝນັ້ນ ພິກຂຸນີທັງຫຼາຍບໍ່ປະວາຣະນາກັນ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີຈະບໍ່ປະວາຣະນາບໍ່ໄດ້ ອົງໃດບໍ່ປະວາຣະນາ ເພິ່ງປັບອາບັດຕາມທໍາ"

ສະໄໝນັ້ນ ພິກຂຸນີທັງຫຼາຍປະວາຣະນາກັນເອງແລ້ວບໍ່ປະວາຣະນາກັບພິກຂຸສົງ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີຈະປະວາຣະນາກັນເອງແລ້ວບໍ່ປະວາຣະນາກັບພິກຂຸສົງບໍ່ໄດ້ ອົງໃດບໍ່ປະວາຣະນາ ເພິ່ງປັບອາບັດຕາມທໍາ"

ສະໄໝນັ້ນ ພິກຂຸນີທັງຫຼາຍປະວາຣະນາພ້ອມກັບພິກຂຸທັງຫຼາຍ ຈຶ່ງເກີດຊຸນລະມຸນຂຶ້ນ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງປະວາຣະນາພ້ອມກັບພິກຂຸ ທັງຫຼາຍ ອົງໃດປະວາຣະນາ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍປະວາຣະນາໃນເວລາກ່ອນພັດຕາຫານ ໃຫ້ເວລາຜ່ານໄປ ພິກຂຸ ທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີປະວາຣະນາໃນເວລາ ຫຼັງພັດຕາຫານ"

ພິກຂຸນີທັງຫຼາຍເມື່ອປະວາຣະນາໃນເວລາຫຼັງພັດຕາຫານ ໄດ້ຢູ່ໃນເວລາວິການ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີປະວາຣະນາກັບພິກຂຸນີສົງໃນມື້ນີ້ ພໍມື້ຮຸ່ງຂຶ້ນປະວາຣະນາກັບພິກຂຸສົງ"

ສະໄໝນັ້ນ ພິກຂຸນີສົງກໍາລັງປະວາຣະນາ ເກີດຊຸນລະມຸນ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸນີຜູ້ສະຫຼາດ ສາມາດອົງໜຶ່ງເປັນໂຕແທນພິກຂຸນີສົງໃຫ້ປະວາຣະນາກັບພິກຂຸສົງ"

## ວິທີແຕ່ງຕັ້ງແລະຍັດຕິກຳມະວາຈາ

ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງແຕ່ງຕັ້ງແບບນີ້ ຄື ໃນເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸນີ ຈາກນັ້ນພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸນີຊື່ນີ້ເປັນໂຕແທນພິກຂຸນີສົງໃຫ້ໄປປະວາຣະນາກັບພິກຂຸສົງ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ປະວາຣະນາກັບພິກຂຸສົງແທນພິກຂຸນີສົງ ແມ່ເຈົ້າອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ເປັນໂຕແທນພິກຂຸນີສົງ ໃຫ້ໄປປະວາຣະນາກັບພິກຂຸສົງ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນ ເພິ່ງທັກທ້ວງ

ພິກຂຸນີຊື່ນີ້ ສົງແຕ່ງຕັ້ງເປັນໂຕແທນພິກຂຸນີສົງໃຫ້ໄປປະວາຣະນາກັບພິກຂຸສົງ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸນີຜູ້ໄດ້ຮັບແຕ່ງຕັ້ງແລ້ວ ເພິ່ງພາພິກຂຸນີສົງເຂົ້າໄປຫາພິກຂຸສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸແລ້ວນັ່ງຍ່ອງຍໍ້ປະນົມມື ກ່າວແນວນີ້ວ່າ

### ຄຳປະວາຣະນາ

ພຣະຜູ້ເປັນເຈົ້າທັງຫຼາຍ ພິກຂຸນີສົງປະວາຣະນາຕໍ່ພິກຂຸສົງ ດ້ວຍໄດ້ເຫັນ ດ້ວຍໄດ້ຍິນຫຼືດ້ວຍນຶກສົງໄສ ຂໍພຣະຜູ້ເປັນເຈົ້າທັງຫຼາຍອາໄສຄວາມກະລຸນາຕັກເຕືອນພິກຂຸນີສົງເທີ້ນ ພິກຂຸນີສົງເມື່ອເຫັນ(ໂທດ)ກໍຈະແກ້ໄຂ

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ພຣະຜູ້ເປັນເຈົ້າທັງຫຼາຍ ພິກຂຸນີສົງປະວາຣະນາຕໍ່ພິກຂຸສົງ ດ້ວຍໄດ້ເຫັນ ດ້ວຍໄດ້ຍິນຫຼືດ້ວຍນຶກສົງໄສ ຂໍພຣະຜູ້ເປັນເຈົ້າທັງຫຼາຍອາໄສຄວາມກະລຸນາຕັກເຕືອນພິກຂຸນີສົງເທີ້ນ ພິກຂຸນີສົງເມື່ອເຫັນ(ໂທດ)ກໍຈະແກ້ໄຂ

## ເລື້ອງການງົດອຸໂປສົດ

[໔໔໗] ສະໄໝນັ້ນ ພິກຂຸນີທັງຫຼາຍງົດອຸໂປສົດ ງົດປະວາຣະນາແກ່ພິກຂຸທັງຫຼາຍ ກະທຳການ ສອບຖາມ ເລີ່ມອະນຸວາທາທິກອນ ຂໍໂອກາດ ໂຈດ ໃຫ້ພິກຂຸທັງຫຼາຍໃຫ້ການ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງງົດອຸໂປສົດແກ່ພິກຂຸ ແມ່ນງົດແລ້ວກໍບໍ່ເປັນອັນງົດ ອົງທີ່ງົດຕ້ອງອາບັດທຸກກົດ ບໍ່ເພິ່ງງົດປະວາຣະນາແກ່ພິກຂຸ ແມ່ນງົດແລ້ວກໍບໍ່ເປັນອັນງົດ ອົງທີ່ງົດຕ້ອງອາບັດທຸກກົດ ບໍ່ເພິ່ງກະທຳການສອບຖາມ ແມ່ນເຮັດກໍບໍ່ເປັນອັນເຮັດ ອົງທີ່ເຮັດຕ້ອງອາບັດທຸກກົດ ບໍ່ເພິ່ງເລີ່ມອະນຸວາທາທິກອນແກ່ພິກຂຸ ແມ່ນເລີ່ມກໍບໍ່ເປັນອັນເລີ່ມ ອົງທີ່ເລີ່ມຕ້ອງອາບັດທຸກກົດ ບໍ່ເພິ່ງຂໍໂອກາດພິກຂຸ ແມ່ນຂໍແລ້ວກໍບໍ່ເປັນອັນຂໍ ອົງທີ່ຂໍຕ້ອງອາບັດທຸກກົດ ບໍ່ເພິ່ງໂຈດພິກຂຸ ແມ່ນໂຈດກໍບໍ່ເປັນອັນໂຈດ ອົງທີ່ໂຈດຕ້ອງອາບັດທຸກກົດ ບໍ່ເພິ່ງໃຫ້ພິກຂຸໃຫ້ການ ແມ່ນໃຫ້ພິກຂຸໃຫ້ການແລ້ວກໍບໍ່ເປັນອັນໃຫ້ການ ອົງທີ່ໃຫ້ພິກຂຸໃຫ້ການ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍງົດອຸໂປສົດ ງົດປະວາຣະນາແກ່ພິກຂຸນີທັງຫຼາຍ ກະທຳການສອບຖາມ ເລີ່ມອະນຸວາທາທິກອນ ຂໍໂອກາດ ໂຈດ ໃຫ້ພິກຂຸນີໃຫ້ການ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸງົດອຸໂປສົດແກ່ພິກຂຸນີ ແມ່ນງົດແລ້ວກໍເປັນອັນງົດ ອົງທີ່ງົດບໍ່ຕ້ອງອາບັດ ໃຫ້ງົດປະວາຣະນາແກ່ພິກຂຸນີ ແມ່ນງົດແລ້ວກໍເປັນອັນງົດດີແລ້ວ ອົງທີ່ງົດບໍ່ຕ້ອງອາບັດ ໃຫ້ກະທຳການສອບຖາມ ແມ່ນເຮັດແລ້ວກໍເປັນອັນເຮັດດີແລ້ວ ອົງທີ່ເຮັດບໍ່ຕ້ອງອາບັດ ໃຫ້ເລີ່ມອະນຸວາທາທິກອນແກ່ພິກຂຸນີ ແມ່ນເລີ່ມແລ້ວກໍເປັນອັນເລີ່ມດີແລ້ວ ອົງທີ່ເລີ່ມບໍ່ຕ້ອງອາບັດ ໃຫ້ຂໍໂອກາດພິກຂຸນີ ແມ່ນຂໍແລ້ວກໍເປັນອັນຂໍດີແລ້ວ ອົງທີ່ຂໍກໍບໍ່ຕ້ອງອາບັດ ໃຫ້ໂຈດພິກຂຸນີ ແມ່ນໂຈດແລ້ວກໍເປັນອັນໂຈດດີແລ້ວ ອົງທີ່ໂຈດບໍ່ຕ້ອງອາບັດ ໃຫ້ພິກຂຸນີໃຫ້ການ ແມ່ນໃຫ້ພິກຂຸນີໃຫ້ການແລ້ວກໍເປັນອັນເຮັດດີແລ້ວ ອົງທີ່ໃຫ້ພິກຂຸນີ ໃຫ້ການກໍບໍ່ຕ້ອງອາບັດ

## ເລື້ອງພິກຂຸນີສັບພັກຄີໂດຍສານຍານພາຫະນະ

[໔໙] ສະໄໝນັ້ນ ພວກພິກຂຸນີສັບພັກຄີ ໂດຍສານຍານພາຫະນະທຽມດ້ວຍງົວເພດແມ່ມີບຸຣຸດເປັນສາຣະຖີແດ່ ທຽມດ້ວຍງົວເພດຜູ້ມີສະຕີເປັນສາຣະຖີແດ່

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຊາຍໜຸ່ມຍິງສາວໂດຍສານ ຍານພາຫະນະໄປຫຼິ້ນນ້ຳໃນແມ່ນ້ຳຄົງຄາແລະແມ່ນ້ຳມະຮີ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໂດຍສານຍານພາຫະນະ ອົງໃດໂດຍສານ ເພິ່ງປັບອາບັດຕາມທຳ"

ສະໄໝນັ້ນ ພິກຂຸນີອົງໜຶ່ງເປັນໄຂ້ບໍ່ສາມາດຍ່າງໄດ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີເປັນໄຂ້ ໂດຍສານ ຍານພາຫະນະໄດ້"

ສະໄໝນັ້ນ ພິກຂຸນີທັງຫຼາຍໄດ້ມີການສົນທະນາກັນດັ່ງນີ້ວ່າ "ຍານພາຫະນະທີ່ຊົງອະນຸຍາດນັ້ນ ທຽມດ້ວຍງົວເພດແມ່ຫຼືເພດຜູ້" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຍານພາຫະນະທີ່ທຽມດ້ວຍ ງົວເພດແມ່ ຍານພາຫະນະທີ່ທຽມດ້ວຍງົວເພດຜູ້ ຍານພາຫະນະທີ່ໃຊ້ມືລາກ"[໑]

## ເລື້ອງຄານຫາມ

ສະໄໝນັ້ນ ພິກຂຸນີອົງໜຶ່ງບໍ່ສະບາຍຫຼາຍ ຍ້ອນຍານພາຫະນະກະເທືອນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດວໍ (ແລະ) ເປຫາມ"

## ເລື້ອງຍິງແພດສະຫຍາຊື່ອັດທະກາສີ

[໔໓໐] ສະໄໝນັ້ນ ຍິງແພດສະຫຍາຊື່ອັດທະກາສີບວດໃນສຳນັກພິກຂຸນີ ນາງຕ້ອງການໄປ ນະຄອນສາວັດຖີ ດ້ວຍຄິດວ່າ "ຈະອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າ"

ພວກນັກເລງພໍໄດ້ຟັງຂ່າວວ່າ "ຍິງແພດສະຫຍາຊື່ອັດທະກາສີຈະເດີນທາງໄປນະຄອນສາວັດຖີ" ຈຶ່ງຖ້າດັກຈອບຊຸ່ມຢູ່ໃກ້ຫົນທາງ

ຍິງແພດສະຫຍາອັດທະກາສີໄດ້ຮູ້ວ່າ "ມີພວກນັກເລງຈອບຊຸ່ມຢູ່ໃກ້ຫົນທາງ" ຈຶ່ງສົ່ງຂ່າວໄປເຖິງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງຕ້ອງການຈະອຸປະສົມບົດ ຈະເພິ່ງປະຕິບັດແນວໃດ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸປະສົມບົດໄດ້ແມ່ນໂດຍທູດ"

ພິກຂຸທັງຫຼາຍຈຶ່ງໃຫ້ພິກຂຸນີອຸປະສົມບົດໂດຍມີພິກຂຸເປັນທູດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ພິກຂຸນີອຸປະສົມບົດໂດຍມີ ພິກຂຸເປັນທູດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ"

ພິກຂຸທັງຫຼາຍໃຫ້ພິກຂຸນີອຸປະສົມບົດໂດຍມີສິກຂະມານາເປັນທູດ ຯລຯ ພິກຂຸທັງຫຼາຍໃຫ້ພິກຂຸນີອຸປະສົມບົດໂດຍມີສາມະເນນເປັນທູດ ຯລຯ ພິກຂຸທັງຫຼາຍໃຫ້ພິກຂຸນີອຸປະສົມບົດໂດຍ ມີສາມະເນຣີເປັນທູດ ຯລຯ ພິກຂຸທັງຫຼາຍໃຫ້ພິກຂຸນີອຸປະສົມບົດໂດຍມີພິກຂຸນີໂງ່ຈ້າບໍ່ສະຫຼາດ ເປັນທູດ ຯລຯ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ພິກຂຸນີອຸປະສົມບົດ ໂດຍມີພິກຂຸນີໂງ່ຈ້າບໍ່ສະຫຼາດເປັນທູດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີອຸປະສົມບົດໂດຍມີພິກຂຸນີຜູ້ສະຫຼາດສາມາດເປັນທູດ"

ພິກຂຸນີຜູ້ເປັນທູດເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸທັງຫຼາຍແລ້ວນັ່ງຢ່ອງຍໍ້ ປະນົມມືກ່າວວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ພຣະຜູ້ເປັນເຈົ້າທັງຫຼາຍ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂໍສົງໂຜດອະນຸເຄາະຍົກທ່ານຂຶ້ນເທີ້ນ

ພຣະຜູ້ເປັນເຈົ້າທັງຫຼາຍ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ພຣະຜູ້ເປັນເຈົ້າທັງຫຼາຍ ແມ່ນເທື່ອທີ ໒ ຜູ້ມີຊື່ນີ້ຈຶ່ງຂໍອຸປະສົມບົດຕໍ່ສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂໍສົງໂຜດອະນຸເຄາະຍົກທ່ານຂຶ້ນເທີ້ນ

ພຣະຜູ້ເປັນເຈົ້າທັງຫຼາຍ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ພຣະຜູ້ເປັນເຈົ້າທັງຫຼາຍ ແມ່ນເທື່ອທີ ໓ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ພຣະຜູ້ເປັນເຈົ້າທັງຫຼາຍ ຂໍສົງໂຜດອະນຸເຄາະຍົກທ່ານຂຶ້ນເທີ້ນ

## ກຳມະວາຈາໃຫ້ອຸປະສົມບົດດ້ວຍທູດ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ຖ້າສົງພ້ອມແລ້ວເພິ່ງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ຜູ້ມີຊື່ນີ້ຈຶ່ງຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງໃດເຫັນດ້ວຍກັບການອຸປະສົມບົດຂອງຜູ້ມີຊື່ນີ້ມີ ແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກໍກ່າວຄວາມນີ້ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂາຂອງແມ່ເຈົ້າຊື່ນີ້ ອຸປະສົມບົດແລ້ວໃນສົງຝ່າຍດຽວ ບໍລິສຸດໃນພິກຂຸນີສົງ ທ່ານມາບໍ່ໄດ້ຍ້ອນມີອັນຕະລາຍບາງຢ່າງ ຜູ້ມີຊື່ນີ້ຈຶ່ງຂໍອຸປະສົມບົດຕໍ່ສົງມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງໃດ ເຫັນດ້ວຍກັບການອຸປະສົມບົດຂອງຜູ້ມີຊື່ນີ້ມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຜູ້ມີຊື່ນີ້ ສົງໃຫ້ອຸປະສົມບົດແລ້ວມີແມ່ເຈົ້າຊື່ນີ້ເປັນປະວັດຕິນີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ຂະນະນັ້ນແລເພິ່ງແທກເງົາແດດ ບອກປະມານລະດູ ສ່ວນແຫ່ງມື້ ບອກສັງຄີຕິ ສັ່ງພິກຂຸນີທັງຫຼາຍວ່າ “ພວກທ່ານເພິ່ງບອກນິໄສ ໓ ແລະອະກະຣະນີຍະກິດ ໘ ແກ່ພິກຂຸນີນັ້ນ”

## ເລື້ອງພິກຂຸນີຢູ່ປ່າ

[໔໓໑] ສະໄໝນັ້ນ ພິກຂຸນີທັງຫຼາຍຢູ່ໃນປ່າ ຖືກພວກນັກເລງເຮັດບໍ່ດີບໍ່ຮ້າຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງຢູ່ໃນປ່າ ອົງໃດຢູ່ ຕ້ອງອາບັດທຸກກົດ”

ສະໄໝນັ້ນ ອຸປາສົກຄົນໜຶ່ງຖວາຍໂຮງມ້ຽນເຄື່ອງແກ່ພິກຂຸນີສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดโฮงมุ้งนเคื่อง"

โฮงมุ้งนเคื่องบ่พຽงพໍ พิกขุทั้งหลายจึ่งนำเลื้องนี้ไปขาบทูนพระผู้มีพระภาคเจ้าให้ຊົງรับรู้

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดบ่อนยู่"

บ่อนยู่บ่พຽงพໍ พิกขุทั้งหลายจึ่ง นำเลื้องนี้ไปขาบทูนพระผู้มีพระภาคเจ้าให้ຊົງรับรู้

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดนะวะกำ"

นะวะกำบ่พຽงพໍ พิกขุทั้งหลายจึ่งนำเลื้องนี้ไปขาบทูนพระผู้มีพระภาคเจ้าให้ຊົງรับรู้

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดให้เຮັດเป็นของส่วนโตได้"

## เลื้องแต่งตั้งพิกขุนีให้เป็นเพื่อนพิกขุนีลูกอ่อน

[๔๑๘] สะไໝนั้น สะตีຄົນໜຶ່ງຖືພາแล้วบวดในสำนักพิกขุนี เมื่อนางบวดแล้วจึ่งเກີດລູກ ลำดับนั้น พิกขุนีนั้นได้มีຄວາມຄິດດັ່ງນີ້ว่า "เฮาจะປະຕິບັດต่อเด็กนี้ แนวใดดี"

พิกขุทั้งหลายจึ่งนำเลื้องนี้ไปขาบทูนพระผู้มีพระภาคเจ้าให้ຊົງรับรู้

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดให้ລ້ຽງດູຈົນກວ່າเด็กจะรู้ດຽງສາ"[๑]

ต่อมา พิกขุนีนั้นได้มีຄວາມຄິດດັ່ງນີ້ว่า "เฮาจะยู่พຽງລຳພັງບໍ່ໄດ້ พิกขุนีອື່ນ จะยู่กับเด็กนี้ກໍບໍ່ໄດ້ เฮาจะປະຕິບັດแนวใด"

พิกขุทั้งหลายจึ่งนำเลื้องนี้ไปขาบทูนพระผู้มีพระภาคเจ้าให้ຊົງรับรู้

พระผู้มีพระภาคเจ้ารับสั่งว่า "พิกขุทั้งหลาย เฮาอะนุยาดให้แต่งตั้งพิกขุนีອົງໜຶ່ງ แล้วมอบให้เป็นเพื่อนของพิกขุนีนั้น"

## ວິທີแต่งตั้งและกำมะວາຈາ

พิกขุทั้งหลาย พิกขุนีສົງเพิ่งแต่งตั้งแนวนี้ คື ในเບື້ອງຕົ້ນ ຕ້ອງຂໍຮ້ອງพิกขุนี จากนั้นพิกขุนีผู้สะຫຼາດສາມາດเพิ่งປະກາດให้ສົງຮູ້ດ້ວຍຍັດຕິທຸຕິຍະกำมะວາຈາว่า

แม่เจ้า ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຊື່ນີ້ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຊື່ນີ້ ແມ່ເຈົ້າອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຊື່ນີ້

ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງທັກທ້ວງ

ພິກຂຸນີຊື່ນີ້ສົງແຕ່ງຕັ້ງໃຫ້ເປັນເພື່ອນຂອງພິກຂຸນີຜູ້ມີຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ຕໍ່ມາ ພິກຂຸນີເພື່ອນຂອງນາງໄດ້ມີຄວາມຄິດກັນດັ່ງນີ້ວ່າ “ເຮົາຈະປະຕິບັດຕໍ່ເດັກນີ້ແນວໃດດີ”

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະຕິບັດຕໍ່ເດັກນັ້ນຄືປະຕິບັດຕໍ່ບຸຣຸດອື່ນ ໂດຍເວັ້ນການນອນຮ່ວມເຮືອນ”

[໔໓໓] ສະໄໝນັ້ນ ພິກຂຸນີອົງໜຶ່ງຕ້ອງອາບັດໜັກ ກຳລັງປະພຶດມານັດ ລຳດັບນັ້ນ ພິກຂຸນີນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ “ເຮົາຈະຢູ່ພຽງລຳພັງບໍ່ໄດ້ ພິກຂຸນີອື່ນຈະຢູ່ກັບ ເຮົາກໍບໍ່ໄດ້ ເຮົາຈະເພິ່ງປະຕິບັດແນວໃດ”

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸນີອົງໜຶ່ງ ແລ້ວມອບໃຫ້ເປັນເພື່ອນຂອງພິກຂຸນີນັ້ນ”

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງແຕ່ງຕັ້ງແນວນີ້ ໃນເບື້ອງຕົ້ນ ຕ້ອງຂໍຮ້ອງພິກຂຸນີ ຈາກນັ້ນພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວເພິ່ງແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຜູ້ມີຊື່ນີ້ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຜູ້ມີຊື່ນີ້ ແມ່ເຈົ້າອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸນີຊື່ນີ້ໃຫ້ເປັນເພື່ອນຂອງພິກຂຸນີຊື່ນີ້ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງທັກທ້ວງ

ພິກຂຸນີຊື່ນີ້ ສົງແຕ່ງຕັ້ງໃຫ້ເປັນເພື່ອນຂອງພິກຂຸນີຜູ້ມີຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພິກຂຸນີບໍ່ບອກຄືນສິກຂາ

[໔໓໔] ສະໄໝນັ້ນ ພິກຂຸນີອົງໜຶ່ງບໍ່ບອກຄືນສິກຂາ ສິກອອກໄປແລ້ວ ນາງກັບມາ ຂໍອຸປະສົມບົດກັບພິກຂຸນີທັງຫຼາຍອີກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸນີບໍ່ຈຳເປັນຕ້ອງບອກຄືນສິກຂາ ພໍສິກກໍບໍ່ເປັນພິກຂຸນີແລ້ວ”

## ເລື້ອງພິກຂຸນີເຂົ້າຮີດເດຍຣະຖີ

ສະໄໝນັ້ນ ພິກຂຸນີອົງໜຶ່ງຄອງຜ້າກາສາຍະໄປເຂົ້າຮີດເດຍຣະຖີ ນາງກັບມາຂໍອຸປະສົມບົດກັບພິກຂຸນີທັງຫຼາຍອີກ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸນີອົງໃດຄອງຜ້າກາສາຍະໄປເຂົ້າຮີດເດຍຣະຖີ ພິກຂຸນີອົງນັ້ນມາແລ້ວ ບໍ່ເພິ່ງໃຫ້ອຸປະສົມບົດ”

ສະໄໝນັ້ນ ພິກຂຸນີທັງຫຼາຍຢຳເກງຢູ່ ຈຶ່ງບໍ່ຍິນດີການຂາບ ການແຖຜົມ ການຕັດເລັບ ການຮັກສາບາດຈາກພວກບຸຣຸດ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍິນດີໄດ້”

## ເລື້ອງພິກຂຸນີນັ່ງຂັດສະມາທິຍິນດີການສຳຜັດສົ້ນຕີນ

[໔໓໕] ສະໄໝນັ້ນ ພິກຂຸນີທັງຫຼາຍນັ່ງຂັດສະມາທິ ຍິນດີສຳຜັດສົ້ນຕີນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງນັ່ງຂັດສະມາທິ ອົງໃດນັ່ງ ຕ້ອງອາບັດທຸກກົດ”

ສະໄໝນັ້ນ ພິກຂຸນີອົງໜຶ່ງເປັນໄຂ້ ບໍ່ນັ່ງຂັດສະມາທິຈະບໍ່ສະບາຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີນັ່ງເຄິ່ງຂັດສະມາທິ

## ເລື້ອງພິກຂຸນີຖ່າຍອຸດຈາຣະ

ສະໄໝນັ້ນ ພິກຂຸນີທັງຫຼາຍຖ່າຍອຸດຈາຣະໃນວັດຈະກຸດຕິ ພວກພິກຂຸນີສັບພັກຄີໃຫ້ລຸລູກ ຕົກ ໄປໃນວັດຈະກຸດຕິນັ້ນ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ "ພິກຂຸນີບໍ່ເພິ່ງຖ່າຍອຸດຈາຣະໃນວັດຈະ ກຸດຕິ ອົງໃດຖ່າຍ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖ່າຍອຸດຈາຣະໃນບ່ອນ ເປີດຂ້າງລຸ່ມອັດຂ້າງເທິງ"

## ເລື້ອງພິກຂຸນີໃຊ້ແປ້ງຜົງອາບນໍ້າ

[໔៣໙] ສະໄໝນັ້ນ ພິກຂຸນີທັງຫຼາຍໃຊ້ແປ້ງຜົງອາບນໍ້າ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ແປ້ງຜົງອາບນໍ້າ ອົງ ໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຮຳເຂົ້າແລະດິນໜຽວ"

ສະໄໝນັ້ນ ພິກຂຸນີທັງຫຼາຍໃຊ້ດິນໜຽວອົບກິ່ນອາບນໍ້າ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຯລຯ ຄືຍິງຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງໃຊ້ດິນໜຽວທີ່ອົບກິ່ນອາບ ນໍ້າ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດດິນໜຽວທຳມະດາ"

ສະໄໝນັ້ນ ພິກຂຸນີທັງຫຼາຍອາບນໍ້າໃນເຮືອນໄຟ ເກີດຊຸນລະມຸນ ພິກຂຸທັງຫຼາຍຈຶ່ງນຳ ເລື້ອງ ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງອາບນໍ້າໃນເຮືອນໄຟ ອົງ ໃດອາບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍອາບນໍ້າທວນກະແສ ຍິນດີສຳຜັດແຫ່ງສາຍນໍ້າ ພິກຂຸ ທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງອາບນ້ຳທວນກະແສ ອົງໃດອາບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍອາບນ້ຳໃນບ່ອນບໍ່ແມ່ນທ່ານ້ຳ ຖືກພວກນັກເລງເຮັດບໍ່ດີບໍ່ຮ້າຍ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງອາບນ້ຳໃນບ່ອນບໍ່ແມ່ນທ່ານ້ຳ ອົງໃດອາບ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸນີທັງຫຼາຍອາບນ້ຳທີ່ທ່າອາບນ້ຳຂອງຜູ້ຊາຍ ຄົນທັງຫຼາຍຕຳໜິ ປະນາມໂພນທະນາວ່າ "ຯລຯ ເຮັດຄືຍິງຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸນີບໍ່ເພິ່ງອາບນ້ຳທີ່ທ່າອາບນ້ຳຂອງ ຜູ້ຊາຍ ອົງໃດອາບ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອາບນ້ຳທີ່ທ່າອາບນ້ຳສະຕີ"

**ຕະຕິຍະພານະວານ ຈົບ**

**ພິກຂຸນີຂັນທະກະທີ ໑໐ ຈົບ**

## ໃນຂັນທະກະນີ້ມີ ໑໐໑ ເລື້ອງ
## ລວມເລື້ອງທີ່ມີໃນພິກຂຸນີຂັນທະກະ

ພຣະນາງມະຫາປະຊາບໍດີໂຄຕະມີທູນຂໍບັນພະຊາ
ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດ
ຊົງໂຜດເວໄນຍະແລ້ວສະເດັດຈາກເມືອງກະບິນລະພັດໄປນະຄອນເວສາລີ

ພຣະນາງມະຫາປະຊາບໍດີໂຄຕະມີອອກເດີນທາງໄປນະຄອນເວສາລີ
ມີພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ຊີ້ແຈ່ງຄວາມປະສົງ
ຕໍ່ທ່ານພຣະອານົນທີ່ຊຸ້ມປະຕູ (ກູຕາຄາຣະສາລາ ປ່າມະຫາວັນ)

ພຣະອານົນຂາບທູນແຈ້ງຕໍ່ພຣະຜູ້ມີພຣະພາກເຈົ້າວ່າ
ມາຕຸຄາມເປັນພັບພະບຸກຄົນ ພຣະນາງມະຫາປະຊາບໍດີໂຄຕະມີ
ເປັນພຣະມາຕຸດສາ ເປັນຜູ້ລ້ຽງດູ

ພຣະຜູ້ມີພຣະພາກເຈົ້າຊົງກຳນົດຄະຣຸທຳ ໘ ຢ່າງ
ທີ່ພິກຂຸນີເພິ່ງປະພຶດຕະຫຼອດຊີວິດ ຄື

໑. ພິກຂຸນີບວດໄດ້ ໑໐໐ ພັນສາ ຕ້ອງຂາບໄຫວ້ພິກຂຸແມ່ນທີ່ບວດໃນມື້ນັ້ນ
໒. ບໍ່ເພິ່ງຈຳພັນສາໃນອາວາດທີ່ບໍ່ມີພິກຂຸ
໓. ຫວັງທຳ ໒ ຢ່າງ
໔. ປະວາຣະນາໃນສົງ ໒ ຝ່າຍ
໕. ຕ້ອງຄະຣຸທຳເພິ່ງປະພຶດປັກຂະມານັດໃນສົງ ໒ ຝ່າຍ
໖. ເພິ່ງສະແຫວງຫາອຸປະສົມບົດເພື່ອສິກຂະມານາຜູ້ໄດ້ສຶກສາຄົບ ໒ ປີ
໗. ບໍ່ດ່າພິກຂຸ
໘. ເປີດໂອກາດໃຫ້ພິກຂຸວ່າກ່າວຕັກເຕືອນ

ການຮັບຄະຣຸທຳ ໘ ຢ່າງນັ້ນເປັນການອຸປະສຳປະທາຂອງ
ພຣະນາງມະຫາປະຊາບໍດີໂຄຕະມີ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ຖ້າມາຕຸຄາມບໍ່ອອກບວດ
ສັດທຳຈະຕັ້ງຢູ່ໄດ້ ໑,໐໐໐ ປີ ແຕ່ຍ້ອນມາຕຸຄາມອອກບວດ
ສັດທຳຈະຕັ້ງຢູ່ໄດ້ພຽງ ໕໐໐ ປີ
ຄວາມເສື່ອມແຫ່ງພຣະສັດທຳ
ປຽບຄືໂຈນລັກຊັບ ບົ້ງ ເພ້ຍ
ການກຳນົດໃຫ້ມາຕຸຄາມຜູ້ຈະອອກບວດຕ້ອງຮັບຄະຣຸທຳ ໘ ຢ່າງ
ປຽບຄືການກັ້ນທຳນົບທີ່ຂອບສະໃຫຍ່
ເພື່ອປ້ອງກັນບໍ່ໃຫ້ນ້ຳໄຫຼອອກໄປ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ອຸປະສົມບົດພິກຂຸນີ
ຕໍ່ມາ ພິກຂຸນີສາກິຍານີທັງຫຼາຍກ່າວວ່າ
ພຣະນາງມະຫາປະຊາບໍດີໂຄຕະມີຍັງບໍ່ໄດ້ອຸປະສົມບົດ
ຍ້ອນຮັບແຕ່ຄະຣຸທຳ ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນ
ຂໍໃຫ້ພິກຂຸແລະພິກຂຸນີອະພິວາດກັນຕາມລຳດັບພັນສາ

ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ພິກຂຸເຮັດອະພິວາດມາຕຸຄາມ
ຕັດວິທີປະຕິບັດໃນສິກຂາບົດທີເປັນສາທາລະນະບັນຍັດ
ແລະບໍ່ເປັນສາທາລະນະບັນຍັດ
ຊົງສະແດງຫຼັກຕັດສິນພຣະທຳວິໄນ ຕັດເລື້ອງປາຕິໂມກ
ແລະບຸກຄົນທີ່ຄວນຍົກປາຕິໂມກຂຶ້ນສະແດງແກ່ພິກຂຸນີ

ຕໍ່ມາ ພິກຂຸທັງຫຼາຍເຂົ້າໄປທີ່ສຳນັກພິກຂຸນີ
ຍົກປາຕິໂມກຂຶ້ນສະແດງ ພຣະຜູ້ມີພຣະພາກເຈົ້າຊົງຫ້າມ
ຕໍ່ມາພິກຂຸນີທັງຫຼາຍບໍ່ຮູ້ວິທີເຮັດຄືນອາບັດ
ຊົງອະນຸຍາດໃຫ້ພິກຂຸອະທິບາຍໃຫ້ພິກຂຸນີຮູ້ໄດ້
ຕໍ່ມາ ພິກຂຸນີບໍ່ເຮັດ ຊົງອະນຸຍາດໃຫ້ພິກຂຸທັງຫຼາຍ
ບອກພິກຂຸນີກ່ຽວກັບວິທີເຮັດຄືນອາບັດ ວິທີຮັບອາບັດ
ຊົງອະນຸຍາດໃຫ້ພິກຂຸເຮັດກຳແກ່ພິກຂຸນີ
ຄົນທັງຫຼາຍຕຳໜິ ຊົງອະນຸຍາດໃຫ້ພິກຂຸນີເຮັດແກ່ພິກຂຸນີນຳກັນ

ຕໍ່ມາ ພິກຂຸນີທັງຫຼາຍຜິດຖຽງວິວາດກັນ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸມອບການລົງໂທດ
ຂອງພິກຂຸນີໃຫ້ແກ່ພິກຂຸນີ ພິກຂຸນີອັນເຕວາສີນີຂອງ
ພິກຂຸນີອຸບົນວັນນາຮຽນວິໄນຈົນສະຕິຟັ່ນເຟືອນ

ພວກພິກຂຸສັບພັກຄີໃຊ້ນ້ຳຕົມທົດພິກຂຸນີທັງຫຼາຍ
ພວກພິກຂຸນີສັບພັກຄີໃຊ້ນ້ຳຕົມທົດພິກຂຸທັງຫຼາຍໃນນະຄອນສາວັດຖີ
ດ້ວຍຫວັງຈະໃຫ້ຝ່າຍກົງກັນຂ້າມຮັກ
ພຣະຜູ້ມີພຣະພາກເຈົ້າຊົງໃຫ້ພິກຂຸນີປະກາດວ່າພິກຂຸນັ້ນບໍ່ຄວນໄຫວ້

ຕໍ່ມາ ພວກພິກຂຸສັບພັກຄີເປີດກາຍ ເປີດຂາອ່ອນ
ເປີດອົງຄະຊາດອວດພິກຂຸນີ ເວົ້າກ່ຽວພິກຂຸນີ
ເວົ້າຊັກຊວນບຸຣຸດມາຄົບຫາພິກຂຸນີ ພິກຂຸນັ້ນພິກຂຸນີບໍ່ຄວນໄຫວ້
ພວກພິກຂຸນີສັບພັກຄີກໍເຮັດເຊັ່ນດຽວກັນ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ລົງທັນທະກຳ
ໂດຍການຫ້າມພິກຂຸແລະພິກຂຸນີຜູ້ເຮັດເຊັ່ນນັ້ນ
ເມື່ອຫ້າມບໍ່ເຊື່ອ ເພິ່ງງົດໂອວາດ ບໍ່ຄວນເຮັດອຸໂປສົດກັບພິກຂຸ
ພິກຂຸນີຜູ້ຖືກງົດໂອວາດ

ຕໍ່ມາ ພຣະອຸທາຍີງົດໂອວາດແລ້ວຫຼີກໄປ
ພຣະຜູ້ມີພຣະພາກເຈົ້າຊົງຫ້າມເຮັດເຊັ່ນນັ້ນ
ຊົງຫ້າມພິກຂຸໂງ່ຈ້າງົດໂອວາດ
ຊົງຫ້າມງົດໂອວາດດ້ວຍເລື້ອງທີ່ບໍ່ສົມຄວນ
ຊົງຫ້າມງົດໂອວາດໂດຍບໍ່ໃຫ້ຄຳວິນິດໄສ

ຊົງກຳນົດໃຫ້ພິກຂຸນີສົງຕ້ອງໄປຮັບໂອວາດ
ຊົງຫ້າມພິກຂຸນີ ๕ ອົງໄປຮັບໂອວາດ
ຊົງອະນຸຍາດໃຫ້ພິກຂຸນີ ๔-๓ ອົງໄປຮັບໂອວາດ

ຕໍ່ມາ ພິກຂຸອົງໜຶ່ງບໍ່ຮັບໃຫ້ໂອວາດ
ພຣະຜູ້ມີພຣະພາກເຈົ້າຊົງກຳນົດໃຫ້ພິກຂຸຕ້ອງຮັບໃຫ້ໂອວາດ
ຊົງກຳນົດຂໍ້ຍົກເວັ້ນໄວ້ວ່າ ພິກຂຸໂງ່ຈ້າ
ພິກຂຸອາພາດ ພິກຂຸຜູ້ກຽມຈະເດີນທາງ
ບໍ່ຕ້ອງຮັບໃຫ້ໂອວາດ ແຕ່ພິກຂຸຜູ້ຢູ່ປ່າຕ້ອງຮັບໃຫ້ໂອວາດ
ຊົງກຳນົດວ່າ ພິກຂຸທັງຫຼາຍໃຫ້ໂອວາດແລ້ວຕ້ອງບອກ
ຮັບໃຫ້ໂອວາດແລ້ວຕ້ອງກັບມາບອກ

ຕໍ່ມາ ພິກຂຸນີໃຊ້ສາຍແອວຜືນຍາວຮັດສີຂ້າງ
ໃຊ້ແຜ່ນໄມ້ສານແຜ່ນໜັງ ຜ້າຂາວ ຊ້ອງຜ້າ ກຽວຜ້າ
ຜ້າຜືນນ້ອຍ ຊ້ອງຜ້າຜືນນ້ອຍ ກຽວຜ້າຜືນນ້ອຍ ຊ້ອງຖັກດ້ວຍດ້າຍ
ກຽວດ້າຍຮັດສີຂ້າງ ໃຊ້ກະດູກແຂ່ງງົວຂັດສີຕະໂພກ
ໃຊ້ໄມ້ມີສັນຖານຄືຄາງງົວນວດຕະໂພກ ນວດມື
ນວດຫຼັງມືນວດຕີນ ນວດຫຼັງຕີນ ນວດຂາອ່ອນ
ນວດໜ້າ ນວດຮີມຝີປາກ

ຕໍ່ມາ ພວກພິກຂຸນີສັບພັກຄີທາໜ້າ ຖູໜ້າ
ຜັດໜ້າ ໃຊ້ມະໂນສິລາເຈີມໜ້າ ຍ້ອມໂຕ ຍ້ອມໜ້າ
ຍ້ອມທັງໂຕທັງໜ້າ ທັງສອງຢ່າງ ແຕ້ມໜ້າ ທາແກ້ມ
ຫຼິ້ນຫູຫຼິ້ນຕາ ຢືນຈອບທີ່ປະຕູ ໃຫ້ຜູ້ອື່ນຟ້ອນລຳ
ຕັ້ງສຳນັກຍິງແພດສະຫຍາ ຕັ້ງຮ້ານຂາຍສຸຣາ ຂາຍຊີ້ນ
ອອກຮ້ານຂາຍຂອງຕ່າງ ໆ ປະກອບການຄ້າກຳໄລ
ປະກອບການຄ້າຂາຍ ໃຊ້ຂ້າທາດທາສີ
ກຳມະກອນຊາຍຍິງໃຫ້ປີນນິບັດ
ໃຫ້ສັດເດຍຣັດສານປີນນິບັດ ຂາຍຂອງສົດແລະຂອງສຸກ
ໃຊ້ສັນຖັດຂົນຈຽມຫຼົ່

ຕໍ່ມາ ພິກຂຸນີສັບພັກຄີຫົ່ມຈີວອນສີຂຽວ
ສີເຫຼືອງ ສີແດງ ສີບານເຢັນ ສີດຳ ສີແສດ

ສີຊົມພູ ຈີວອນບໍ່ຕັດຊາຍ ມີຊາຍຍາວ
ມີຊາຍເປັນລາຍດອກໄມ້ ມີຊາຍເປັນແຜ່ນ ໃສ່ເສື້ອ ໃສ່ໝວກ

ຕໍ່ມາ ເມື່ອພິກຂຸນີ ສິກຂະມານາ ສາມະເນຣີເຖິງແກ່ມໍຣະນະພາບ
ພິກຂຸນີສົງເປັນໃຫຍ່ໃນບໍຣິຂານທີ່ພິກຂຸນີເປັນຕົ້ນນັ້ນມອບໃຫ້
ເມື່ອພິກຂຸ ສາມະເນນ ອຸປາສົກ ອຸປາສິກາ
ແລະໃຜອື່ນປົງບໍຣິຂານໃຫ້ ພິກຂຸສົງເປັນໃຫຍ່

ພິກຂຸນີອະດີດພັນລະຍານັກມວຍໃຊ້ໄຫຼ່ກະແທກພິກຂຸທຸບພົນລະພາບອົງໜຶ່ງ
ພິກຂຸນີອົງໜຶ່ງໃຊ້ບາດໃສ່ເດັກອ່ອນຂອງຍິງຄົນໜຶ່ງທີ່ລຸອອກມາ

ພຣະຜູ້ມີພຣະພາກເຈົ້າຊົງກໍານົດໃຫ້ພິກຂຸນີເມື່ອພົບພິກຂຸ
ຕ້ອງສະແດງບາດໃຫ້ເບິ່ງ ພິກຂຸນີອົງໜຶ່ງສະແດງກົ້ນບາດ
ພິກຂຸນີທັງຫຼາຍເພ່ງເບິ່ງອົງຄະຊາດຂອງບຸຣຸດທີ່ເຂົາຖິ້ມໄວ້ກາງຖະໜົນ
ພິກຂຸທັງຫຼາຍໃຫ້ອາມິດຫຼວງຫຼາຍແກ່ພິກຂຸນີ
ພິກຂຸນີທັງຫຼາຍມີອາມິດເຫຼືອເຟືອ
ຊົງອະນຸຍາດໃຫ້ຖວາຍເປັນຂອງສ່ວນບຸກຄົນ
ຊົງອະນຸຍາດໃຫ້ພິກຂຸນີຮັບອາມິດທີ່ພິກຂຸມ້ຽນໄວ້ມາບໍຣິໂພກໄດ້
ແລະຊົງອະນຸຍາດໃຫ້ພິກຂຸຮັບອາມິດທີ່ພິກຂຸນີທັງຫຼາຍ
ມ້ຽນໄວ້ມາບໍຣິໂພກໄດ້ເຊັ່ນກັນ

ພິກຂຸນີອົງໜຶ່ງມີຣະດູ ນັ່ງແດ່ ນອນແດ່ ເຮັດໃຫ້ເສນາສະນະ
ເປື້ອນໂລຫິດ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າຜັດປ່ຽນ
ຊົງອະນຸຍາດຜ້າຊັບໃນ ຊົງອະນຸຍາດໃຫ້ໃຊ້ເຊືອກຝັ້ນມັດແອວ
ໃນເວລາທີ່ມີຣະດູ ບໍ່ຄວນມັດໄວ້ຕະຫຼອດເວລາ

ພິກຂຸນີລາງພວກເມື່ອອຸປະສົມບົດແລ້ວ ຜາກົດວ່າບໍ່ມີເຄື່ອງໝາຍ
ເພດແດ່ ພຽງແຕ່ວ່າມີເຄື່ອງໝາຍເພດແດ່ ບໍ່ມີປະຈໍາເດືອນແດ່
ມີປະຈໍາເດືອນບໍ່ຢຸດແດ່ ໃຊ້ຜ້າຊັບສະເໝີແດ່ ເປັນຄົນໄຫຼຊືມແດ່
ມີເດືອຍແດ່ ເປັນບັນເດາະຍິງແດ່ ມີລັກສະນະຄ້າຍຊາຍແດ່
ມີທະວານໜັກທະວານເບົາຕິດກັນແດ່ ມີ ໔ ເພດແດ່

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ສອບຖາມອັນຕະຣາຍິກະທໍາວ່າ
ທ່ານບໍ່ມີເຄື່ອງໝາຍເພດບໍຈົນເຖິງຄໍາວ່າ

ທ່ານເປັນຄົນ ໔ ເພດບໍ
ແລ້ວຖາມວ່າເປັນຂີ້ເຮື້ອນ ເປັນຝີ ເປັນກາກ ເປັນໂຣກມອງຄໍ່
ໂຣກລົມບ້າໝູ ເປັນມະນຸດບໍ ເປັນຍິງບໍ ເປັນອິດສະຫຼະບໍ
ບໍ່ມີໜີ້ສິນບໍ ບໍ່ເປັນຣາຊະພັດບໍ ບິດາມານດາຫຼື
ສາມີອະນຸຍາດແລ້ວບໍ ມີອາຍຸຄົບ ໒໐ ປີບໍລິບູນແລ້ວບໍ
ມີບາດຈີວອນຄົບແລ້ວບໍ ຊື່ແນວໃດ
ປະວັດຕິນີຂອງທ່ານຊື່ແນວໃດ ລວມ ໒໔ ຢ່າງ ແລ້ວໃຫ້ອຸປະສົມບົດ

ຕໍ່ມາ ອຸປະສຳປະທາເປກຂາຍັງບໍ່ໄດ້ສອນຊ້ອມ
ເກີດຄວາມລະອາຍທ່າມກາງສົງ ຊົງອະນຸຍາດໃຫ້ພິກຂຸນີ
ສອນຊ້ອມສະຕິອຸປະສຳປະທາເປກຂາກ່ອນ
ຊົງອະນຸຍາດໃຫ້ຖືອຸປັດຊາໃນເບື້ອງຕົ້ນ
ຕໍ່ຈາກນັ້ນຈຶ່ງບອກສັງຄາຕິ ອຸດຕະຣາສົງ
ອັນຕະຣາວາສະກະ ຜ້າຮັດຖັນ ຜ້າອາບນ້ຳແລ້ວ
ບອກໃຫ້ຢືນຢູ່ແຈໜຶ່ງທີ່ຫ່າງອອກໄປ

ຕໍ່ມາ ພິກຂຸນີໂງ່ຈ້າອົງໜຶ່ງເຮັດໜ້າທີ່ສອນຊ້ອມ
ພຣະຜູ້ມີພຣະພາກເຈົ້າຊົງກຳນົດວ່າພິກຂຸນີບໍ່ໄດ້ຮັບແຕ່ງຕັ້ງ
ບໍ່ຄວນສອນຊ້ອມຖາມອັນຕະຣາຍິກະທຳ

ພິກຂຸນີອຸປະສົມບົດໃນພິກຂຸສົງຝ່າຍດຽວ
ຕ້ອງອຸປະສົມບົດໃນພິກຂຸສົງອື່ນອີກ
ຫຼັງຈາກທີ່ອຸປະສົມບົດໃນຝ່າຍພິກຂຸສົງແລ້ວ
ເພິ່ງແທກເງົາແດດ ບອກປະມານລະດູ ບອກສ່ວນແຫ່ງມື້
ບອກສັງຄີຕິ(ປະຊຸມສົງ) ບອກນິໄສ ໓ ອະກະຣະນີຍະກິດ ໗

ຕໍ່ມາ ພິກຂຸນີຍົກຍ້າຍບ່ອນນັ່ງຈົນລ່ວງເວລາ
ພຣະຜູ້ມີພຣະພາກເຈົ້າຊົງໃຫ້ນັ່ງຕາມລຳດັບພັນສາ
ສຳລັບພິກຂຸນີ ໗ ອົງ ທີ່ເຫຼືອ
ອະນຸຍາດຕາມລຳດັບທີ່ມາໃນທີ່ທຸກແຫ່ງ

ຕໍ່ມາ ພິກຂຸນີບໍ່ປະວາຣະນາກັນ
ຊົງກຳນົດໃຫ້ພິກຂຸນີປະວາຣະນາ
ເມື່ອປະວາຣະນາກໍບໍ່ປະວາຣະນາກັບພິກຂຸສົງ

ຊົງກຳນົດໃຫ້ປະວາຣະນາໃນພິກຂຸສົງດ້ວຍ
ເກີດຄວາມຊຸນລະມຸນໃນຂະນະປະວາຣະນາພ້ອມກັບພິກຂຸ
ບໍ່ຊົງອະນຸຍາດໃຫ້ພິກຂຸນີປະວາຣະນາພ້ອມກັບພິກຂຸ
ບໍ່ຊົງອະນຸຍາດໃຫ້ພິກຂຸນີປະວາຣະນາກັນໃນເວລາກ່ອນພັດຕາຫານ

ຕໍ່ມາ ພິກຂຸນີທັງຫຼາຍປະວາຣະນາໃນເວລາວິການ
ຊົງອະນຸຍາດໃຫ້ປະວາຣະນາກັນເອງມື້ໜຶ່ງ
ມື້ຮຸ່ງຂຶ້ນຈຶ່ງປະວາຣະນາໃນພິກຂຸສົງ
ເມື່ອພິກຂຸນີປະວາຣະນາເກີດຊຸນລະມຸນ ຊົງອະນຸຍາດໃຫ້ແຕ່ງຕັ້ງພິກຂຸນີ
ອົງໜຶ່ງເປັນໂຕແທນປະວາຣະນາໃນພິກຂຸສົງ

ພຣະຜູ້ມີພຣະພາກເຈົ້າຊົງຫ້າມບໍ່ໃຫ້ພິກຂຸນີງົດອຸໂປສົດ
ປະວາຣະນາ ສອບຖາມ ເລີ່ມອະນຸວາທາທິກອນ ຂໍໂອກາດ
ໂຈດແລະໃຫ້ການ ແຕ່ຊົງອະນຸຍາດໃຫ້ພິກຂຸເຮັດແນວນັ້ນແກ່ພິກຂຸນີໄດ້

ຊົງຫ້າມພິກຂຸນີໂດຍສານຍານພາຫະນະ
ຍົກເວັ້ນພິກຂຸນີຜູ້ເປັນໄຂ້ ຊົງອະນຸຍາດຍານພາຫະນະທີ່ທຽມດ້ວຍງົວເພດແມ່
ຍານພາຫະນະທີ່ທຽມດ້ວຍງົວເພດຜູ້
ຍານພາຫະນະທີ່ໃຊ້ມືລາກໄປພິກຂຸນີອົງໜຶ່ງບໍ່ສະບາຍຢ່າງໜັກ
ຍ້ອນຍານພາຫະນະກະເທືອນ ຊົງອະນຸຍາດວໍແລະເປຫາມ

ຍິງແພດສະຫຍາຊື່ອັດທະກາສີບວດໃນສຳນັກພິກຂຸນີ ຕ້ອງການຈະໄປ
ນະຄອນສາວັດຖີເພື່ອອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າ
ແຕ່ມີໂຈນຈອບຊຸ່ມຢູ່ໃນຫົນທາງ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດການອຸປະສົມບົດດ້ວຍທູດ
ໂດຍມີພິກຂຸນີເປັນທູດ ຊົງຫ້າມອຸປະສົມບົດພິກຂຸນີໂດຍມີພິກຂຸ
ສິກຂະມານາ ສາມະເນນ ສາມະເນຣີ
ຫຼືພິກຂຸນີຜູ້ໂງ່ຈ້າເປັນທູດ

ຕໍ່ມາ ພິກຂຸນີອົງໜຶ່ງຢູ່ໃນປ່າ ຖືກໂຈນປະທຸດສະຮ້າຍ
ພຣະຜູ້ມີພຣະພາກເຈົ້າຊົງຫ້າມພິກຂຸນີຢູ່ປ່າ
ຊົງອະນຸຍາດໂຮງມ້ຽນເຄື່ອງ ບ່ອນຢູ່ ນະວະກຳ
ແລະເມື່ອນະວະກຳບໍ່ພຽງພໍກໍສາມາດເຮັດເປັນຂອງສ່ວນໂຕໄດ້

ຕໍ່ມາ ສະຕີຄົນໜຶ່ງຖືພາ ບວດໃນສຳນັກພິກຂຸນີ ເກີດລູກ ພຣະຜູ້ມີພຣະພາກເຈົ້າຊົງຫ້າມຢູ່ພຽງລຳພັງ ຊົງຫ້າມພິກຂຸນີນອນໃນທີ່ມຸງບັງດຽວກັນກັບເດັກ ຊົງອະນຸຍາດໃຫ້ແຕ່ງຕັ້ງພິກຂຸນີເປັນເພື່ອນຂອງພິກຂຸນີຜູ້ຕ້ອງອາບັດໜັກ ກຳລັງປະພຶດມານັດ

ຊົງວາງຂໍ້ກຳນົດວ່າ ພິກຂຸນີສິກອອກໄປ
ໂດຍບໍ່ບອກຄືນສິກຂາຖືວ່າໄດ້ສິກໄປແລ້ວ
ບໍ່ຊົງອະນຸຍາດໃຫ້ບວດພິກຂຸນີທັງຫຼາຍຜູ້ໄປເຂົ້າຮີດເດຍຣະຖີ

ພິກຂຸນີລາງພວກບໍ່ຍິນດີການຂາບ ການແຖຜົມ
ການຕັດເລັບ ການຮັກສາບາດຈາກພວກບຸຣຸດ
ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ຍິນດີໄດ້
ບໍ່ຊົງອະນຸຍາດໃຫ້ພິກຂຸນີນັ່ງຂັດສະມາທິ
ຊົງອະນຸຍາດໃຫ້ພິກຂຸນີເປັນໄຂ້ນັ່ງເຄິ່ງຂັດສະມາທິ
ບໍ່ຊົງອະນຸຍາດໃຫ້ພິກຂຸນີຖ່າຍອຸດຈາຣະໃນວັດຈະກຸດຕິ
ໃຊ້ແປ້ງຜົງອາບນໍ້າ ໃຊ້ດິນໜຽວອົບກິ່ນອາບນໍ້າໃນເຮືອນໄຟ
ອາບນໍ້າທວນກະແສ ອາບນໍ້າໃນບ່ອນບໍ່ແມ່ນທ່ານໍ້າ
ອາບນໍ້າທີ່ທ່າຂອງຜູ້ຊາຍ

ພຣະນາງມະຫາປະຊາບໍດີໂຄຕະມີແລະທ່ານພຣະອານົນຂາບທູນຂໍ
ຢ່າງລະມັດລະວັງ ພຸດທະບໍລິສັດ ໔ ບັນພະຊາໃນພຣະສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງສະແດງຂັນທະກະນີ້ໄວ້
ເພື່ອໃຫ້ເກີດຄວາມສັງເວດ ແລະຄວາມຈະເລີນແຫ່ງພຣະສັດທຳ
ຄືເພສັດສຳລັບລະງັບຄວາມກະວົນກະວາຍ
ສະຕີເຫຼົ່າອື່ນທີ່ໄດ້ເຝິກຝົນດີແລ້ວໃນພຣະສັດທຳແນວນີ້
ຍ່ອມໄປສູ່ສະຖານທີ່ອັນບໍ່ຈຸຕິເຊິ່ງໄປແລ້ວຈະບໍ່ເສົ້າໂສກ

**ພິກຂຸນີຂັນທະກະ ຈົບ**

# ໑໑. ປັນຈະສະຕິກະຂັນທະກະ

## ໑. ສັງຄີຕິນິທານ

### ວ່າດ້ວຍມູນເຫດການເຮັດສັງຄາຍະນາຄັ້ງທີ ໑

[໔໓໗] ຄັ້ງນັ້ນ ທ່ານພຣະມະຫາກັດສະປະຣຸງກພິກຂຸທັງຫຼາຍມາກ່າວວ່າ "ທ່ານທັງຫຼາຍ ເວລາໜຶ່ງຂ້ານ້ອຍພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງເດີນທາງໄກ ຈາກນະຄອນປາວາ ໄປນະຄອນກຸສິນາຣາ ຂະນະທີ່ຂ້ານ້ອຍແວ່ລົງຂ້າງທາງ ນັ່ງພັກທີ່ຂ່ວງໄມ້ແຫ່ງໜຶ່ງ

ສະໄໝນັ້ນ ອາຊີວົກຄົນໜຶ່ງຖືດອກມົນທາຣົບຈາກນະຄອນກຸສິນາຣາ ຍ່າງສວນທາງຈະ ໄປນະຄອນປາວາ ທ່ານທັງຫຼາຍ ຂ້ານ້ອຍໄດ້ເຫັນອາຊີວົກນັ້ນຍ່າງມາແຕ່ໄກ ບັດແລ້ວຈຶ່ງຖາມ ອາຊີວົກນັ້ນດັ່ງນີ້ວ່າ "ທ່ານຮູ້ຂ່າວພຣະສາດສະດາຂອງເຮົາແດ່ບໍ"

ອາຊີວົກຕອບວ່າ "ເຮົາຮູ້ ພຣະສະມະນະໂຄດົມປະຣິນິບພານໄດ້ ໗ ມື້ເຂົ້າມື້ນີ້ ເຮົາຖື ດອກມົນທາຣົບດອກນີ້ມາຈາກທີ່ປະຣິນິບພານນັ້ນ"

ທ່ານທັງຫຼາຍ ບັນດາພິກຂຸຜູ້ຍັງບໍ່ປາສະຈາກຣາຄະ ບາງອົງປະຄອງແຂນຮ່ຳໄຮ ລົ້ມລົງ ກິ້ງເກືອກໄປມາຄືຄົນຕີນຂາດເພີ້ຮ່ຳໄຮວ່າ "ພຣະຜູ້ມີພຣະພາກເຈົ້າປະຣິນິບພານໄວເກີນໄປ ພ ຣະສຸຄົດເຈົ້າປະຣິນິບພານໄວເກີນໄປ ດວງຕາໃນໂລກອັນຕະຣະທານໄປສາແລ້ວ" ສ່ວນພິກຂຸ ທັງຫຼາຍທີ່ປາສະຈາກຣາຄະ ມີສະຕິສຳປະຊັນຍະ ກໍອົດກັ້ນໄວ້ວ່າ "ສັງຂານທັງຫຼາຍ ບໍ່ທ່ຽງ ຈະ ຫາຄວາມທ່ຽງແທ້ໃນສັງຂານນີ້ແຕ່ບ່ອນໃດນໍ"[๑]

ທ່ານທັງຫຼາຍ ຄັ້ງນັ້ນແລ ຂ້ານ້ອຍໄດ້ກ່າວກັບພິກຂຸທັງຫຼາຍດັ່ງນີ້ວ່າ "ພໍເທີ້ນ ພວກທ່ານ ຢ່າໂສກເສົ້າ ຢ່າຮ່ຳໄຮໄປເລີຍ ພຣະຜູ້ມີພຣະພາກເຈົ້າຕັດບອກໄວ້ກ່ອນແລ້ວບໍ່ແມ່ນບໍວ່າ ຄວາມ ເປັນຕ່າງ ໆ ກັນ ຄວາມພັດພາກ ຄວາມຜັນແປເປັນອື່ນຈາກສິ່ງທີ່ຮັກແພງ ພໍໃຈທຸກຢ່າງມີຢູ່ ສະເໝີ ສິ່ງທີ່ເກີດແລ້ວ ເປັນແລ້ວ ຖືກປຸງແຕ່ງແລ້ວ ມີຄວາມແຕກສະຫຼາຍ ເປັນທຳມະດາ ຢ່າ ໄດ້ເສື່ອມສະຫຼາຍໄປເລີຍນັ້ນ ຈະຫາໄດ້ແຕ່ໄສໃນຖານະນີ້ ນັ້ນບໍ່ແມ່ນຖານະ ທີ່ຈະມີໄດ້"

ທ່ານທັງຫຼາຍ ຄັ້ງນັ້ນແລ ພິກຂຸຜູ້ບວດຕອນແກ່ຊື່ສຸພັດທະ[๒]ນັ່ງຢູ່ໃນທີ່ປະຊຸມນັ້ນ ໄດ້ກ່າວ ກັບພິກຂຸທັງຫຼາຍດັ່ງນີ້ວ່າ "ພໍເທີ້ນ ພວກທ່ານຢ່າໂສກເສົ້າ ຢ່າຮ່ຳໄຮເລີຍ ພວກເຮົາລອດພົ້ນດີ ແລ້ວຈາກພຣະມະຫາສະມະນະອົງນັ້ນທີ່ຖ້າຈ້ຳຈີ້ຈ້ຳໄຊພວກເຮົາຢູ່ວ່າ ສິ່ງນີ້ຄວນແກ່ພວກທ່ານ

ສິ່ງນີ້ບໍ່ຄວນແກ່ພວກທ່ານ ບັດນີ້ ພວກເຮົາປາຖະໜາສິ່ງໃດ ກໍຈັກເຮັດສິ່ງນັ້ນ ບໍ່ປາຖະໜາສິ່ງໃດ ກໍຈັກບໍ່ເຮັດສິ່ງນັ້ນ"

ທ່ານທັງຫຼາຍ ຖ້າຈັ່ງຊັ້ນ ພວກເຮົາຈະສັງຄາຍະນາພຣະທຳແລະວິໄນກັນ ກ່ອນທີ່ອະທຳຈະຮຸ່ງເຮືອງ ທຳຈະຖືກຄັດຄ້ານ ສິ່ງບໍ່ແມ່ນວິໄນຈະຮຸ່ງເຮືອງ ວິໄນຈະຖືກຄັດຄ້ານ ກ່ອນທີ່ພວກອະທຳວາທີຈະມີກຳລັງ ພວກທຳວາທີຈະອ່ອນກຳລັງ ພວກອະວິນະຍະວາທີຈະມີກຳລັງ

ພວກວິນະຍະວາທີຈະອ່ອນກຳລັງ

## ພຣະມະຫາກັດສະປະຄັດເລືອກພິກຂຸເຮັດສັງຄາຍະນາ

ພິກຂຸທັງຫຼາຍກ່າວວ່າ "ທ່ານຜູ້ຈະເລີນ ຖ້າເປັນແນວນັ້ນ ຂໍພຣະເຖຣະໂຜດເລືອກພິກຂຸທັງຫຼາຍເທີ້ນ"

ລຳດັບນັ້ນ ທ່ານພຣະມະຫາກັດສະປະຈຶ່ງຄັດເລືອກພຣະອະຣະຫັນໄດ້ ໔໙໙ ອົງ

ພິກຂຸທັງຫຼາຍໄດ້ຂາບຮຽນທ່ານພຣະມະຫາກັດສະປະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທ່ານພຣະອານົນນີ້ຍັງເປັນເສຂະບຸກຄົນກໍຈິງ ແຕ່ບໍ່ລຳອຽງຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ອັນໜຶ່ງ ທ່ານພຣະອານົນນັ້ນໄດ້ສຶກສາພຣະທຳແລະວິໄນຫຼວງຫຼາຍໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຖ້າເປັນແນວນັ້ນ ຂໍພຣະເຖຣະໂຜດເລືອກທ່ານພຣະອານົນດ້ວຍ"

ທ່ານພຣະມະຫາກັດສະປະຈຶ່ງເລືອກທ່ານພຣະອານົນ

## ກຳນົດເຂດການຢູ່ຈຳພັນສາ

ຕໍ່ມາ ພິກຂຸຜູ້ເຖຣະທັງຫຼາຍເປີກສາກັນດັ່ງນີ້ວ່າ "ພວກເຮົາຈະສັງຄາຍະນາພຣະທຳແລະວິໄນຢູ່ໄສນໍ" ລຳດັບນັ້ນ ເຫັນພ້ອມກັນວ່າ "ນະຄອນຣາດຊະຄືມີໂຄຈອນຄາມຫຼາຍ ເສນາສະນະມີພຽງພໍ ທາງທີ່ດີພວກເຮົາເພິ່ງຢູ່ຈຳພັນສາໃນນະຄອນຣາດຊະຄື ສັງຄາຍະນາພຣະທຳແລະວິໄນ ພິກຂຸເຫຼົ່າອື່ນບໍ່ເພິ່ງຢູ່ຈຳພັນສາໃນນະຄອນຣາດຊະຄື"

ຕໍ່ມາ ທ່ານພຣະມະຫາກັດສະປະປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໓໗] ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸ ໕໐໐ ອົງນີ້ໃຫ້ຈຳພັນສາໃນນະຄອນຣາດຊະຄື ເພື່ອສັງຄາຍະນາພຣະທຳແລະວິໄນ ພິກຂຸເຫຼົ່າອື່ນບໍ່ເພິ່ງຈຳພັນສາໃນນະຄອນຣາດຊະຄື ນີ້ເປັນຍັດຕິ

ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸ ໕໐໐ ອົງນີ້ໃຫ້ຈຳພັນສາໃນນະຄອນຣາດຊະຄື ເພື່ອສັງຄາຍະນາພຣະທຳແລະວິໄນ ພິກຂຸເຫຼົ່າອື່ນບໍ່ເພິ່ງຈຳພັນສາໃນນະຄອນຣາດຊະຄື ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸ ໕໐໐ ອົງນີ້ໃຫ້ຈຳພັນສາໃນນະຄອນຣາດຊະຄື ເພື່ອສັງຄາຍະນາພຣະທຳແລະວິໄນ ພິກຂຸເຫຼົ່າອື່ນບໍ່ເພິ່ງຈຳພັນສາໃນນະຄອນຣາດຊະຄື ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງພິກຂຸ ໕໐໐ ອົງນີ້ໃຫ້ຈຳພັນສາໃນນະຄອນຣາດຊະຄື ເພື່ອສັງຄາຍະນາພຣະທຳແລະວິໄນແລ້ວ ພິກຂຸເຫຼົ່າອື່ນບໍ່ເພິ່ງຈຳພັນສາໃນນະຄອນຣາດຊະຄື ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ປະຕິສັງຂອນເສນາສະນະທີ່ຊຸດໂຊມ

ຕໍ່ມາ ພິກຂຸຜູ້ເຖຣະທັງຫຼາຍໄດ້ເດີນທາງໄປນະຄອນຣາດຊະຄືເພື່ອສັງຄາຍະນາພຣະທຳແລະວິໄນ ລຳດັບນັ້ນ ພິກຂຸທັງຫຼາຍຜູ້ເຖຣະໄດ້ເປີກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງສັນເສີນການປະຕິສັງຂອນເສນາສະນະທີ່ຊຸດໂຊມ ຖ້າຈັ່ງໃດ ພວກເຮົາຈະປະຕິສັງຂອນເສນາສະນະທີ່ຊຸດໂຊມໃນເດືອນທຳອິດ ຈະປະຊຸມສັງຄາຍະນາພຣະທຳແລະວິໄນຕອນກາງເດືອນ"

## ທ່ານພຣະອານົນບັນລຸອະຣະຫັດຕະຜົນ

ຄັ້ງນັ້ນ ພິກຂຸຜູ້ເຖຣະທັງຫຼາຍໄດ້ປະຕິສັງຂອນເສນາສະນະທີ່ຊຸດໂຊມໃນເດືອນທຳອິດ ລຳດັບນັ້ນ ທ່ານພຣະອານົນຄິດວ່າ "ມື້ອື່ນເປັນມື້ປະຊຸມ ການທີ່ເຮົາຜູ້ຍັງເປັນເສຂະບຸກຄົນຢູ່ຈະໄປຮ່ວມປະຊຸມດ້ວຍ ບໍ່ສົມຄວນເລີຍ" ຈຶ່ງໃຫ້ເວລາກາງຄືນເປັນສ່ວນຫຼາຍລ່ວງໄປດ້ວຍ ກາຍະຄະຕາສະຕິ[๑] ພໍເຖິງເວລາໃກ້ຮຸ່ງກໍເອນກາຍ ດ້ວຍຕັ້ງໃຈວ່າ "ຈະນອນພັກ" ແຕ່ຫົວຍັງບໍ່ທັນເຖິງໝອນ ຕີນຍັງບໍ່ທັນຍົກຂຶ້ນຈາກພື້ນ ໃນລະຫວ່າງນີ້ຈິດໄດ້ລຸດພົ້ນຈາກກິເລດ ອາສະວະທັງຫຼາຍຍ້ອນບໍ່ມີຄວາມຍຶດໝັ້ນຖືໝັ້ນ

## ເລື້ອງທ່ານພຣະອຸບາລີຕອບຄຳຖາມກ່ຽວກັບພຣະວິໄນ

[໔໓໙] ເມື່ອທ່ານພຣະອານົນເປັນພຣະອະຣະຫັນໄດ້ໄປສູ່ທີ່ປະຊຸມ ລຳດັບນັ້ນ ທ່ານພຣະມະຫາກັດສະປະປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

"ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າຈະສອບຖາມພຣະວິໄນກັບທ່ານພຣະອຸບາລີ"

ທ່ານພຣະອຸບາລີຈຶ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ຂ້າພະເຈົ້າອັນທ່ານພຣະມະຫາກັດສະປະຖາມພຣະວິໄນ ຈະໄດ້ຕອບຕໍ່ໄປ"

## ປາຣາຊິກສິກຂາບົດທີ ໑

ລຳດັບນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມທ່ານພຣະອຸບາລີວ່າ "ທ່ານອຸບາລີ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດ ປາຣາຊິກສິກຂາບົດທີ ໑ ຢູ່ໃສ"

ທ່ານພຣະອຸບາລີຕອບວ່າ "ຢູ່ນະຄອນເວສາລີ ຂ້ານ້ອຍ"

ທ່ານພຣະມະຫາກັດສະປະຖາມວ່າ "ຊົງຜາຣົບໃຜ"

ທ່ານພຣະອຸບາລີຕອບວ່າ "ຊົງຜາຣົບພຣະສຸທິນກະລັນທະບຸດ"

ທ່ານພຣະມະຫາກັດສະປະຖາມວ່າ "ຍ້ອນເລື້ອງອັນໃດ"

ທ່ານພຣະອຸບາລີຕອບວ່າ "ຍ້ອນເສບເມຖຸນທຳ"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງວັດຖຸແດ່ ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ ຖາມເຖິງພຣະບັນຍັດແດ່ ຖາມເຖິງພຣະອະນຸບັນຍັດແດ່ ຖາມເຖິງອາບັດແດ່ ຖາມເຖິງອະນາບັດແດ່ແຫ່ງປາຣາຊິກສິກຂາບົດທີ ໑

## ປາຣາຊິກສິກຂາບົດທີ ໒

ທ່ານພຣະມະຫາກັດສະປະຖາມຕໍ່ໄປວ່າ "ທ່ານອຸບາລີ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໒ ຢູ່ໃສ"

ທ່ານພຣະອຸບາລີຕອບວ່າ "ຢູ່ນະຄອນຣາດຊະຄຶ ຂ້ານ້ອຍ"

ທ່ານພຣະມະຫາກັດສະປະຖາມວ່າ "ຊົງຜາຣົບໃຜ"

ທ່ານພຣະອຸບາລີຕອບວ່າ "ຊົງຜາຣົບພຣະທະນິຍະກຸມພະກາຣະບຸດ"

ທ່ານພຣະມະຫາກັດສະປະຖາມວ່າ "ຍ້ອນເລື້ອງອັນໃດ"

ທ່ານພຣະອຸບາລີຕອບວ່າ "ຍ້ອນເລື້ອງການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງວັດຖຸແດ່ ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ ຖາມເຖິງພຣະບັນຍັດແດ່ ຖາມເຖິງພຣະອະນຸບັນຍັດແດ່ ຖາມເຖິງອາບັດແດ່ ຖາມເຖິງອະນາບັດແດ່ແຫ່ງປາຣາຊິກສິກຂາບົດທີ ໒

## ປາຣາຊິກສິກຂາບົດທີ ໓

ທ່ານພຣະມະຫາກັດສະປະຖາມຕໍ່ໄປວ່າ "ທ່ານອຸບາລີ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໓ ຢູ່ໃສ"

ທ່ານພຣະອຸບາລີຕອບວ່າ "ຢູ່ນະຄອນເວສາລີ ຂ້ານ້ອຍ"
ທ່ານພຣະມະຫາກັດສະປະຖາມວ່າ "ຊົງຜາຣົບໃຜ"
ທ່ານພຣະອຸບາລີຕອບວ່າ "ຊົງຜາຣົບພິກຂຸຫຼາຍອົງ"
ທ່ານພຣະມະຫາກັດສະປະຖາມວ່າ "ຍ້ອນເລື້ອງອັນໃດ"
ທ່ານພຣະອຸບາລີຕອບວ່າ "ຍ້ອນພາກກາຍມະນຸດ"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງວັດຖຸແດ່ ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ ຖາມເຖິງພຣະບັນຍັດແດ່ ຖາມເຖິງພຣະອະນຸບັນຍັດແດ່ ຖາມເຖິງອາບັດແດ່ ຖາມເຖິງອະນາບັດແດ່ແຫ່ງປາຣາຊິກສິກຂາບົດທີ ໓

## ປາຣາຊິກສິກຂາບົດທີ ໔

ທ່ານພຣະມະຫາກັດສະປະຖາມຕໍ່ໄປວ່າ "ທ່ານອຸບາລີ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໔ ໄວ້ ຢູ່ໃສ"

ທ່ານພຣະອຸບາລີຕອບວ່າ "ຢູ່ນະຄອນເວສາລີ ຂ້ານ້ອຍ"
ທ່ານພຣະມະຫາກັດສະປະຖາມວ່າ "ຊົງຜາຣົບໃຜ"
ທ່ານພຣະອຸບາລີຕອບວ່າ "ຊົງຜາຣົບພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາທັງຫຼາຍ"
ທ່ານພຣະມະຫາກັດສະປະຖາມວ່າ "ຍ້ອນເລື້ອງອັນໃດ"
ທ່ານພຣະອຸບາລີຕອບວ່າ "ຍ້ອນກ່າວອວດອຸດຕະຣິມະນຸດສະທຳ"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງວັດຖຸແດ່ ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ ຖາມເຖິງພຣະບັນຍັດແດ່ ຖາມເຖິງພຣະອະນຸບັນຍັດແດ່ ຖາມເຖິງອາບັດແດ່ ອະນາບັດແດ່ແຫ່ງປາຣາຊິກສິກຂາບົດທີ ໔

ທ່ານພຣະມະຫາກັດສະປະຖາມພຣະວິໄນຂອງສົງທັງ ໒ ຝ່າຍໆໂດຍອຸບາຍນີ້ຄືກັນ
ທ່ານພຣະມະຫາກັດສະປະເປັນຜູ້ຖາມ ທ່ານພຣະອຸບາລີເປັນຜູ້ຕອບ

## ເລື່ອງທ່ານພຣະອານົນຕອບຄຳຖາມກ່ຽວກັບພຣະທຳ

[໔໔໐] ລຳດັບນັ້ນ ທ່ານພຣະມະຫາກັດສະປະປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ຂ້າພະເຈົ້າຈະສອບຖາມພຣະທຳກັບທ່ານພຣະອານົນ"

ທ່ານພຣະອານົນຈຶ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ຂ້າພະເຈົ້າອັນທ່ານພຣະມະຫາກັດສະປະຖາມພຣະທຳຈະໄດ້ຕອບຕໍ່ໄປ"

ລຳດັບນັ້ນ ທ່ານພຣະມະຫາກັດສະປະຈຶ່ງຖາມທ່ານພຣະອານົນວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຕັດພົມມະຊາລະສູດ ຢູ່ໃສ"

ທ່ານພຣະອານົນຕອບວ່າ "ຢູ່ທີ່ພຣະຕຳໜັກໃນຣາຊະອຸທະຍານອຳພະລັດຖິກາລະຫວ່າງ ນະຄອນຣາດຊະຄຶແລະເມືອງນາລັນທາ ຂ້ານ້ອຍ"

ທ່ານພຣະມະຫາກັດສະປະຖາມວ່າ "ຊົງຜາຣົບໃຜ"

ທ່ານພຣະອານົນຕອບວ່າ "ຊົງຜາຣົບສຸບປິຍະປະຣິພາຊົກແລະພົມມະທັດມານົບ"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ໃນພົມມະຊາລະສູດ

ທ່ານພຣະມະຫາກັດສະປະຖາມຕໍ່ໄປວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຕັດສາມັນຍະ ຜົນລະສູດຢູ່ໃສ"

ທ່ານພຣະອານົນຕອບວ່າ "ຢູ່ທີ່ວິຫານຊີວະກຳພະວັນ ນະຄອນຣາດຊະຄຶ ຂ້ານ້ອຍ"

ທ່ານພຣະມະຫາກັດສະປະຖາມວ່າ "ຕັດກັບໃຜ"

ທ່ານພຣະອານົນຕອບວ່າ "ຕັດກັບພຣະເຈົ້າອະຊາດສັດຕູເວເທຫິບຸດ"

ຈາກນັ້ນ ທ່ານພຣະມະຫາກັດສະປະໄດ້ຖາມເຖິງນິທານແດ່ ຖາມເຖິງບຸກຄົນແດ່ ໃນສາມັນຍະ ຜົນລະສູດ ແລ້ວຖາມຈົນຄົບທັງ ໕ ນິກາຍ[១]

ທ່ານພຣະມະຫາກັດສະປະເປັນຜູ້ຖາມ ທ່ານພຣະອານົນເປັນຜູ້ຕອບ

## ໘. ຂຸດທານຸຂຸດທະກະສິກຂາປະທະກະຖາ

### ວ່າດ້ວຍສິກຂາບົດເລັກໜ້ອຍ

[໔໔໑] ຄັ້ງນັ້ນ ທ່ານພຣະອານົນໄດ້ກ່າວກັບພິກຂຸຜູ້ເຖຣະທັງຫຼາຍດັ່ງນີ້ວ່າ "ທ່ານຜູ້

ຈະເລີນ ໃນເວລາຈະປະຣິນິບພານ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ວ່າ ອານົນ ເມື່ອເຮົາລ່ວງໄປ ສົງຫວັງຢູ່ກໍເພິ່ງຖອນສິກຂາບົດເລັກໜ້ອຍໄດ້"

ພິກຂຸຜູ້ເຖຣະທັງຫຼາຍຖາມວ່າ "ທ່ານອານົນ ທ່ານທູນຖາມພຣະຜູ້ມີພຣະພາກເຈົ້າບໍວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ສິກຂາບົດຂໍ້ໃດທີ່ຈັດວ່າເປັນສິກຂາບົດເລັກໜ້ອຍ"

ທ່ານພຣະອານົນຕອບວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ສິກຂາບົດຂໍ້ໃດ ທີ່ຈັດວ່າເປັນສິກຂາບົດເລັກໜ້ອຍ"

ພິກຂຸຜູ້ເຖຣະລາງພວກກ່າວແນວນີ້ວ່າ "ຍົກເວັ້ນປາຣາຊິກ ໔ ສິກຂາບົດ ທີ່ເຫຼືອຈັດເປັນສິກຂາບົດເລັກໜ້ອຍ"

ພິກຂຸຜູ້ເຖຣະລາງພວກກ່າວແນວນີ້ວ່າ "ຍົກເວັ້ນປາຣາຊິກ ໔ ສິກຂາບົດ ສັງຄາທິເສດ ໑໓ ສິກຂາບົດ ທີ່ເຫຼືອຈັດເປັນສິກຂາບົດເລັກໜ້ອຍ"

ພິກຂຸຜູ້ເຖຣະລາງພວກກ່າວແນວນີ້ວ່າ "ຍົກເວັ້ນປາຣາຊິກ ໔ ສິກຂາບົດ ສັງຄາທິເສດ ໑໓ ສິກຂາບົດ ອະນິຍະຕະ ໒ ທີ່ເຫຼືອຈັດເປັນສິກຂາບົດເລັກໜ້ອຍ"

ພິກຂຸຜູ້ເຖຣະລາງພວກກ່າວແນວນີ້ວ່າ "ຍົກເວັ້ນປາຣາຊິກ ໔ ສິກຂາບົດ ສັງຄາທິເສດ ໑໓ ສິກຂາບົດ ອະນິຍະຕະ ໒ ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ປາຈິດຕີ ໙໒ ສິກຂາບົດ ທີ່ເຫຼືອຈັດເປັນສິກຂາບົດເລັກໜ້ອຍ"

ພິກຂຸຜູ້ເຖຣະລາງພວກກ່າວແນວນີ້ວ່າ "ຍົກເວັ້ນປາຣາຊິກ ໔ ສິກຂາບົດ ສັງຄາທິເສດ ໑໓ ສິກຂາບົດ ອະນິຍະຕະ ໒ ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ປາຈິດຕີ ໙໒ ສິກຂາບົດ ປະຕິເທສະນີຍະ ໔ ສິກຂາບົດ ທີ່ເຫຼືອຈັດເປັນສິກຂາບົດເລັກໜ້ອຍ"

## ເລື້ອງບໍ່ບັນຍັດເພີ່ມເຕີມແລະບໍ່ຖອນພຣະບັນຍັດເດີມ

[໔໔໒] ຄັ້ງນັ້ນ ທ່ານພຣະມະຫາກັດສະປະປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳ ວາຈາວ່າທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂາບົດຂອງພວກເຮົາທີ່ຮູ້ກັນໃນໝູ່ຄະລືຫັດ[១] ມີຢູ່ແມ່ນພວກຄະລືຫັດກໍຮູ້ຢູ່ວ່າ "ສິ່ງນີ້ຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດ ສິ່ງນີ້ ບໍ່ຄວນ" ຖ້າພວກເຮົາຈະຖອນສິກຂາບົດເລັກໜ້ອຍ ກໍຈະມີຜູ້ກ່າວວ່າ "ພຣະສະມະນະໂຄດົມບັນຍັດສິກຂາບົດແກ່ພວກສາວົກຊົ່ວການແຫ່ງຄວັນໄຟ ສາວົກພວກນີ້ສຶກສາສິກຂາບົດຢູ່ຕະຫຼອດເວລາທີ່ພຣະສາດສະດາຂອງຕົນຍັງມີຊີວິດຢູ່ ພໍພຣະສາດສະດາຂອງພວກທ່ານປະຣິນິບພານໄປແລ້ວ ບັດນີ້ ພວກທ່ານກໍບໍ່ສຶກສາສິກຂາບົດ" ຖ້າສົງພ້ອມແລ້ວກໍບໍ່ເພິ່ງບັນຍັດສິ່ງທີ່ບໍ່ໄດ້ຊົງບັນ

ຍັດ ບໍ່ເພີ່ງຖອນພຣະບັນຍັດທີ່ຊົງບັນຍັດໄວ້ ເພີ່ງສະມາທານປະພຶດຕາມສິກຂາບົດທີ່ຊົງບັນຍັດໄວ້ແລ້ວ ນີ້ເປັນຍັດຕິ

ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂາບົດຂອງພວກເຮົາທີ່ຮູ້ກັນໃນໝູ່ຄະລືຫັດມີຢູ່ ແມ່ນພວກຄະລືຫັດກໍຮູ້ຢູ່ວ່າ "ສິ່ງນີ້ຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດ ສິ່ງນີ້ ບໍ່ຄວນ" ຖ້າພວກເຮົາຈະຖອນສິກຂາບົດເລັກໜ້ອຍ ກໍຈະມີຜູ້ກ່າວວ່າ "ພຣະສະມະນະໂຄດົມບັນຍັດສິກຂາບົດແກ່ພວກສາວົກຊົ່ວການແຫ່ງຄວັນໄຟ ສາວົກພວກນີ້ສຶກສາສິກຂາບົດຢູ່ຕະຫຼອດເວລາທີ່ພຣະສາດສະດາຂອງຕົນຍັງມີຊີວິດຢູ່ ພໍພຣະສາດສະດາຂອງພວກທ່ານປະຣິນິບພານໄປແລ້ວ ບັດນີ້ພວກທ່ານກໍບໍ່ສຶກສາສິກຂາບົດ" ຖ້າສົງພ້ອມກັນແລ້ວກໍບໍ່ເພີ່ງບັນຍັດສິ່ງທີ່ບໍ່ໄດ້ຊົງບັນຍັດ ບໍ່ເພີ່ງຖອນພຣະບັນຍັດທີ່ຊົງບັນຍັດໄວ້ ເພີ່ງສະມາທານປະພຶດຕາມ

ສິກຂາບົດທີ່ຊົງບັນຍັດໄວ້ແລ້ວ ທ່ານອົງໃດເຫັນດ້ວຍກັບການບໍ່ບັນຍັດສິ່ງທີ່ບໍ່ຊົງບັນຍັດ ບໍ່ຖອນພຣະບັນຍັດຕາມທີ່ຊົງບັນຍັດໄວ້ ສະມາທານປະພຶດຕາມສິກຂາບົດທີ່ຊົງບັນຍັດໄວ້ແລ້ວ ທ່ານອົງນັ້ນເພີ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພີ່ງທັກທ້ວງ

ສົງບໍ່ບັນຍັດສິ່ງທີ່ບໍ່ຊົງບັນຍັດ ບໍ່ຖອນພຣະບັນຍັດຕາມທີ່ຊົງບັນຍັດໄວ້

ສະມາທານປະພຶດສິກຂາບົດຕາມທີ່ຊົງບັນຍັດໄວ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງປັບອາບັດທ່ານພຣະອານົນ ໕ ກໍລະນີ

[໔໔໓] ໑. ຄັ້ງນັ້ນ ພິກຂຸຜູ້ເຖຣະທັງຫຼາຍກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ການທີ່ທ່ານບໍ່ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ສິກຂາບົດຂໍ້ໃດຈັດເປັນສິກຂາບົດເລັກໜ້ອຍ ເລື້ອງນີ້ປັບອາບັດທຸກກົດແກ່ທ່ານ ທ່ານຈົ່ງສະແດງອາບັດນັ້ນ"

ທ່ານພຣະອານົນຊີ້ແຈ່ງວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ສິກຂາບົດຂໍ້ໃດທີ່ຈັດເປັນສິກຂາບົດເລັກໜ້ອຍ ຍ້ອນຣະນຶກບໍ່ໄດ້ ຂ້ານ້ອຍບໍ່ເຫັນອາບັດທຸກກົດນັ້ນ ແຕ່ຍ້ອນເຊື່ອຟັງທ່ານທັງຫຼາຍ ຂ້ານ້ອຍຈະສະແດງອາບັດທຸກກົດ"

໒. ພິກຂຸຜູ້ເຖຣະທັງຫຼາຍກ່າວຕໍ່ໄປວ່າ "ທ່ານອານົນ ການທີ່ທ່ານຢຽບ ຜ້າວັດສິກະສາດົກຂອງພຣະຜູ້ມີພຣະພາກເຈົ້າແລ້ວປະຊຸມ ເລື້ອງນີ້ປັບອາບັດທຸກກົດ ແກ່ທ່ານ ທ່ານຈົ່ງສະແດງອາບັດທຸກກົດນັ້ນ"

ທ່ານພຣະອານົນຊີ້ແຈ່ງວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຢຽບຜ້າວັດສິກະສາດົກຂອງພຣະຜູ້ມີພຣະພາກເຈົ້າບໍ່ແມ່ນຍ້ອນຄວາມບໍ່ເຄົາລົບ ຂ້ານ້ອຍບໍ່ເຫັນອາບັດທຸກກົດນັ້ນ ແຕ່ຍ້ອນເຊື່ອຟັງທ່ານທັງຫຼາຍ ຂ້ານ້ອຍຈະສະແດງອາບັດທຸກກົດ"

໓. ພິກຂຸຜູ້ເຖຣະທັງຫຼາຍກ່າວຕໍ່ໄປວ່າ "ທ່ານອານົນ ການທີ່ທ່ານໃຫ້ມາຕຸຄາມຖວາຍອະພິວາດພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າກ່ອນ ພຣະສະຣີຣະຈຶ່ງປຽກເປື້ອນນ້ຳຕາຂອງມາຕຸຄາມເຫຼົ່ານັ້ນຜູ້ຮ້ອງໄຫ້ ເລື້ອງນີ້ປັບອາບັດທຸກກົດແກ່ທ່ານ ທ່ານຈຶ່ງສະແດງອາບັດທຸກກົດນັ້ນ"

ທ່ານພຣະອານົນຊີ້ແຈ່ງວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຄິດວ່າ ມາຕຸຄາມເຫຼົ່ານີ້ຢ່າຖ້າຢູ່ຈົນເຖິງເວລາວິການ ຈຶ່ງໃຫ້ພວກນາງຖວາຍອະພິວາດພຣະສະຣີຣະຂອງພຣະຜູ້ມີພຣະພາກເຈົ້າກ່ອນ ຂ້ານ້ອຍບໍ່ເຫັນອາບັດທຸກກົດນັ້ນ ແຕ່ຍ້ອນເຊື່ອຟັງທ່ານທັງຫຼາຍ ຂ້ານ້ອຍຈະສະແດງ ອາບັດທຸກກົດ"

໔. ພິກຂຸຜູ້ເຖຣະທັງຫຼາຍກ່າວຕໍ່ໄປວ່າ "ທ່ານອານົນ ການທີ່ພຣະຜູ້ມີພຣະພາກເຈົ້າຊົງທຳນິມິດໂອພາດຢ່າງຫຍາບ ໆ ທ່ານກັບບໍ່ຂາບທູນອ້ອນວອນພຣະອົງວ່າ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພະຊົນຊີບຢູ່ຕະຫຼອດກັບ ຂໍພຣະສຸດຄົດເຈົ້າໂຜດດຳລົງພະຊົນຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ ພະຫູຊົນ ເພື່ອຄວາມສຸກແກ່ພະຫູຊົນ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ເລື້ອງນີ້ປັບອາບັດທຸກກົດແກ່ທ່ານ ທ່ານຈຶ່ງສະແດງອາບັດທຸກກົດນັ້ນ"

ທ່ານພຣະອານົນຊີ້ແຈ່ງວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຖືກມານດົນໃຈຈຶ່ງບໍ່ໄດ້ຂາບທູນອ້ອນວອນພຣະຜູ້ມີພຣະພາກເຈົ້າໄວ້ວ່າ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພະຊົນຊີບຢູ່ຕະຫຼອດກັບ ຂໍພຣະສຸດຄົດເຈົ້າໂຜດດຳລົງພະຊົນຊີບຢູ່ຕະຫຼອດກັບ ເພື່ອເກື້ອກູນແກ່ພະຫູຊົນ ເພື່ອຄວາມສຸກແກ່ພະຫູຊົນ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ຂ້ານ້ອຍບໍ່ເຫັນອາບັດທຸກກົດນັ້ນ ແຕ່ຍ້ອນເຊື່ອຟັງທ່ານທັງຫຼາຍ ຂ້ານ້ອຍຈະສະແດງອາບັດທຸກກົດນັ້ນ"

໕. ພິກຂຸຜູ້ເຖຣະທັງຫຼາຍກ່າວຕໍ່ໄປວ່າ "ທ່ານອານົນ ການທີ່ທ່ານຂວນຂວາຍໃຫ້ມາຕຸຄາມບວດໃນພຣະທຳວິໄນອັນພຣະຕະຖາຄົດເຈົ້າປະກາດໄວ້ແລ້ວ ເລື້ອງນີ້ປັບອາບັດທຸກກົດແກ່ທ່ານ ທ່ານຈຶ່ງສະແດງອາບັດທຸກກົດນັ້ນ"

ທ່ານພຣະອານົນຊີ້ແຈ່ງວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຂົນຂວາຍໃຫ້ມາຕຸຄາມບວດໃນພຣະທຳວິໄນອັນພຣະຕະຖາຄົດເຈົ້າປະກາດໄວ້ແລ້ວ ຍ້ອນຄິດວ່າ ພຣະນາງມະຫາປະຊາບໍດີໂຄ

ຕະນິ ຜູ້ນີ້ເປັນພຣະມາຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ເຄີຍປະຄັບປະຄອງເບິ່ງແຍງ ຖວາຍກະສຽນທາຣະ ເມື່ອພຣະຊິນນິສະຫວັນຄົດ ຂ້ານ້ອຍບໍ່ເຫັນອາບັດທຸກກົດນັ້ນ ແຕ່ຍ້ອນເຊື່ອຟັງທ່ານທັງຫຼາຍ ຂ້ານ້ອຍຈະສະແດງອາບັດທຸກກົດນັ້ນ"

## ເລື້ອງພຣະປຸຣານະ

[໔໔໔] ສະໄໝນັ້ນ ທ່ານພຣະປຸຣານະທ່ຽວຈາຣິກຢູ່ໃນທັກຂິນາຄີຣີຊົນນະບົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ຄັນເມື່ອພິກຂຸຜູ້ເຖຣະທັງຫຼາຍສັງຄາຍະນາພຣະທຳແລະວິໄນສຳເລັດແລ້ວ ທ່ານພຣະປຸຣານະພັກຢູ່ທີ່ທັກຂິນາຄີຣີຊົນນະບົດຕາມອັດທະຍາໄສ ເຂົ້າໄປຫາພິກຂຸຜູ້ເຖຣະທັງຫຼາຍ ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶແລ້ວໄດ້ນັ່ງສົນທະນາຢ່າງບັນເທີງໃຈກັບພິກຂຸຜູ້ເຖຣະຢູ່ ທີ່ສົມຄວນ

ພິກຂຸຜູ້ເຖຣະທັງຫຼາຍໄດ້ກ່າວກັບທ່ານພຣະປຸຣານະດັ່ງນີ້ວ່າ "ທ່ານປຸຣານະ ພິກຂຸຜູ້ເຖຣະທັງຫຼາຍໄດ້ສັງຄາຍະນາພຣະທຳແລະວິໄນແລ້ວ ທ່ານຈົ່ງຮັບຮູ້ເລື້ອງທີສັງຄາຍະນານັ້ນ"

ທ່ານພຣະປຸຣານະກ່າວວ່າ "ທ່ານທັງຫຼາຍ ພິກຂຸຜູ້ເຖຣະທັງຫຼາຍສັງຄາຍະນາພຣະທຳແລະວິໄນດີແລ້ວ ແຕ່ຂ້ານ້ອຍຈະຊົງຈຳໄວ້ຕາມທີ່ໄດ້ຍິນສະເພາະພຣະພັກ ຕາມທີ່ໄດ້ຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ"

## ໓. ພົມທັນທະກະຖາ

## ວ່າດ້ວຍການລົງພົມທັນ

[໔໔໕] ຄັ້ງນັ້ນ ທ່ານພຣະອານົນໄດ້ກ່າວກັບພິກຂຸຜູ້ເຖຣະທັງຫຼາຍດັ່ງນີ້ວ່າ "ທ່ານຜູ້ຈະເລີນ ໃນເວລາຈະສະເດັດປະຣິນິບພານ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ວ່າ ພິກຂຸທັງຫຼາຍເມື່ອເຮົາລ່ວງໄປ ສົງຈົ່ງລົງພົມທັນແກ່ພິກຂຸສັນນະ"

ພິກຂຸຜູ້ເຖຣະທັງຫຼາຍຖາມວ່າ "ທ່ານອານົນ ທ່ານທູນຖາມພຣະຜູ້ມີພຣະພາກເຈົ້າບໍວ່າຂ້າແຕ່ພຣະອົງຜູ້ຈະເລີນພົມທັນເປັນແນວໃດ?"

ທ່ານພຣະອານົນຕອບວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍທູນຖາມພຣະຜູ້ມີພຣະພາກເຈົ້າແລ້ວວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພົມທັນເປັນແນວໃດ? ພຣະອົງຮັບສັ່ງວ່າ ອານົນ ພິກຂຸສັນນະ

ເພິ່ງເວົ້າໄດ້ຕາມທີ່ປາຖະໜາ ພິກຂຸທັງຫຼາຍບໍ່ເພິ່ງວ່າກ່າວ ບໍ່ເພິ່ງຕັກເຕືອນ ບໍ່ເພິ່ງພໍ່າສອນ ພິກຂຸສັນນະ"

ພິກຂຸຜູ້ເຖຣະທັງຫຼາຍກ່າວວ່າ "ທ່ານອານົນ ຖ້າເປັນແນວນັ້ນ ທ່ານນັ້ນແລຈຶ່ງລົງພົມທັນແກ່ພິກຂຸສັນນະ"[๑]

ທ່ານພຣະອານົນຖາມວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຈະລົງພົມທັນແກ່ພຣະສັນນະໄດ້ແນວໃດກັນ ຍ້ອນທ່ານເປັນຄົນດຸຮ້າຍ ເປັນຄົນຫຍາບຄາຍ"

ພິກຂຸຜູ້ເຖຣະທັງຫຼາຍຕອບວ່າ "ທ່ານອານົນ ຖ້າເປັນແນວນັ້ນ ທ່ານຈຶ່ງໄປພ້ອມກັບພິກຂຸຈຳນວນຫຼາຍ"

ທ່ານພຣະອານົນຮັບບັນຊາພິກຂຸຜູ້ເຖຣະທັງຫຼາຍແລ້ວ ໂດຍສານເຮືອໄປພ້ອມກັບພິກຂຸສົງໝູ່ໃຫຍ່ ປະມານ ໕໐໐ ອົງ ເຖິງນະຄອນໂກສຳພີ ຂຶ້ນຈາກເຮືອແລ້ວນັ່ງທີ່ເຫງົ້າໄມ້ແຫ່ງໜຶ່ງໃກ້ຣາຊະອຸທະຍານຂອງພຣະເຈົ້າອຸເທນ

## ເລື່ອງພຣະເຈົ້າອຸເທນ

ສະໄໝນັ້ນ ພຣະເຈົ້າອຸເທນກັບພຣະມະເຫສີປະທັບຢູ່ໃນຣາຊະອຸທະຍານພ້ອມຂ້າຣາດຊະບໍຣິພານ ພຣະມະເຫສີຂອງພຣະເຈົ້າອຸເທນໄດ້ສະດັບວ່າ "ພຣະຜູ້ເປັນເຈົ້າອານົນຜູ້ເປັນອາຈານຂອງພວກເຮົາ ນັ່ງຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງໃກ້ຣາຊະອຸທະຍານ"

ລຳດັບນັ້ນ ພຣະມະເຫສີໄດ້ຂາບທູນພຣະເຈົ້າອຸເທນດັ່ງນີ້ວ່າ "ຂໍເດຊະ ໄດ້ຂ່າວວ່າ ພຣະຜູ້ເປັນເຈົ້າອານົນຜູ້ເປັນອາຈານຂອງຂ້ານ້ອຍ ນັ່ງຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງໃກ້ຣາຊະອຸທະຍານ ຂໍເດຊະ ຂ້ານ້ອຍປາຖະໜາຈະຢ້ຽມພຣະຜູ້ເປັນເຈົ້າອານົນ"

ພຣະເຈົ້າອຸເທນຕັດວ່າ "ຖ້າເປັນແນວນັ້ນ ນາງໄປຢ້ຽມທ່ານພຣະອານົນເທີ້ນ"

ຕໍ່ມາ ພຣະມະເຫສີຂອງພຣະເຈົ້າອຸເທນເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ບັດແລ້ວ ອະພິວາດ ນັ່ງທີ່ສົມຄວນ ທ່ານພຣະອານົນຊີ້ແຈ່ງພຣະມະເຫສີໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ພຣະມະເຫສີຂອງພຣະເຈົ້າອຸເທນຜູ້ເຊິ່ງທ່ານພຣະອານົນຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຖວາຍຜ້າຫົ່ມ ໕໐໐ ຜືນ ຊົມຊື່ນອະນຸໂມທະນາພາສິດຂອງທ່ານພຣະອານົນລຸກຈາກອາສະນະ ອະພິວາດແລ້ວກະທຳປະທັກຂິນກັບໄປ ເຂົ້າໄປເຝົ້າພຣະເຈົ້າອຸເທນ

ເຖິງທີ່ປະທັບ ພຣະເຈົ້າອຸເທນທອດພຣະເນດເຫັນພຣະນາງສະເດັດມາແຕ່ໄກ ແລ້ວໄດ້ຕັດຖາມພຣະມະເຫສີດັ່ງນີ້ວ່າ "ນາງຍັ່ງມພຣະຜູ້ເປັນເຈົ້າພຣະອານົນແລ້ວບໍ"

ພຣະນາງຂາບທູນວ່າ "ຂໍເດຊະ ຍັ່ງມແລ້ວ"

ພຣະເຈົ້າອຸເທນຕັດຖາມວ່າ "ນາງຖວາຍອັນໃດແກ່ສະມະນະອານົນແດ່"

ພຣະນາງຂາບທູນວ່າ "ຂໍເດຊະ ພວກຂ້ານ້ອຍຖວາຍຜ້າຫົ່ມ ໕໐໐ ຜືນແກ່ພຣະຜູ້ເປັນເຈົ້າອານົນ"

ພຣະເຈົ້າອຸເທນຊົງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງສະມະນະອານົນຈຶ່ງຮັບຜ້າຫຼວງຫຼາຍແນວນັ້ນບໍ ສະມະນະອານົນຈະທຳການຄ້າຂາຍຜ້າຫຼືຕັ້ງຮ້ານຄ້າແລ້ວບໍ"

ຕໍ່ມາ ພຣະເຈົ້າອຸເທນສະເດັດໄປຫາທ່ານພຣະອານົນເຖິງທີ່ພັກ ບັດແລ້ວຊົງປາໄສ ກັບທ່ານພຣະອານົນ ເມື່ອຊົງປາໄສພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວ ປະທັບນັ່ງທີ່ສົມຄວນຕັດຖາມທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ມະເຫສີຂອງຂ້າພະເຈົ້າມາແລ້ວບໍ"

ທ່ານພຣະອານົນຖວາຍພຣະພອນວ່າ "ພຣະມະເຫສີຂອງພຣະອົງມາແລ້ວ ມະຫາບໍພິດ"

ພຣະເຈົ້າອຸເທນຕັດຖາມວ່າ "ພຣະນາງໄດ້ຖວາຍອັນໃດແກ່ທ່ານອານົນແດ່"

ທ່ານພຣະອານົນຖວາຍພຣະພອນວ່າ"ມະຫາບໍພິດ ພຣະນາງຖວາຍຜ້າຫົ່ມອາດຕະມາ ໕໐໐ ຜືນ"

ພຣະເຈົ້າອຸເທນຕັດຖາມວ່າ "ທ່ານອານົນ ຜ້າຫຼວງຫຼາຍແນວນັ້ນ ທ່ານຈະເອົາໄປເຮັດອັນໃດ"

ທ່ານພຣະອານົນຖວາຍພຣະພອນວ່າ"ມະຫາບໍພິດ ອາດຕະມາຈະແຈກພິກຂຸທັງຫຼາຍຜູ້ມີຈີວອນເກົ່າ"

ພຣະເຈົ້າອຸເທນຕັດຖາມວ່າ "ທ່ານອານົນ ທ່ານຈະເອົາຈີວອນເກົ່າທີ່ມີຢູ່ເດີມໄປເຮັດຫຍັງ"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ອາດຕະມາຈະເຮັດຈີວອນເກົ່າທີ່ມີຢູ່ເດີມນັ້ນໃຫ້ເປັນຜ້າເພດານ"

ພຣະເຈົ້າອຸເທນຕັດຖາມວ່າ "ທ່ານອານົນ ທ່ານຈະເອົາຜ້າເພດານເກົ່າໄປເຮັດຫຍັງ"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ອາດຕະມາຈະເຮັດຜ້າເພດານເກົ່ານັ້ນໃຫ້ ເປັນຜ້າປອກຟູກ"

ພຣະເຈົ້າອຸເທນຕັດຖາມວ່າ "ທ່ານອານົນ ທ່ານຈະເອົາຜ້າປອກຟູກເກົ່າໄປເຮັດຫຍັງ"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ອາດຕະມາຈະເຮັດຜ້າປອກຟູກເກົ່ານັ້ນ ໃຫ້ເປັນຜ້າປູພື້ນ"

ພຣະເຈົ້າອຸເທນຕັດຖາມວ່າ "ທ່ານອານົນ ທ່ານຈະເອົາຜ້າປູພື້ນເກົ່າໄປເຮັດຫຍັງ"

ທ່ານພຣະອານົນຖວາຍພຣະພອນວ່າ “ມະຫາບໍພິດ ອາດຕະມາຈະເຮັດຜ້າປູພື້ນເກົ່າໃຫ້ເປັນ ຜ້າເຊັດຕີນ”

ພຣະເຈົ້າອຸເທນຕັດຖາມວ່າ “ທ່ານອານົນ ທ່ານຈະເອົາຜ້າເຊັດຕີນເກົ່າໄປເຮັດຫຍັງ”

ທ່ານພຣະອານົນຖວາຍພຣະພອນວ່າ “ມະຫາບໍພິດ ອາດຕະມາຈະເອົາຜ້າເຊັດຕີນເກົ່າໄປເຊັດທຸລີ”

ພຣະເຈົ້າອຸເທນຕັດຖາມວ່າ “ທ່ານອານົນ ທ່ານຈະເອົາຜ້າເຊັດທຸລີເກົ່າໄປເຮັດຫຍັງ”

ທ່ານພຣະອານົນຖວາຍພຣະພອນວ່າ “ມະຫາບໍພິດ ອາດຕະມາຈະຕຳຜ້າເຫຼົ່ານັ້ນນວດກັບຕົມແລ້ວສາບທາຝາ”

ລຳດັບນັ້ນ ພຣະເຈົ້າອຸເທນຊົງດຳຣິວ່າ “ພຣະສະມະນະເຊື້ອສາຍສາກະຍະບຸດທັງໝົດນີ້ນຳຜ້າໄປໃຊ້ຄຸ້ມຄ່າ ບໍ່ແມ່ນເກັບເຂົ້າຄັງ” ຈຶ່ງໄດ້ຖວາຍຜ້າອີກຈຳນວນ ໕໐໐ ຜືນແກ່ທ່ານພຣະອານົນ

ອັນໜຶ່ງ ເວລານັ້ນ ບໍຣິຂານຄືຈີວອນ ໑,໐໐໐ ຜືນ ເກີດຂຶ້ນແກ່ທ່ານພຣະອານົນເປັນຄັ້ງທຳອິດ

## ເລື່ອງທ່ານພຣະອານົນແຈ້ງພົມທັນແກ່ພຣະສັນນະ

ຕໍ່ມາ ທ່ານພຣະອານົນເຂົ້າໄປທີ່ໂຄສິຕາຣາມ ບັດແລ້ວນັ່ງເທິງອາສະນະທີ່ປູໄວ້ ລຳດັບນັ້ນ ທ່ານພຣະສັນນະໄດ້ເຂົ້າໄປຫາທ່ານພຣະອານົນເຖິງທີ່ພັກ ບັດແລ້ວອະພິວາດ ນັ່ງທີ່ສົມຄວນ ທ່ານພຣະອານົນໄດ້ກ່າວກັບທ່ານພຣະສັນນະດັ່ງນີ້ວ່າ “ທ່ານສັນນະ ສົງໄດ້ລົງພົມທັນແກ່ທ່ານແລ້ວ”

ທ່ານພຣະສັນນະຖາມວ່າ “ທ່ານອານົນ ພົມທັນທີ່ສົງລົງແລ້ວເປັນແນວໃດ? ຂ້ານ້ອຍ”

ທ່ານພຣະອານົນຕອບວ່າ “ທ່ານສັນນະ ທ່ານເພິ່ງເວົ້າໄດ້ຕາມທີ່ປາຖະໜາ ພິກຂຸທັງຫຼາຍຈະບໍ່ວ່າກ່າວ ບໍ່ຕັກເຕືອນ ບໍ່ພ່ຳສອນທ່ານ”

ທ່ານພຣະສັນນະຖາມວ່າ “ທ່ານອານົນ ຍ້ອນເຫດທີ່ພິກຂຸທັງຫຼາຍບໍ່ວ່າກ່າວ ບໍ່ຕັກເຕືອນບໍ່ພ່ຳສອນຂ້ານ້ອຍ ພຽງສ່ຳນີ້ຂ້ານ້ອຍຊື່ວ່າຖືກກຳຈັດແລ້ວ” ແລ້ວສະຫຼົບລົ້ມລົງບ່ອນນັ້ນເອງ

## ພຣະສັນນະບັນລຸອະຣະຫັດຕະຜົນ

ຕໍ່ມາ ທ່ານພຣະສັນນະອຶດອັດ ເບື່ອຣະອາ ລັງກຽດດ້ວຍພົມທັນ ຈຶ່ງຫຼີບຫຼີກຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍໃຈ ບໍ່ດົນປານໃດ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດ ປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດ ໂດຍ

ຖືກຕ້ອງປາຖະໜາ ດ້ວຍປັນຍາຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນແນ່ແທ້ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຈຶ່ງເປັນອັນວ່າທ່ານພຣະສັນນະ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນຈຳນວນພຣະອະຣະຫັນທັງຫຼາຍ

ຄັ້ງນັ້ນ ທ່ານສັນນະໄດ້ບັນລຸອະຣະຫັດຕະຜົນແລ້ວຈຶ່ງເຂົ້າໄປຫາທ່ານພຣະອານົນເຖິງທີ່ພັກ ແລ້ວໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ເວລານີ້ ທ່ານໂຜດລະງັບພົມທັນແກ່ຂ້ານ້ອຍເທີ້ນ"

ທ່ານພຣະອານົນກ່າວວ່າ "ທ່ານສັນນະ ເມື່ອທ່ານບັນລຸອະຣະຫັດຕະຜົນແລ້ວ ພົມທັນຂອງທ່ານກໍເປັນອັນລະງັບໄປ"

ກໍໃນການສັງຄາຍະນາພຣະ(ທຳ)ວິໄນຄັ້ງນີ້ ມີພິກຂຸ ໕໐໐ ອົງ ບໍ່ຢ່ອນບໍ່ຍິ່ງ ດັ່ງນັ້ນການສັງຄາຍະນາພຣະ(ທຳ)ວິໄນຄັ້ງນີ້ ຈຶ່ງຮຽກວ່າ "ປັນຈະສະຕິກະ"

**ປັນຈະສະຕິກະຂັນທະກະທີ ໑໑ ຈົບ**

## ໃນຂັນທະກະນີ້ມີ ໔໓ ເລື້ອງ

## ລວມເລື້ອງທີ່ມີໃນປັນຈະສະຕິກະຂັນທະກະ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດປະຣິນິບພານ ທ່ານພຣະມະຫາກັດສະປະ
ຜູ້ຮັກສາພຣະສັດທຳ ຊີ້ແຈ່ງຕໍ່ໝູ່ສົງເຖິງຄຳເວົ້າທີ່ພຣະສຸພັດທະ
ກ່າວດູໝິ່ນພຣະທຳວິໄນ ເມື່ອເດີນທາງຈາກເມືອງປາວາ
ພຣະມະຫາກັດສະປະຈຶ່ງກ່າວວ່າ ພວກເຮົາຈະສັງຄາຍະນາພຣະສັດທຳ
ກ່ອນທີ່ອະທຳຈະຮຸ່ງເຮືອງ

ພຣະມະຫາກັດສະປະຄັດເລືອກພິກຂຸເຮັດສັງຄາຍະນາ ໔໙໙ ອົງ
ຕໍ່ມາ ສົງແນະນຳໃຫ້ເລືອກທ່ານພຣະອານົນດ້ວຍ
ພິກຂຸສົງຈຳພັນສາຢູ່ໃນຖ້ຳອັນເໝາະທີ່ຈະເຮັດສັງຄາຍະນາ
ພຣະທຳວິໄນ ເມື່ອເວລາສັງຄາຍະນາ
ພຣະມະຫາກັດສະປະຖາມພຣະວິໄນກັບທ່ານພຣະອຸບາລີ
ຖາມພຣະສູດກັບທ່ານພຣະອານົນຜູ້ຊານສະຫຼາດ

ສາວົກຂອງພຣະຊິນນະເຈົ້າໄດ້ສັງຄາຍະນາພຣະໄຕຣປິດົກ ສົງໄດ້ສອບຖາມກ່ຽວກັບພຸດທະດຳຣັດທີ່ວ່າດ້ວຍອາບັດເລັກໜ້ອຍ ຕໍ່ຈາກນັ້ນ ຈຶ່ງລົງມະຕິວ່າຈະປະຕິບັດຕາມທີ່ຊົງບັນຍັດ

ຕໍ່ຈາກນັ້ນ ສົງປັບອາບັດທ່ານພຣະອານົນຍ້ອນບໍ່ຂາບທູນ ຖາມກ່ຽວກັບອາບັດເລັກໜ້ອຍ ຍ້ອນຢຽບຜ້າຂອງພຣະພຸດທະອົງ ຍ້ອນອະນຸຍາດໃຫ້ມາຕຸຄາມໃຫ້ໄຫວ້ພຣະພຸດທະສະຣີຣະຈົນນ້ຳຕາປຽກ ພຣະພຸດທະສະຣີຣະ ຍ້ອນບໍ່ຂາບທູນຂໍໃຫ້ພຣະພຸດທະອົງ ດຳລົງພະຊົນຊີບຢູ່ຕະຫຼອດກັບ ຍ້ອນຂາບທູນຂໍອະນຸຍາດໃຫ້ ມາຕຸຄາມອອກບວດ

ທ່ານພຣະອານົນຍອມຮັບອາບັດທຸກກົດຍ້ອນເຊື່ອຟັງພິກຂຸ ຜູ້ເຖຣະທັງຫຼາຍ ຕໍ່ມາ ທ່ານພຣະປຸຣານະເດີນທາງມາຈາກ ທັກຂິນາຄີຣີຊົນນະບົດ ບໍ່ຍອມຮັບຜົນການສັງຄາຍະນາ

ສົງລົງພົມທັນແກ່ພຣະສັນນະ ພຣະມະເຫສີຂອງ ພຣະເຈົ້າອຸເທນຖວາຍລາບສັກກາຣະແກ່ທ່ານພຣະອານົນ ຜ້າໄດ້ເກີດຂຶ້ນ ເປັນຈຳນວນຫຼາຍ ທ່ານພຣະອານົນເອົາຜ້າຈີວອນເກົ່າເຮັດເປັນເພດານ ເຮັດເປັນປອກຟູກ ເປັນຜ້າປູພື້ນ ເປັນຜ້າເຊັດຕີນ ເປັນຜ້າເຊັດທຸລີ ຕໍ່ຈາກນັ້ນນວດກັບຕົມສາບທາຝາ

ຈີວອນ ໑,໐໐໐ ຜືນເກີດແກ່ທ່ານພຣະອານົນເປັນຄັ້ງທຳອິດ ພຣະສັນນະຖືກລົງພົມທັນໄດ້ບັນລຸສັດຈະທຳ ພິກຂຸຜູ້ເຖຣະຜູ້ຊ່ຽວຊານ ໕໐໐ ອົງສັງຄາຍະນາ ຈຶ່ງຮຽກວ່າ ປັນຈະສະຕິກະ

**ປັນຈະສຕິກະຂັນທະກະ ຈົບ**

# ໑໔. ສັດຕະສະຕິກະຂັນທະກະ

## ໑. ປະຖົມພານະວານ

### ເລື້ອງພິກຂຸວັດຊີບຸດສະແດງວັດຖຸ ໑໐ ປະການ

[໔໔໖] ສະໄໝນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດດັບຂັນທະປະຣິນິບພານລ່ວງໄປໄດ້ ໑໐໐ ປີ ພິກຂຸວັດຊີບຸດທັງຫຼາຍຊາວນະຄອນເວສາລີ ສະແດງວັດຖຸ ໑໐ ປະການໃນນະຄອນເວສາລີ ຄື

໑. ສິງຄີໂລນະກັບປະ (ເກັບເກືອໄວ້ໃນເຂົາສັດ ແລ້ວສັນກັບອາຫານຣົດບໍ່ເຄັມໄດ້)
໒. ທະວັງຄຸລະກັບປະ (ສັນອາຫານເມື່ອເງົາເລີຍເວລາທ່ຽງໄປ ໒ ອົງຄຸລີໄດ້)
໓. ຄາມັນຕະຣະກັບປະ (ເຂົ້າບ້ານນສັນອາຫານທີ່ບໍ່ເປັນເງື່ອນໄດ້)
໔. ອາວາສະກັບປະ (ເຮັດອຸໂປສົດແຍກກັນໃນອາວາດທີ່ມີສີມາດຽວກັນໄດ້)
໕. ອະນຸມະຕິກັບປະ (ເຮັດສັງຄະກຳ ໃນເມື່ອພິກຂຸທັງຫຼາຍຍັງມາບໍ່ພ້ອມ ແລ້ວຂໍອະນຸມັດພາຍຫຼັງໄດ້)
໖. ອາຈິນນະກັບປະ (ປະພຶດຕາມແບບທີ່ພຣະອຸປັດຊາອາຈານເຄີຍປະພຶດມາໄດ້)
໗. ອະມະຖິຕະກັບປະ (ສັນນົມສົດທີ່ປ່ຽນໄປແລ້ວ ແຕ່ຍັງບໍ່ເປັນນົມສົ້ມໄດ້)
໘. ຊະໂລຄີ (ດື່ມສຸຣາອ່ອນ ໆ ໄດ້)
໙. ອະທະສະກະນິສີທະນະ (ໃຊ້ຜ້າຮອງນັ່ງບໍ່ມີຊາຍໄດ້)
໑໐. ຊາຕະຣູປະຣະຊະຕະ (ຮັບຄຳຮັບເງິນໄດ້)

### ເລື້ອງພຣະຍະສະກາກັນຖະກະບຸດ

ສະໄໝນັ້ນ ທ່ານພຣະຍະສະກາກັນຖະກະບຸດທ່ຽວຈາຣິກຢູ່ໃນແຄວ້ນວັດຊີ ໄປເຖິງນະຄອນເວສາລີ ໄດ້ຂ່າວວ່າ ທ່ານພຣະຍະສະກາກັນຖະກະບຸດພັກຢູ່ທີ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ

ສະໄໝນັ້ນ ພິກຂຸວັດຊີບຸດທັງຫຼາຍຊາວນະຄອນເວສາລີ ໃນມື້ອຸໂປສົດນັ້ນ ໃຊ້ຖາດຄຳສຳຣິດຕັກນ້ຳໄວ້ຈົນເຕັມທ່າມກາງພິກຂຸສົງ ແລ້ວແນະນຳພວກອຸປາສົກອຸປາສິກາຊາວນະຄອນເວສາລີ ຜູ້ຜ່ານມາຜ່ານໄປວ່າ "ທ່ານທັງຫຼາຍ ພວກທ່ານຈົ່ງຖວາຍຣູປິຍະແກ່ສົງ ໜຶ່ງກະຫາປະນະແດ່ ເຄິ່ງກະຫາປະນະແດ່ ໜຶ່ງບາດແດ່ ໜຶ່ງມາສົກແດ່ ສົງມີທຸລະທີ່ຕ້ອງເຮັດດ້ວຍບໍຣິຂານ"

ເມື່ອພວກພິກຂຸວັດຊີບຸດກ່າວແນວນີ້ ທ່ານພຣະຍະສະກາກັນຖະກະບຸດຈຶ່ງບອກພວກ ອຸປາສົກອຸປາສິກາຊາວນະຄອນເວສາລີດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຢ່າຖວາຍຣູປິຍະແກ່ສົງ ໜຶ່ງກະຫາປະນະແດ່ ເຄິ່ງກະຫາປະນະແດ່ ໜຶ່ງບາດແດ່ ໜຶ່ງມາສົກແດ່ ຄຳແລະເງິນ ບໍ່ສົມຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດ ພຣະສະມະນະເຊື້ອສາຍສາກະຍະບຸດບໍ່ຍິນດີຄຳແລະເງິນ ບໍ່ຮັບຄຳແລະເງິນ ພຣະສະມະນະເຊື້ອສາຍສາກະຍະບຸດທັງຫຼາຍປ່ອຍວາງແກ້ວມະນີແລະຄຳ ປາສະຈາກຄຳແລະເງິນ"

ພວກອຸປາສົກອຸປາສິກາຊາວນະຄອນເວສາລີແມ່ນອັນທ່ານພຣະຍະສະກາກັນຖະກະບຸດກ່າວເຕືອນ ແນວນີ້ ກໍຍັງຂືນຖວາຍຣູປິຍະແກ່ສົງ ໜຶ່ງກະຫາປະນະແດ່ ເຄິ່ງກະຫາປະນະແດ່ ໜຶ່ງບາດແດ່ ໜຶ່ງມາສົກແດ່ຢູ່ນັ້ນເອງ

ເມື່ອຜ່ານຄືນນັ້ນໄປ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ໄດ້ແບ່ງເງິນນັ້ນຕາມຈຳນວນ ພິກຂຸທັງຫຼາຍ ລຳດັບນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີໄດ້ກ່າວກັບທ່ານພຣະຍະສະກາກັນຖະກະບຸດດັ່ງນີ້ວ່າ "ທ່ານຍະສະ ເງິນຈຳນວນນີ້ເປັນສ່ວນແບ່ງຂອງທ່ານ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານທັງຫຼາຍ ຂ້ານ້ອຍບໍ່ມີສ່ວນແບ່ງເງິນ ຂ້ານ້ອຍບໍ່ຍິນດີເງິນ"

ຄັ້ງນັ້ນ ພິກຂຸວັດຊີບຸດຊາວນະຄອນເວສາລີກ່າວວ່າ "ທ່ານທັງຫຼາຍ ທ່ານພຣະຍະສະກາກັນຖະກະບຸດອົງນີ້ດ່າກ່າວໂທດພວກອຸປາສົກອຸປາສິກາຜູ້ມີສັດທາເຫຼື້ອມໃສ ເຮັດໃຫ້ເຂົາບໍ່ມີສັດທາ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະລົງປະຕິສາຣະນີຍະກຳ[໑]ແກ່ທ່ານ" ແລ້ວໄດ້ລົງປະຕິສາຣະນີຍະກຳແກ່ທ່ານ ພຣະຍະສະກາກັນຖະກະບຸດ

## ລົງປະຕິສາຣະນີຍະກຳໂດຍບໍ່ຊອບທຳ

ລຳດັບນັ້ນ ທ່ານພຣະຍະສະກາກັນຖະກະບຸດບອກພວກພິກຂຸວັດຊີບຸດຊາວນະຄອນເວສາລີດັ່ງນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ສົງເພິ່ງໃຫ້ອະນຸທູດແກ່ພິກຂຸຜູ້ຖືກລົງປະຕິສາຣະນີຍະກຳ ພວກທ່ານຈົ່ງໃຫ້ອະນຸທູດແກ່ເຮົາ"

ຄັ້ງນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຈຶ່ງແຕ່ງຕັ້ງພິກຂຸອົງໜຶ່ງໃຫ້ເປັນອະນຸທູດ ແກ່ທ່ານພຣະຍະສະກາກັນຖະກະບຸດ ຕໍ່ມາ ທ່ານພຣະຍະສະກາກັນຖະກະບຸດພ້ອມພຣະອະນຸທູດພາກັນເຂົ້າໄປນະຄອນເວສາລີ ແລ້ວຊີ້ແຈ່ງພວກອຸປາສົກອຸປາສິກາຊາວນະຄອນເວສາລີດັ່ງນີ້ວ່າ "ອາດຕະມາກ່າວອະທຳວ່າເປັນອະທຳ ກ່າວທຳວ່າເປັນທຳ ກ່າວສິ່ງບໍ່ແມ່ນວິໄນວ່າເປັນ

ສິ່ງບໍ່ແມ່ນວິໄນ ກ່າວວິໄນວ່າເປັນວິໄນ ແຕ່ກັບຖືກກ່າວຫາວ່າ ດ່າກ່າວໂທດອຸປາສົກອຸປາສິກາຜູ້ມີສັດທາເຫຼື້ອມໃສ ເຮັດໃຫ້ເຂົາໝົດສັດທາ

## ເຄື່ອງເສົ້າໝອງຂອງສະມະນະພາມ ໔ ປະການ

[໔໑] (ທ່ານພຣະຍະສະກາກັນຖະກະບຸດກ່າວຕໍ່ໄປວ່າ) ທ່ານທັງຫຼາຍ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະຄະຫະບໍດີ ເຂດນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນແລະດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ ໔ ປະການ

ສິ່ງມົວໝອງ ໔ ປະການຄື

໑. ກ້ອນເພື້ອເປັນສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດ ມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ
໒. ໝອກເປັນສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດ ມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ
໓. ຄວັນແລະຝຸ່ນໄງ່ເປັນສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດ ມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ
໔. ຣາຫູຜູ້ເປັນຈອມອະສູນເປັນສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດ ມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ

ພິກຂຸທັງຫຼາຍ ສິ່ງມົວໝອງທີ່ເປັນເຫດໃຫ້ດວງຈັນດວງອາທິດມົວໝອງ ບໍ່ສ່ອງແສງ ບໍ່ສະຫວ່າງ ບໍ່ຮຸ່ງເຮືອງ ໔ ປະການເຫຼົ່ານີ້ແລ

ເຊັ່ນດຽວກັນ ພິກຂຸທັງຫຼາຍ ອຸປະກິເລດເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ໔ ປະການນີ້

ອຸປະກິເລດ ໔ ປະການຄື

໑. ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງດື່ມສຸຣາ ແລະເມໄຣ ບໍ່ເວັ້ນຂາດຈາກການດື່ມສຸຣາແລະເມໄຣ

ພິກຂຸທັງຫຼາຍ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໑

໘. ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງເສບເມຖຸນທຳ ບໍ່ເວັ້ນຂາດ ຈາກການ
ເສບເມຖຸນທຳ

ພິກຂຸທັງຫຼາຍ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະຫງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໘

໓. ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງຍິນດີຄຳແລະເງິນ ບໍ່ເວັ້ນຂາດຈາກການ
ຍິນດີຄຳແລະເງິນ

ພິກຂຸທັງຫຼາຍ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະຫງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໓

໔. ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງດຳເນີນຊີວິດດ້ວຍມິດສາຊີບ ບໍ່ເວັ້ນຂາດ
ຈາກມິດສາຊີບ

ພິກຂຸທັງຫຼາຍ ນີ້ເປັນອຸປະກິເລດທີ່ເປັນເຫດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະຫງ່າ ບໍ່ຜ່ອງໃສ ບໍ່ຮຸ່ງເຮືອງ ປະການທີ ໔"

ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ແລ້ວ ພຣະສຸຄົດເຈົ້າເມື່ອຕັດພຣະດຳຣັດ ນີ້ແລ້ວ ພຣະສາດສະດາໄດ້ຕັດປະພັນຄາຖາວ່າ

ສະມະນະພາມພວກໜຶ່ງ ຖືກຣາຄະແລະໂທສະປົກຄຸມ
ຖືກອະວິດຊາຫຸ້ມຫໍ່ຍິນດີຮູບທີ່ໜ້າຮັກ ດື່ມສຸຣາແລະເມໄຣ
ເສບເມຖຸນທຳ ໂງ່ຈ້າ ຍິນດີເງິນແລະຄຳ
ສະມະນະພາມພວກໜຶ່ງດຳເນີນຊີວິດດ້ວຍມິດສາຊີບ
ພຣະພຸດທະເຈົ້າຜູ້ເປັນເຜົ່າພັນພຣະອາທິດ
ຕັດອຸປະກິເລດທີ່ເຮັດໃຫ້ສະມະນະພາມພວກໜຶ່ງມົວໝອງ ບໍ່ສະຫງ່າ
ບໍ່ຜ່ອງໃສ ເປັນທີ່ຮູ້ກັນ ບໍ່ບໍລິສຸດ ມີທຸລີ ຖືກຄວາມມືດປົກຄຸມ
ເປັນຂ້າທາດແຫ່ງຕັນຫາ ຖືກຕັນຫາຊັກນຳໃຫ້ອັດຕະພາບທຍາບ
ຈະເລີນເຕີບໃຫຍ່ ຍ່ອມຍິນດີການເກີດໃໝ່[១]

ອາດຕະມາມີວາທະແນວນີ້ ກ່າວອະທຳວ່າເປັນອະທຳ ກ່າວທຳວ່າເປັນທຳ ກ່າວສິ່ງບໍ່ແມ່ນວິໄນວ່າເປັນສິ່ງບໍ່ແມ່ນວິໄນ ກ່າວວິໄນວ່າເປັນວິໄນ ແຕ່ກັບຖືກກ່າວຫາວ່າ ດ່າ ກ່າວໂທດອຸປາສົກອຸປາສິກາຜູ້ມີສັດທາເຫຼື້ອມໃສ ເຮັດໃຫ້ເຂົາໝົດສັດທາ

# ເລື້ອງນາຍບ້ານຊື່ມະນີຈູລະກະ

[໔໔໗] (ທ່ານພຣະຍະສະກາກັນຖະກະບຸດກ່າວຕໍ່ໄປວ່າ) ທ່ານທັງຫຼາຍ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ

ຄັ້ງນັ້ນ ພວກຂ້າຣາດຊະບໍຣິພານນັ່ງປະຊຸມກັນໃນຣາຊະບໍລິສັດ ພາຍໃນພະຣາດຊະວັງ ໄດ້ສົນທະນາກັນດັ່ງນີ້ວ່າ "ຄຳແລະເງິນຍ່ອມສົມຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ່ພວກພຣະສະມະນະເຊື້ອສາຍສາກະຍະບຸດຍິນດີຄຳແລະເງິນໄດ້ບໍ ພວກພຣະສະມະນະເຊື້ອສາຍສາກະຍະບຸດຮັບຄຳແລະເງິນໄດ້ບໍ"

ທ່ານທັງຫຼາຍ ສະໄໝນັ້ນ ນາຍບ້ານຊື່ມະນີຈູລະກະນັ່ງຢູ່ໃນບໍລິສັດນັ້ນດ້ວຍ ລຳດັບນັ້ນ ນາຍບ້ານຊື່ມະນີຈູລະກໍໄດ້ກ່າວກັບບໍລິສັດນັ້ນດັ່ງນີ້ວ່າ "ທ່ານທັງຫຼາຍ ພວກທ່ານຢ່າໄດ້ກ່າວແນວນີ້ ຄຳແລະເງິນບໍ່ສົມຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດ ພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ່ຍິນດີຄຳແລະເງິນ ບໍ່ຮັບຄຳແລະເງິນ ພວກພຣະສະມະນະ ເຊື້ອສາຍສາກະຍະບຸດປ່ອຍວາງແກ້ວມະນີແລະຄຳ ປາສະຈາກຄຳແລະເງິນ"

ທ່ານທັງຫຼາຍ ນາຍບ້ານຊື່ມະນີຈູລະກະສາມາດຊີ້ແຈ່ງໃຫ້ບໍລິສັດນັ້ນເຂົ້າໃຈ

ເມື່ອນາຍບ້ານຊື່ມະນີຈູລະກະຊີ້ແຈ່ງໃຫ້ບໍລິສັດນັ້ນເຂົ້າໃຈແລ້ວ ຈຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຖວາຍອະພິວາດແລ້ວ ນັ່ງທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂ້າພຣະອົງຂໍພຣະວະໂຣກາດ ພວກຂ້າຣາດຊະບໍຣິພານນັ່ງປະຊຸມກັນໃນຣາຊະບໍລິສັດ ພາຍໃນພະຣາດຊະວັງໄດ້ສົນທະນາກັນດັ່ງນີ້ວ່າ ຄຳແລະເງິນສົມຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ ພວກພຣະສະມະນະເຊື້ອສາຍສາກະຍະບຸດ ຍິນດີຄຳແລະເງິນໄດ້ບໍ ຄຳແລະເງິນໄດ້ບໍ

ພຣະອົງຜູ້ຈະເລີນ ເມື່ອບໍລິສັດນັ້ນກ່າວແນວນີ້ ຂ້າພຣະອົງໄດ້ກ່າວກັບບໍລິສັດນັ້ນດັ່ງນີ້ວ່າ ທ່ານທັງຫຼາຍ ພວກທ່ານຢ່າກ່າວແນວນີ້ ຄຳແລະເງິນບໍ່ສົມຄວນແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດ ພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ່ຍິນດີຄຳແລະເງິນ ບໍ່ຮັບຄຳແລະເງິນ ພວກພຣະສະມະນະເຊື້ອສາຍສາກະຍະບຸດປ່ອຍວາງແກ້ວມະນີແລະ ຄຳ ປາສະຈາກຄຳແລະເງິນ

ພຣະອົງຜູ້ຈະເລີນ ຂ້າພຣະອົງສາມາດຊີ້ແຈ່ງໃຫ້ບໍລິສັດນັ້ນເຂົ້າໃຈໄດ້ ເມື່ອຊີ້ແຈ່ງແນວນີ້ຊື່ວ່າຊີ້ແຈ່ງຕາມພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ແຕ່ຊີ້ແຈ່ງ ຕາມສົມເຫດສົມຜົນ ແລະຄຳກ່າວທີ່ເໝາະແກ່ວາທະ ຂອງພຣະອົງຈະບໍ່ຖືກຕຳໜິແດ່ບໍ ແມ່ນໜ້ອຍໜຶ່ງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຍບ້ານ ຖ້າຈັ່ງຊັ້ນແລ້ວ ທ່ານເມື່ອຊີ້ແຈ່ງແນວນີ້ຊື່ວ່າຊີ້ແຈ່ງ ຕາມເຮົາ ບໍ່ກ່າວຕູ່ເຮົາດ້ວຍຄຳຕົວະ ແຕ່ຊີ້ແຈ່ງຕາມສົມເຫດສົມຜົນ ແລະຄຳກ່າວທີ່ເໝາະແກ່ວາທະຂອງເຮົາຈະບໍ່ຖືກຕຳໜິແມ່ນໜ້ອຍໜຶ່ງ ນາຍບ້ານ ຄຳແລະເງິນບໍ່ສົມຄວນ ແກ່ພວກພຣະສະມະນະເຊື້ອສາຍສາກະຍະບຸດໂດຍແທ້ ພວກພຣະສະມະນະເຊື້ອສາຍສາກະຍະບຸດບໍ່ຍິນດີ ຄຳແລະເງິນ ບໍ່ຮັບຄຳແລະເງິນ ພວກພຣະສະມະນະເຊື້ອສາຍສາກະຍະບຸດປ່ອຍວາງແກ້ວມະນີແລະຄຳ ພວກພຣະສະມະນະເຊື້ອສາຍສາກະຍະບຸດປາສະຈາກຄຳແລະເງິນ ນາຍບ້ານ ຄຳແລະເງິນຄວນແກ່ອົງໃດ ແມ່ນກາມມະຄຸນ ໕ ກໍຄວນແກ່ຜູ້ນັ້ນ ກາມມະຄຸນ ໕ ຄວນແກ່ອົງໃດທ່ານເພິ່ງຊົງຈຳຜູ້ນັ້ນໂດຍສ່ວນດຽວວ່າ ບໍ່ມີສະມະນະທຳ ບໍ່ມີທຳຂອງເຊື້ອສາຍສາກະຍະບຸດອັນໜຶ່ງ ເຮົາກ່າວປຽບທຽບແນວນີ້ວ່າ ຜູ້ຕ້ອງການຫຍ້າເພິ່ງສະແຫວງຫາຫຍ້າ ຜູ້ຕ້ອງການໄມ້ເພິ່ງສະແຫວງຫາໄມ້ ຜູ້ຕ້ອງການກວຽນເພິ່ງສະແຫວງຫາກວຽນ ຜູ້ຕ້ອງການຮູ້ຈັກຕົນເອງເພິ່ງສະແຫວງຫາຕົນເອງ ແຕ່ເຮົາບໍ່ເຄີຍກ່າວເຖິງຄຳແລະເງິນວ່າ ເປັນສິ່ງທີ່ຄວນຍິນດີ ຄວນສະແຫວງຫາ ບໍ່ວ່າ ກໍລະນີໃດ ໆ"

ອາດຕະມາຜູ້ມີວາທະແນວນີ້ ກ່າວອະທຳວ່າເປັນອະທຳ ກ່າວທຳວ່າເປັນທຳ ກ່າວສິ່ງບໍ່ແມ່ນວິໄນວ່າເປັນສິ່ງບໍ່ແມ່ນວິໄນ ກ່າວວິໄນວ່າເປັນວິໄນ ແຕ່ກັບຖືກກ່າວຫາວ່າ ດ່າ ກ່າວໂທດອຸປາສົກອຸປາສິກາຜູ້ມີສັດທາເຫຼື້ອມໃສ ເຮັດໃຫ້ເຂົາໝົດສັດທາ

## ເລື້ອງພຣະອຸປະນັນທະສາກະຍະບຸດ

[໔໔໙] (ທ່ານພຣະຍະສະກາກັນຖະກະບຸດກ່າວຕໍ່ໄປວ່າ) "ທ່ານທັງຫຼາຍ ສະໄໝໜຶ່ງພຣະຜູ້ມີພຣະພາກເຈົ້າຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ ຊົງຫ້າມຄຳແລະເງິນ ແລະຊົງບັນຍັດສິກຂາບົດໃນນະຄອນຣາດຊະຄຶ ອາດຕະມາຜູ້ມີວາທະແນວນີ້ ກ່າວອະທຳວ່າເປັນອະທຳ ກ່າວທຳວ່າເປັນທຳ ກ່າວສິ່ງບໍ່ແມ່ນວິໄນວ່າເປັນສິ່ງບໍ່ແມ່ນວິໄນ ກ່າວວິໄນວ່າເປັນວິໄນແຕ່ກັບຖືກກ່າວຫາວ່າ ດ່າກ່າວໂທດອຸປາສົກອຸປາສິກາຜູ້ມີສັດທາເຫຼື້ອມໃສ ເຮັດໃຫ້ເຂົາໝົດສັດທາ"

ເມື່ອທ່ານພຣະຍະສະກາກັນຖະກະບຸດກ່າວແນວນີ້ ພວກອຸປາສົກອຸປາສິກາຊາວນະຄອນເວສາລີ ໄດ້ກ່າວດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທ່ານພຣະຍະສະກາກັນຖະກະບຸດອົງດຽວທໍ່ນັ້ນທີ່ເປັນພຣະສະມະນະເຊື້ອສາຍສາກະຍະບຸດ ພວກທ່ານທັງໝົດນີ້ບໍ່ແມ່ນພຣະສະມະນະເຊື້ອສາຍສາກະຍະບຸດ ຂໍ ທ່ານພຣະຍະສະກາກັນຖະກະບຸດຈົ່ງຢູ່ນະຄອນເວສາລີ ພວກເຮົາຈະອຸປັດຖາກທ່ານພຣະຍະສະກາກັນຖະກະ ບຸດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ"

ເມື່ອທ່ານພຣະຍະສະກາກັນຖະກະບຸດຊີ້ແຈ່ງແກ່ພວກອຸປາສົກອຸປາສິກາຊາວນະຄອນເວສາລີໃຫ້ເຂົ້າໃຈດີແລ້ວ ຈຶ່ງເດີນທາງໄປອາຣາມພ້ອມກັບພິກຂຸອະນຸທູດ

## ລົງອຸກເຂປະນີຍະກຳໂດຍບໍ່ຊອບທຳ

ຄັ້ງນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ຖາມພິກຂຸອະນຸທູດວ່າ "ທ່ານພຣະຍະສະກາກັນຖະກະບຸດຂໍໂທດພວກອຸປາສົກອຸປາສິກາຊາວນະຄອນເວສາລີແລ້ວບໍ"

ພິກຂຸອະນຸທູດຕອບວ່າ "ທ່ານທັງຫຼາຍ ພວກອຸປາສົກອຸປາສິກາເຮັດພວກເຮົາໃຫ້ເປັນຄົນຊົ່ວ ຍ້ອງຍໍທ່ານພຣະຍະສະກາກັນຖະກະບຸດຜູ້ດຽວ ໃຫ້ເປັນພຣະສະມະນະເຊື້ອສາຍສາກະຍະບຸດເຮັດພວກເຮົາບໍ່ໃຫ້ເປັນພຣະສະມະນະເຊື້ອສາຍສາກະຍະບຸດ"

ລຳດັບນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ເປີກສາກັນວ່າ "ທ່ານທັງຫຼາຍ ພຣະຍະສະກາກັນຖະກະບຸດເຊິ່ງພວກເຮົາຍັງບໍ່ໄດ້ແຕ່ງຕັ້ງເລີຍກໍປະກາດໂຕແກ່ພວກຊາວບ້ານ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະລົງອຸກເຂປະນີຍະກຳແກ່ທ່ານ" ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ເຫຼົ່ານັ້ນປະສົງຈະລົງອຸກເຂປະນີຍະກຳແກ່ທ່ານພຣະຍະສະກາກັນຖະກະບຸດນັ້ນ ຈຶ່ງປະຊຸມເປີກສາກັນ

ສະໄໝນັ້ນ ທ່ານພຣະຍະສະກາກັນຖະກະບຸດເຫາະໄປຜາກົດທີ່ນະຄອນໂກສຳພີ

[໔໕໐] ຕໍ່ມາ ທ່ານພຣະຍະສະກາກັນຖະກະບຸດສົ່ງທູດໄປຫາພິກຂຸທັງຫຼາຍຊາວເມືອງປາເຖີຍະແລະພິກຂຸທັງຫຼາຍຊາວອະວັນຕີທັກຂີນາບົດ ໂດຍກ່າວວ່າ "ທ່ານທັງຫຼາຍ ພວກເຮົາຈົ່ງມາຊ່ອຍກັນວິນິດໄສອະທິກອນນີ້ ກ່ອນທີ່ອະທຳຈະຮຸ່ງເຮືອງ ທຳຈະຖືກຄັດຄ້ານ ສິ່ງບໍ່ແມ່ນວິໄນຈະຮຸ່ງເຮືອງ ວິໄນຈະຖືກຄັດຄ້ານ ກ່ອນທີ່ພວກອະທຳວາທີຈະມີກຳລັງ ພວກທຳວາທີຈະອ່ອນກຳລັງ ພວກອະວິນະຍະວາທີຈະມີກຳລັງ ພວກວິນະຍະວາທີຈະອ່ອນກຳລັງ"

## ເລື້ອງພຣະສຳພູຕະສານະວາສີ

ສະໄໝນັ້ນ ທ່ານພຣະສຳພູຕະສານະວາສີຢູ່ທີ່ອະໂຫຄັງຄະບັນພົດ ຕໍ່ມາ ທ່ານພຣະຍະສະກາກັນຖະກະບຸດເຂົ້າໄປຫາທ່ານພຣະສຳພູຕະສານະວາສີ ຢູ່ທີ່ອະໂຫຄັງຄະບັນພົດ[໑] ບັດແລ້ວອະພິວາດ ນັ່ງທີ່ສົມຄວນ ໄດ້ກ່າວກັບທ່ານພຣະສຳພູຕະສານະວາສີດັ່ງນີ້ວ່າ "ທ່ານຜູ້ຈະເລີນ ພວກພິກຂຸ ວັດຊີບຸດຊາວນະຄອນເວສາລີເຫຼົ່ານີ້ສະແດງວັດຖຸ ໑໐ ປະການໃນນະຄອນເວສາລີ ຄື

໑. ສິງຄີໂລນະກັບປະ (ເກັບເກືອໄວ້ໃນເຂົາສັດ[໑]ແລ້ວສັນກັບອາຫານຣົດບໍ່ເຄັມໄດ້)

๔. ທະວັງຄຸລະກັບປະ (ສັນອາຫານເມື່ອເງົາເລີຍເວລາທ່ຽງໄປ ໔ ອົງຄຸລີໄດ້)
໓. ຄາມັນຕະຣະກັບປະ (ເຂົ້າບ້ານນສັນອາຫານທີ່ບໍ່ເປັນເງື່ອນໄດ້)
໔. ອາວາສະກັບປະ (ເຮັດອຸໂປສົດແຍກກັນໃນອາວາດທີ່ມີສີມາດຽວກັນໄດ້)
໕. ອະນຸມະຕິກັບປະ (ເຮັດສັງຄະກຳ ໃນເມື່ອພິກຂຸທັງຫຼາຍຍັງມາບໍ່ພ້ອມ ແລ້ວຂໍອະນຸມັດພາຍຫຼັງໄດ້)
໖. ອາຈິນນະກັບປະ (ປະພຶດຕາມແບບທີ່ພຣະອຸປັດຊາອາຈານເຄີຍປະພຶດມາໄດ້)
໗. ອະມະຖິຕະກັບປະ (ສັນນົມສົດທີ່ປ່ຽນໄປແລ້ວ ແຕ່ຍັງບໍ່ເປັນນົມສົ້ມໄດ້)
໘. ຊະໂລຄີ (ດື່ມສຸຣາອ່ອນ ໆ ໄດ້)
໙. ອະທະສະກະນິສີທະນະ (ໃຊ້ຜ້າຮອງນັ່ງບໍ່ມີຊາຍໄດ້)
໑໐. ຊາຕະຣູປະຣະຊະຕະ (ຮັບຄຳຮັບເງິນໄດ້)

ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈົ່ງຊ່ອຍກັນວິນິດໄສອະທິກອນນີ້ ກ່ອນທີ່ອະທຳຈະຮຸ່ງເຮືອງ ທຳຈະຖືກຄັດຄ້ານ ສິ່ງບໍ່ແມ່ນວິໄນຈະຮຸ່ງເຮືອງ ວິໄນຈະຖືກຄັດຄ້ານ ກ່ອນທີ່ພວກອະທຳວາທີຈະມີກຳລັງ ພວກທຳວາທີຈະອ່ອນກຳລັງ ພວກອະວິນະຍະວາທີຈະມີກຳລັງ ພວກວິນະຍະວາທີຈະອ່ອນກຳລັງ

ທ່ານພຣະສຳພູຕະສານະວາສີຮັບຄຳຂອງທ່ານພຣະຍະສະກາກັນຖະກະບຸດແລ້ວ

## ເລື້ອງພິກຂຸຊາວເມືອງປາເຖີຍຍະທັກຂິນາບົດ

ສະໄໝນັ້ນ ພິກຂຸທັງຫຼາຍຊາວເມືອງປາເຖີຍຍະປະມານ ໖໐ ອົງ ທັງໝົດຖືທຸດົງ ຄື ຢູ່ປ່າເປັນຂໍ້ວັດປະຕິບັດ ທັງໝົດທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ທັງໝົດຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ທັງໝົດມີໄຕຣຈີວອນເປັນຂໍ້ວັດປະຕິບັດ ທັງໝົດເປັນພຣະອະຣະຫັນ ປະຊຸມເປີກສາຫາລືກັນທີ່ອະໂຫຄັງຄະບັນພົດ ພິກຂຸທັງຫຼາຍຊາວອະວັນຕີທັກຂິນາບົດປະມານ ໘໐ ອົງ ລາງພວກຖືທຸດົງ ຄື ຢູ່ປ່າເປັນຂໍ້ວັດປະຕິບັດ ລາງພວກທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ລາງພວກຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ລາງພວກມີໄຕຣຈີວອນເປັນຂໍ້ວັດປະຕິບັດ ທັງໝົດເປັນພຣະອະຣະຫັນ ປະຊຸມເປີກສາຫາລືກັນທີ່ອະໂຫຄັງຄະບັນພົດ

ຄັ້ງນັ້ນ ພິກຂຸຜູ້ເຖຣະທັງຫຼາຍກຳລັງເປີກສາກັນ ໄດ້ເປີກສາກັນດັ່ງນີ້ວ່າ “ອະທິກອນນີ້ຫຍາບຊ້າຮຸນແຮງ ເຮັດແນວໃດພວກເຮົາຈຶ່ງຈະໄດ້ພັກພວກທີ່ເຮັດໃຫ້ພວກເຮົາເຂັ້ມແຂງຫຼາຍກວ່ານີ້ນໍ”

# เลื่องพระเรวะตะ

[๔๕๑] ຄັ້ງນັ້ນ ທ່ານພຣະເຣວະຕະຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັຕິ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ພັກຢູ່ທີ່ເມືອງໂສເຣີຍຍະ

ຄັ້ງນັ້ນ ພິກຂຸຜູ້ເຖຣະທັງຫຼາຍເມື່ອຈະເປີກສາຫາລືໄດ້ເປີກສາກັນດັ່ງນີ້ວ່າ "ທ່ານພຣະເຣວະຕະຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັຕິ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ພັກຢູ່ທີ່ເມືອງໂສເຣີຍຍະ ຖ້າພວກເຮົາໄດ້ທ່ານພຣະເຣວະຕະມາເປັນພັກພວກ ກໍຈະເຂັ້ມແຂງຍິ່ງກວ່ານີ້"

ທ່ານພຣະເຣວະຕະໄດ້ຍິນພິກຂຸຜູ້ເຖຣະທັງຫຼາຍກຳລັງເປີກສາກັນດ້ວຍທິບພະໂສຕະທາດອັນບໍລິສຸດເໜືອມະນຸດ ແລ້ວໄດ້ມີຄວາມຄິດດັ່ງນີ້ວ່າ "ອະທິກອນນີ້ຫຍາບຊ້າຮຸນແຮງ ການທີ່ເຮົາຈະດູດາຍຕໍ່ອະທິກອນນີ້ບໍ່ສົມຄວນ ເວລານີ້ພິກຂຸເຫຼົ່ານັ້ນກຳລັງມາຫາເຮົາ ເຮົານັ້ນຄຸກຄີກັບພິກຂຸເຫຼົ່ານັ້ນຈະຢູ່ບໍ່ຜາສຸກ ຖ້າຈັ່ງໃດເຮົາຄວນໄປສາກ່ອນ"

ລຳດັບນັ້ນ ທ່ານພຣະເຣວະຕະຈຶ່ງເດີນທາງຈາກເມືອງໂສເຣີຍຍະໄປເມືອງສັງກັດສະ

ຕໍ່ມາ ພິກຂຸຜູ້ເຖຣະທັງຫຼາຍເດີນທາງໄປເມືອງໂສເຣີຍຍະ ຖາມວ່າ "ທ່ານພຣະເຣວະຕະພັກຢູ່ບ່ອນໃດ"

ພວກເຂົາຕອບວ່າ "ທ່ານພຣະເຣວະຕະເດີນທາງໄປເມືອງສັງກັດສະ"

ຕໍ່ມາ ທ່ານພຣະເຣວະຕະເດີນທາງຈາກເມືອງສັງກັດສະໄປເມືອງກັນນະກຸດຊະ

ພິກຂຸຜູ້ເຖຣະທັງຫຼາຍພາກັນເດີນທາງໄປເມືອງສັງກັດສະ ຖາມວ່າ "ທ່ານພຣະເຣວະຕະພັກ ຢູ່ບ່ອນໃດ"

ພວກເຂົາຕອບວ່າ "ທ່ານພຣະເຣວະຕະເດີນທາງໄປເມືອງກັນນະກຸດຊະ"

ຕໍ່ມາ ທ່ານພຣະເຣວະຕະເດີນທາງຈາກເມືອງກັນນະກຸດຊະໄປເມືອງອຸທຸມພຣະ

ພິກຂຸຜູ້ເຖຣະທັງຫຼາຍພາກັນເດີນທາງໄປເມືອງກັນນະກຸດຊະ ຖາມວ່າ "ພຣະເຣວະຕະພັກ ຢູ່ບ່ອນໃດ"

ພວກເຂົາຕອບວ່າ "ທ່ານພຣະເຣວະຕະເດີນທາງໄປເມືອງອຸທຸມພຣະ"

ຕໍ່ມາ ທ່ານພຣະເຣວະຕະເດີນທາງຈາກເມືອງອຸທຸມພຣະໄປເມືອງອັກຄະລະປຸຣະ

ພິກຂຸຜູ້ເຖຣະທັງຫຼາຍພາກັນເດີນທາງໄປເມືອງອຸທຸມພຣະ ຖາມວ່າ "ທ່ານພຣະເຣວະຕະພັກຢູ່ບ່ອນໃດ"

ພວກເຂົາຕອບວ່າ "ທ່ານພຣະເຣວະຕະເດີນທາງໄປເມືອງອັກຄະລະປຸຣະ"

ຕໍ່ມາ ທ່ານພຣະເຣວະຕະເດີນທາງຈາກເມືອງອັກຄະລະປຸຣະໄປສູ່ສະຫະຊາຕິນະຄອນ

ພິກຂຸຜູ້ເຖຣະທັງຫຼາຍພາກັນເດີນທາງໄປເມືອງອັກຄະລະປຸຣະ ຖາມວ່າ "ທ່ານພຣະເຣວະຕະ ພັກຢູ່ບ່ອນໃດ"

ພວກເຂົາຕອບວ່າ "ທ່ານພຣະເຣວະຕະເດີນທາງໄປສະຫະຊາຕະນະຄອນ"

ພິກຂຸຜູ້ເຖຣະທັງຫຼາຍຍ່າງຕາມໄປພົບທ່ານພຣະເຣວະຕະທີ່ສະຫະຊາຕິນະຄອນ

## ຄຳຖາມ-ຄຳຕອບກ່ຽວກັບວັດຖຸ ໑໐ ປະການ

[໔໕໔] ຄັ້ງນັ້ນ ທ່ານພຣະສຳພູຕະສານະວາສີ ບອກທ່ານພຣະຍະສະກາກັນຖະກະບຸດວ່າ "ທ່ານ ທ່ານພຣະເຣວະຕະອົງນີ້ ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຖ້າພວກເຮົາຈະຖາມບັນຫາ ທ່ານສາມາດຈະແກ້ບັນຫາຂໍ້ດຽວໄດ້ຕະຫຼອດທັງຄືນ ແຕ່ເວລານີ້ທ່ານພຣະເຣວະຕະຈະເຊີນພິກຂຸອັນເຕວາສິກໃຫ້ສູດສະຣະພັນຍະ ເມື່ອພິກຂຸອົງນັ້ນສູດ ສະຣະພັນຍະຈົບ ທ່ານຄວນເຂົ້າໄປຫາທ່ານພຣະເຣວະຕະຖາມວັດຖຸ ໑໐ ປະການເຫຼົ່ານີ້"

ທ່ານພຣະຍະສະກາກັນຖະກະບຸດຮັບຄຳທ່ານພຣະສຳພູຕະສານະວາສີແລ້ວ

ຄັ້ງນັ້ນ ທ່ານພຣະເຣວະຕະເຊີນພິກຂຸອັນເຕວາສິກໃຫ້ສູດສະຣະພັນຍະ ເມື່ອພິກຂຸອົງນັ້ນສູດສະຣະພັນຍະຈົບ ທ່ານພຣະຍະສະກາກັນຖະກະບຸດຈຶ່ງເຂົ້າໄປຫາທ່ານພຣະເຣວະຕະ ບັດແລ້ວອະພິວາດ ນັ່ງທີ່ສົມຄວນ ໄດ້ຖາມທ່ານພຣະເຣວະຕະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ສິງຄິໂລນະກັບປະ ຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ສິງຄິໂລນະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ການເກັບເກືອໄວ້ໃນເຂົາສັດດ້ວຍ ຕັ້ງໃຈວ່າ ຈະສັນກັບອາຫານຣົດບໍ່ເຄັມ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ທະວັງຄຸນະກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ທະວັງຄຸນະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ການສັນໂພຊະນະໃນເວລາວິການ ເມື່ອເງົາ(ຂອງດວງອາທິດ)ເລີຍ(ເວລາທ່ຽງ)ໄປ ໔ ອົງຄຸລີ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ຄາມັນຕະຣະກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ຄາມັນຕະຣະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ພິກຂຸສັນສຳເລັດແລ້ວ ຫ້າມພັດຕາຫານແລ້ວຄິດວ່າ ຈະເຂົ້າໄປບິລິເວນໝູ່ບ້ານໃນບັດນີ້ ແລ້ວສັນໂພຊະນະທີ່ບໍ່ເປັນເງື່ອນ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ອາວາສະກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ອາວາສະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ອາວາດຫຼາຍແຫ່ງທີ່ມີສີມາສະເໝີກັນ ຈະແຍກກັນເຮັດອຸໂປສົດ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ອະນຸມະຕິກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ອະນຸມະຕິກັບປະຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ສົງແບ່ງພວກກັນເຮັດກຳດ້ວຍ ຕັ້ງໃຈວ່າ ພວກເຮົາຈະໃຫ້ຜູ້ມາແລ້ວອະນຸມັດ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ອາຈິນນະກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ອາຈິນນະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ການປະພຶດຕາມດ້ວຍເຂົ້າໃຈ ວ່າ ສິ່ງນີ້ພຣະອຸປັດຊາຂອງເຮົາປະພຶດມາ ສິ່ງນີ້ພຣະອາຈານຂອງເຮົາປະພຶດມາຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ສິ່ງທີ່ພຣະອຸປັດຊາອາຈານປະພຶດມາ ບາງຢ່າງຄວນບາງຢ່າງບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ອະມະຖິຕະກັບປະຄວນບໍ"

ທ່ານພຣະເຣວະຕະຍ້ອນຖາມວ່າ "ທ່ານ ອະມະຖິຕະກັບປະນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ "ທ່ານຜູ້ຈະເລີນ ນົມສົດທີ່ລະຄວາມເປັນນົມສົດແລ້ວແຕ່ຍັງບໍ່ເຖິງວ່າເປັນນົມສົ້ມ ພິກຂຸທັງຫຼາຍສັນສຳເລັດແລ້ວ ຫ້າມພັດຕາຫານແລ້ວ ຈະດື່ມນົມນັ້ນທີ່ບໍ່ເປັນເງື່ອນ ຄວນບໍ"

ທ່ານພຣະເຣວະຕະຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ "ທ່ານຜູ້ຈະເລີນ ການດື່ມຊະໂລຄິຄວນບໍ"

ພຣະເຣວະຕະຍ້ອນຖາມວ່າ "ທ່ານ ຊະໂລຄິນັ້ນຄືອັນໃດ"

ທ່ານພຣະຍະສະກາກັນຖະກະບຸດຕອບວ່າ “ທ່ານຜູ້ຈະເລີນ ການດື່ມສຸຣາຊະນິດອ່ອນທີ່ຍັງບໍ່ປ່ຽນເປັນນ້ຳເມົາ ຄວນບໍ”

ທ່ານພຣະເຣວະຕະຕອບວ່າ “ທ່ານ ບໍ່ຄວນ”

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ “ທ່ານຜູ້ຈະເລີນ ຜ້າປູນັ່ງບໍ່ມີຊາຍ ຄວນບໍ”

ທ່ານພຣະເຣວະຕະຕອບວ່າ “ທ່ານ ບໍ່ຄວນ”

ທ່ານພຣະຍະສະກາກັນຖະກະບຸດຖາມວ່າ “ທ່ານຜູ້ຈະເລີນ ຄຳແລະເງິນ ຄວນບໍ”

ທ່ານພຣະເຣວະຕະຕອບວ່າ “ທ່ານ ບໍ່ຄວນ”

ທ່ານພຣະຍະສະກາກັນຖະກະບຸດກ່າວວ່າ “ທ່ານຜູ້ຈະເລີນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ສະແດງວັດຖຸ ໑໐ ປະການນີ້ໃນນະຄອນເວສາລີ ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນແລ້ວ ພວກເຮົາ ຈົ່ງຊ່ອຍກັນວິນິດໄສອະທິກອນນີ້ ກ່ອນທີ່ອະທຳຈະຮຸ່ງເຮືອງ ທຳຈະຖືກຄັດຄ້ານ ສິ່ງບໍ່ແມ່ນວິໄນຈະຮຸ່ງເຮືອງ ວິໄນຈະຖືກຄັດຄ້ານ ກ່ອນທີ່ພວກອະທຳວາທີຈະມີກຳລັງ ພວກທຳວາທີຈະອ່ອນກຳລັງ ພວກອະວິນະຍະວາທີຈະມີກຳລັງ ພວກວິນະຍະວາທີຈະອ່ອນກຳລັງ

ທ່ານພຣະເຣວະຕະຮັບຄຳຂອງທ່ານພຣະຍະສະກາກັນຖະກະບຸດແລ້ວ

**ປະຖົມພານະວານ ຈົບ**

## ໔. ທຸຕິຍະພານະວານ

[໔໕໓] ພວກພິກຂຸວັດຊີບຸດຊາວນະຄອນເວສາລີພໍໄດ້ຮູ້ຂ່າວວ່າ “ທ່ານພຣະຍະສະກາກັນຖະກະບຸດປະສົງຈະຮັບໜ້າທີ່ວິນິດໄສອະທິກອນນີ້ ກຳລັງຫາພັກພວກແລະໄດ້ພັກພວກແລ້ວ”

ຄັ້ງນັ້ນແລ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ໄດ້ເປີກສາກັນດັ່ງນີ້ວ່າ “ອະທິກອນເລື້ອງນີ້ຫຍາບຄາຍຮຸນແຮງ ເຮັດແນວໃດພວກເຮົາຈຶ່ງຈະໄດ້ພັກພວກທີ່ເຮັດໃຫ້ເຂັ້ມແຂງຫຼາຍກວ່າ ນີ້ນໍ”

ລຳດັບນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີໄດ້ເປີກສາກັນຕໍ່ໄປດັ່ງນີ້ວ່າ “ທ່ານພຣະເຣວະຕະອົງນີ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຖ້າພວກເຮົາໄດ້ທ່ານພຣະເຣວະຕະມາຮ່ວມເປັນພັກພວກ ກໍຈະເຂັ້ມແຂງຍິ່ງກວ່ານີ້”

ຕໍ່ມາ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຈັດກຽມສະມະນະບໍຣິຂານຢ່າງພຽງພໍ ຄືບາດແດ່ ຈີວອນແດ່ ຜ້າປູນັ່ງແດ່ ກ່ອງເຂັມແດ່ ສາຍແອວແດ່ ຜ້າຕອງນ້ຳແດ່ ກະບອກຕອງນ້ຳແດ່

ລຳດັບນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຂົນສະມະນະບໍຣິຂານນັ້ນໂດຍສານເຮືອໄປສະຫະຊາຕິນະຄອນ ຂຶ້ນຈາກເຮືອ ຢຸດພັກຜ່ອນສັນອາຫານຮ່ວມກັນທີ່ເຫງົ້າໄມ້ແຫ່ງໜຶ່ງ

## ເລື້ອງພຣະສາລະຫະ

ເວລານັ້ນ ທ່ານພຣະສາລະຫະຫຼີບຫຼີກຢູ່ບ່ອນສະງັດ ເກີດຄວາມຄຶດຄຳນຶງຂຶ້ນໃນຈິດແນວນີ້ວ່າ "ພິກຂຸພວກໃດທີ່ເປັນຝ່າຍທຳວາທີ ພິກຂຸຊາວປາຈີນຫຼືຊາວເມືອງປາເຖີຍຍະ"

ຄັ້ງນັ້ນ ຂະນະທີ່ກຳລັງພິຈາລະນາພຣະທຳວິໄນ ທ່ານພຣະສາລະຫະໄດ້ເປີກສາກັນຕໍ່ໄປອີກວ່າ "ພິກຂຸຊາວປາຈີນເປັນຝ່າຍອະທຳວາທີ ພິກຂຸຊາວເມືອງປາເຖີຍຍະເປັນຝ່າຍທຳວາທີ"

ຂະນະນັ້ນ ເທວະດາຊັ້ນສຸດທາວາດຕົນໜຶ່ງ ຮູ້ຄວາມຄຶດຄຳນຶງໃນຈິດຂອງທ່ານດ້ວຍຈິດ (ຂອງຕົນ) ຈຶ່ງຫາຍໄປຈາກເທວະໂລກຊັ້ນສຸດທາວາດແລ້ວມາຜາກົດຕໍ່ໜ້າທ່ານພຣະສາລະຫະ ຄືຄົນມີກຳລັງຢຽດແຂນທີ່ຄູ້ຫຼືຄູ້ແຂນທີ່ຢຽດ ໄດ້ກ່າວກັບທ່ານພຣະສາລະຫະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ດີແລ້ວ ດີແລ້ວ ພິກຂຸຊາວປາຈີນເປັນຝ່າຍອະທຳວາທີ ພິກຂຸຊາວເມືອງປາເຖີຍຍະເປັນຝ່າຍທຳວາທີ ທ່ານໂຜດວາງຕົນຕາມຄວາມຖືກຕ້ອງເທີ້ນ"

ທ່ານພຣະສາລະຫະກ່າວວ່າ "ເທວະດາ ທັງໃນການກ່ອນແລະເວລານີ້ ອາດຕະມາກໍວາງຕົນ ຕາມຄວາມຖືກຕ້ອງ ແຕ່ອາດຕະມາຈະຍັງບໍ່ເປີດເຜີຍຄວາມເຫັນ ຖ້າຈັ່ງໃດ ສົງມັກຈະແຕ່ງຕັ້ງ ອາດຕະມາ(ໃຫ້ເຂົ້າຮ່ວມວິນິດໄສ)ໃນອະທິກອນນີ້ແດ່"

## ເລື້ອງພຣະອຸດຕະຣະ

[໔໕໔] ຕໍ່ມາ ພວກພິກຂຸວັດຊີບຸດຊາວນະຄອນເວສາລີ ຖືສະມະນະບໍຣິຂານນັ້ນເຂົ້າໄປຫາທ່ານພຣະເຣວະຕະເຖິງທີ່ພັກ ແລ້ວໄດ້ກ່າວກັບທ່ານພຣະເຣວະຕະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ຂໍພຣະເຖຣະໂຜດຮັບສະມະນະບໍຣິຂານ ຄື ບາດແດ່ ຈີວອນແດ່ ຜ້າປູນັ່ງແດ່ ກ່ອງເຂັມແດ່ ສາຍແອວແດ່ ຜ້າຕອງນ້ຳແດ່ ກະບອກຕອງນ້ຳແດ່"

ທ່ານພຣະເຣວະຕະກ່າວວ່າ "ບໍ່ລະທ່ານ ເຮົາມີໄຕຣຈີວອນຄົບບໍລິບູນແລ້ວ" ບໍ່ປາຖະໜາຈະຮັບ

ສະໄໝນັ້ນ ພຣະອຸດຕະຣະມີພັນສາ ໒໐ ເປັນອຸປັດຖາກຂອງທ່ານພຣະເຣວະຕະ ຄັ້ງນັ້ນ ພວກພິກຂຸວັດຊີບຸດຊາວນະຄອນເວສາລີໄດ້ເຂົ້າໄປຫາທ່ານພຣະອຸດຕະຣະເຖິງທີ່ພັກ ແລ້ວໄດ້

ກ່າວກັບທ່ານພຣະອຸດຕະຣະດັ່ງນີ້ວ່າ "ຂໍທ່ານພຣະອຸດຕະຣະຈົ່ງຮັບສະມະນະບໍຣິຂານ ຄື ບາດແດ່ ຈີວອນແດ່ ຜ້າປູນັ່ງແດ່ ກ່ອງເຂັມແດ່ ສາຍແອວແດ່ ຜ້າຕອງນ້ຳແດ່ ກະບອກກອງນ້ຳແດ່"

ທ່ານພຣະອຸດຕະຣະກ່າວວ່າ "ບໍ່ລະທ່ານ ເຮົາມີໄຕຣຈີວອນຄົບບໍລິບູນແລ້ວ" ບໍ່ປາຖະໜາຈະຮັບ

ພວກພິກຂຸວັດຊີບຸດຊາວນະຄອນເວສາລີກ່າວວ່າ "ທ່ານອຸດຕະຣະ ຄົນທັງຫຼາຍນ້ອມຖວາຍສະມະນະບໍຣິຂານແດ່ພຣະຜູ້ມີພຣະພາກເຈົ້າ ຖ້າພຣະຜູ້ມີພຣະພາກເຈົ້າຊົງຮັບ ພວກເຂົາກໍດີໃຈ ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮັບ ພວກເຂົາກໍຈະນ້ອມຖວາຍທ່ານພຣະອານົນ ໂດຍຂາບຮຽນວ່າ ທ່ານຜູ້ຈະເລີນ ຂໍພຣະເຖຣະໂຜດຮັບສະມະນະບໍຣິຂານ ສິ່ງທີ່ພຣະເຖຣະຮັບກໍເປັນຄືກັບທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບ ຂໍທ່ານພຣະອຸດຕະຣະໂຜດຮັບສະມະນະບໍຣິຂານເທີ້ນ ສິ່ງທີ່ທ່ານພຣະອຸດຕະຣະຮັບກໍຈະເປັນຄືກັບສິ່ງທີ່ພຣະເຖຣະຮັບຄືກັນ"

ຄັ້ງນັ້ນ ທ່ານພຣະອຸດຕະຣະຖືກພວກພິກຂຸວັດຊີບຸດຊາວນະຄອນເວສາລີບີບຄັ້ນ ຈຶ່ງຮັບຈີວອນຜືນໜຶ່ງແລ້ວກ່າວວ່າ "ພວກທ່ານເພິ່ງແຈ້ງຄວາມປະສົງ"

ພວກພິກຂຸວັດຊີບຸດຊາວນະຄອນເວສາລີກ່າວວ່າ "ຂໍທ່ານພຣະອຸດຕະຣະຈົ່ງບອກພຣະເຖຣະ ວ່າ ທ່ານຜູ້ຈະເລີນ ຂໍພຣະເຖຣະເວົ້າພຽງທໍ່ນີ້ໃນທ່າມກາງສົງວ່າ ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍສະເດັດອຸບັດໃນປຸຣັດຖິມຊົນນະບົດ ພິກຂຸທັງຫຼາຍຊາວປາຈີນເປັນຝ່າຍທຳວາທີ ພິກຂຸທັງຫຼາຍຊາວເມືອງປາເຖີຍຍະເປັນຝ່າຍອະທຳວາທີ"

ພຣະອຸດຕະຣະຮັບຄຳຂອງພວກພິກຂຸວັດຊີບຸດຊາວນະຄອນເວສາລີແລ້ວເຂົ້າໄປຫາທ່ານພຣະເຣວະຕະເຖິງທີ່ພັກ ແລ້ວໄດ້ຂາບຮຽນດັ່ງນີ້ວ່າ "ທ່ານຜູ້ຈະເລີນ ຂໍພຣະເຖຣະໂຜດເວົ້າພຽງທໍ່ນີ້ໃນທ່າມກາງສົງວ່າ "ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍສະເດັດອຸບັດຂຶ້ນໃນປຸຣັດຖິມຊົນນະບົດ ພິກຂຸຊາວປາຈີນເປັນຝ່າຍທຳວາທີ ພິກຂຸຊາວເມືອງປາເຖີຍຍະເປັນຝ່າຍ ອະທຳວາທີ"

ທ່ານພຣະເຣວະຕະຖາມວ່າ "ພິກຂຸ ທ່ານຊັກຊວນເຮົາໃນສິ່ງທີ່ບໍ່ຖືກຕ້ອງຕາມທຳບໍ" ແລ້ວກ່າວປະນາມທ່ານພຣະອຸດຕະຣະ

ຕໍ່ມາ ພວກພິກຂຸວັດຊີບຸດຊາວນະຄອນເວສາລີຖາມທ່ານພຣະອຸດຕະຣະດັ່ງນີ້ວ່າ "ທ່ານອຸດຕະຣະ ພຣະເຣວະຕະເວົ້າແນວໃດແດ່"

ທ່ານພຣະອຸດຕະຣະຕອບວ່າ "ທ່ານທັງຫຼາຍ ພວກເຮົາເຮັດບາບສາແລ້ວ ພຣະເຣວະຕະເວົ້າ ວ່າ ພິກຂຸ ທ່ານຊັກຊວນເຮົາໃນສິ່ງທີ່ບໍ່ຖືກຕ້ອງຕາມທຳບໍ ແລ້ວປະນາມເຮົາ"

ພວກພິກຂຸວັດຊີບຸດຊາວນະຄອນເວສາລີຖາມວ່າ "ທ່ານອຸດຕະຣະ ທ່ານເປັນຜູ້ໃຫຍ່ມີພັນສາ ໘໐ ແລ້ວບໍ່ແມ່ນບໍ"

ທ່ານພຣະອຸດຕະຣະຕອບວ່າ "ແມ່ນແລ້ວທ່ານທັງຫຼາຍ ແຕ່ຂ້ານ້ອຍຖືນິໄສຢູ່ໃນທ່ານພຣະເຣວະຕະຜູ້ເປັນຄູ"

## ເລື່ອງສົງມຸ້ງຈະວິນິດໄສອະທິກອນ

[໔໕໔] ຄັ້ງນັ້ນ ສົງປະສົງຈະວິນິດໄສອະທິກອນນັ້ນ ຈຶ່ງໄດ້ປະຊຸມກັນ ລຳດັບນັ້ນ ທ່ານພຣະເຣວະຕະປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

"ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າພວກເຮົາຈະລະງັບອະທິກອນນີ້ ບາງເທື່ອຈະມີພິກຂຸຜູ້ຖືວ່າອະທິກອນມີມູນຮື້ຟື້ນຂຶ້ນມາໃໝ່ ຖ້າສົງພ້ອມແລ້ວເພິ່ງລະງັບອະທິກອນນີ້ໃນບ່ອນທີ່ອະທິກອນນີ້ເກີດຂຶ້ນ"

ຕໍ່ມາ ພິກຂຸຜູ້ເຖຣະທັງຫຼາຍພາກັນເດີນທາງໄປນະຄອນເວສາລີເພື່ອວິນິດໄສອະທິກອນນັ້ນ

ຄັ້ງນັ້ນ ທ່ານພຣະສັບພະກາມີເປັນພຣະສັງຄະເຖຣະທົ່ວສັງຄະມົນທົນ ມີພັນສາ ໑໒໐ ນັບແຕ່ອຸປະສົມບົດມາ ເປັນສັດທິວິຫາຣິກຂອງທ່ານພຣະອານົນ ພັກຢູ່ໃນນະຄອນເວສາລີ

ຄັ້ງນັ້ນ ທ່ານພຣະເຣວະຕະບອກທ່ານພຣະສຳພູຕະສານະວາສີດັ່ງນີ້ວ່າ "ທ່ານ ຂ້ານ້ອຍຈະໄປວິຫານທີ່ທ່ານພຣະສັບພະກາມີຢູ່ ທ່ານເຂົ້າໄປຫາທ່ານພຣະສັບພະກາມີກ່ອນ ແລ້ວຮຽນຖາມວັດຖຸ ໑໐ ປະການ"

ພຣະສຳພູຕະສານະວາສີຮັບເຖຣະບັນຊາແລ້ວ ຕໍ່ມາ ທ່ານພຣະເຣວະຕະເຂົ້າໄປສູ່ວິຫານທີ່ທ່ານພຣະສັບພະກາມີຢູ່ ເສນາສະນະຂອງທ່ານພຣະສັບພະກາມີເຂົາຈັດກຽມໄວ້ໃນຫ້ອງ ສ່ວນເສນາສະນະຂອງທ່ານພຣະເຣວະຕະເຂົາຈັດກຽມໄວ້ທີ່ໜ້າມຸກຫ້ອງ

ຂະນະນັ້ນ ທ່ານພຣະເຣວະຕະຄິດວ່າ "ພຣະຜູ້ເຖົ້າອົງນີ້ຍັງບໍ່ນອນ" ຈຶ່ງບໍ່ນອນ

ທ່ານພຣະສັບພະກາມີຄິດວ່າ "ພິກຂຸອາຄັນຕຸກະອົງນີ້ເມື່ອຍມາ ແຕ່ຍັງບໍ່ນອນ" ຈຶ່ງບໍ່ເຂົ້ານອນຄືກັນ

ເມື່ອພໍໃກ້ສະຫວ່າງ ທ່ານພຣະສັບພະກາມີລຸກຂຶ້ນ ໄດ້ກ່າວກັບທ່ານພຣະເຣວະຕະດັ່ງນີ້ວ່າ "ທ່ານເຣວະຕະ ເວລານີ້ທ່ານຢູ່ດ້ວຍວິຫານທຳອັນໃດເປັນສ່ວນຫຼາຍ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ເວລານີ້ຂ້ານ້ອຍຢູ່ດ້ວຍເມດຕາວິຫານທຳເປັນ ສ່ວນຫຼາຍ"

ທ່ານພຣະສັບພະກາມີກ່າວວ່າ "ທ່ານເຣວະຕະ ຮູ້ວ່າ ເວລານີ້ທ່ານຢູ່ດ້ວຍວິຫານທຳທີ່ລຽບງ່າຍ ນັ້ນກໍຄືເມດຕາ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ແຕ່ກ່ອນເວລາເປັນຄະລືຫັດ ຂ້ານ້ອຍໄດ້ປະພຶດ ສັ່ງສົມເມດຕາ ດັ່ງນັ້ນເວລານີ້ຂ້ານ້ອຍກໍຍັງຢູ່ດ້ວຍເມດຕາວິຫານທຳເປັນສ່ວນຫຼາຍ ແຕ່ຂ້ານ້ອຍບັນລຸ ອະຣະຫັດຕະຜົນດົນແລ້ວ ທ່ານຜູ້ຈະເລີນ ເວລານີ້ພຣະເຖຣະຢູ່ດ້ວຍວິຫານທຳອັນໃດນໍເປັນສ່ວນ ຫຼາຍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານເຣວະຕະ ເວລານີ້ຂ້ານ້ອຍຢູ່ດ້ວຍສູນຍະຕະວິຫານທຳ ເປັນສ່ວນຫຼາຍ"

ທ່ານພຣະເຣວະຕະກ່າວວ່າ "ທ່ານຜູ້ຈະເລີນ ຮູ້ວ່າ ເວລານີ້ ພຣະເຖຣະຢູ່ດ້ວຍວິຫານທຳຂອງພຣະມະຫາບຸຣຸດ ນັ້ນກໍຄື ສູນຍະຕະສະມາບັດ"

ທ່ານພຣະສັບພະກາມີກ່າວວ່າ "ທ່ານເຣວະຕະ ແຕ່ກ່ອນເວລາເປັນຄະລືຫັດ ຂ້ານ້ອຍໄດ້ປະພຶດ ສັ່ງສົມສູນຍະຕະສະມາບັດ ດັ່ງນັ້ນເວລານີ້ ຂ້ານ້ອຍກໍຍັງຢູ່ດ້ວຍສູນຍະຕະວິຫານທຳເປັນສ່ວນຫຼາຍ ແຕ່ຂ້ານ້ອຍບັນລຸອະຣະຫັດຕະຜົນດົນແລ້ວ"

## ພຣະສຳພູຕະສານະວາສີຖາມວັດຖຸ ໑໐ ປະການ

ພິກຂຸຜູ້ເຖຣະທັງສອງສົນທະນາຄ້າງຢູ່ພຽງທໍ່ນີ້ ລຳດັບນັ້ນ ພຣະສຳພູຕະສານະວາສີມາເຖິງ ຈຶ່ງເຂົ້າໄປຫາທ່ານພຣະສັບພະກາມີເຖິງທີ່ພັກ ບັດແລ້ວອະພິວາດ ນັ່ງທີ່ສົມຄວນໄດ້ ກ່າວກັບທ່ານພຣະສັບພະກາມີດັ່ງນີ້ວ່າ "ພວກພິກຂຸວັດຊີບຸດຊາວນະຄອນເວສາລີສະແດງວັດຖຸ ໑໐ ປະການໃນນະຄອນເວສາລີ ຄື

໑. ສິງຄິໂລນະກັບປະ (ເກັບເກືອໄວ້ໃນເຂົາສັດແລ້ວສັນກັບອາຫານຣົດບໍ່ເຄັມໄດ້)
໒. ທະວັງຄຸລະກັບປະ (ສັນອາຫານເມື່ອເງົາເລີຍເວລາທ່ຽງໄປ ໒ ອົງຄຸລີໄດ້)
໓. ຄາມັນຕະຣະກັບປະ (ເຂົ້າບ້ານບສັນອາຫານທີ່ບໍ່ເປັນເງື່ອນໄດ້)
໔. ອາວາສະກັບປະ (ເຮັດອຸໂປສົດແຍກກັນໃນອາວາດທີ່ມີສີມາດຽວກັນໄດ້)
໕. ອະນຸມະຕິກັບປະ (ເຮັດສັງຄະກຳ ໃນເມື່ອພິກຂຸທັງຫຼາຍຍັງມາບໍ່ພ້ອມ
ແລ້ວຂໍອະນຸມັດພາຍຫຼັງໄດ້)
໖. ອາຈິນນະກັບປະ (ປະພຶດຕາມແບບທີ່ພຣະອຸປັດຊາອາຈານເຄີຍປະພຶດມາໄດ້)
໗. ອະມະຖິຕະກັບປະ (ສັນນົມສົດທີ່ປ່ຽນໄປແລ້ວ ແຕ່ຍັງບໍ່ເປັນນົມສົ້ມໄດ້)
໘. ຊະໂລຄີ (ດື່ມສຸຣາອ່ອນ ໆ ໄດ້)
໙. ອະທະສະກະນິສີທະນະ (ໃຊ້ຜ້າຮອງນັ່ງບໍ່ມີຊາຍໄດ້)
໑໐. ຊາຕະຣູປະຣະຊະຕະ (ຮັບຄຳຮັບເງິນໄດ້)

ທ່ານພຣະສັບພະກາມີຖາມວ່າ "ທ່ານຜູ້ຈະເລີນ ພຣະເຖຣະສຶກສາພຣະທຳແລະວິໄນໄວ້ຫຼວງຫຼາຍຈາກພຣະອຸປັດຊາ ທ່ານຜູ້ຈະເລີນ ເມື່ອພຣະເຖຣະພິຈາລະນາພຣະທຳແລະວິໄນຢູ່ເຫັນແນວໃດວ່າ ພິກຂຸພວກໃດເປັນຝ່າຍທຳວາທີ ຄື ພິກຂຸຊາວປາຈີນຫຼືຊາວ ເມືອງປາເຖີຍຍະ"

ທ່ານພຣະສຳພູຕະສານະວາສີຕອບວ່າ "ທ່ານຜູ້ຈະເລີນ ເມື່ອຂ້ານ້ອຍພິຈາລະນາພຣະທຳແລະ ວິໄນຢູ່ ກໍເຫັນແນວນີ້ວ່າ ພິກຂຸຊາວປາຈີນເປັນຝ່າຍອະທຳວາທີ ພິກຂຸຊາວເມືອງປາເຖີຍຍະ ເປັນຝ່າຍທຳວາທີ ແຕ່ຍັງຊີ້ຂາດບໍ່ໄດ້ ສົງມັກຈະແຕ່ງຕັ້ງຂ້ານ້ອຍເຂົ້າວິນິດໄສອະທິກອນນີ້ແດ່"

ທ່ານພຣະສັບພະກາມີກ່າວວ່າ "ທ່ານຜູ້ຈະເລີນ ເມື່ອຂ້ານ້ອຍພິຈາລະນາພຣະທຳແລະວິໄນຢູ່ກໍເຫັນແນວນັ້ນວ່າ ພິກຂຸຊາວປາຈີນເປັນຝ່າຍອະທຳວາທີ ພິກຂຸຊາວເມືອງປາເຖີຍຍະເປັນຝ່າຍທຳວາທີ ແຕ່ຍັງຊີ້ຂາດບໍ່ໄດ້ ສົງມັກຈະແຕ່ງຕັ້ງຜົມເຂົ້າວິນິດໄສອະທິກອນນີ້ແດ່"

## ພຣະເຣວະຕະປະກາດລະງັບອະທິກອນດ້ວຍອຸບພາຫິກະວິທີ[๑]

[໔໕໖] ຄັ້ງນັ້ນ ສົງປະສົງຈະວິນິດໄສອະທິກອນນີ້ ຈຶ່ງປະຊຸມກັນ ແລະເມື່ອກຳລັງ ວິນິດໄສອະທິກອນນັ້ນຢູ່ ມີສຽງຟົດຟື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດ ແລະບໍ່ມີໃຜຮູ້ຄວາມໝາຍ ແຫ່ງຄຳເວົ້າທີ່ກ່າວແລ້ວໄດ້

ລຳດັບນັ້ນ ທ່ານພຣະເຣວະຕະຈຶ່ງປະກາດໃຫ້ສົງຮູ້ວ່າ

## ຍັດຕິກຳມະວາຈາ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພວກເຮົາກຳລັງວິນິດໄສອະທິກອນນີ້ ມີສຽງຟົດຟື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດ ແລະບໍ່ມີໃຜຮູ້ຄວາມໝາຍແຫ່ງຄຳເວົ້າທີ່ກ່າວແລ້ວໄດ້ແມ່ນແຕ່ເລື່ອງດຽວ ຖ້າສົງພ້ອມແລ້ວເພິ່ງລະງັບອະທິກອນເລື້ອງນີ້ດ້ວຍອຸບພາຫິກະວິທີ

ສົງຈຶ່ງຄັດເລືອກພິກຂຸຊາວປາຈີນ ໔ ອົງ ຄື ທ່ານພຣະສັບພະກາມີ ທ່ານພຣະສາລະຫະ ທ່ານພຣະອຸດຊະໂສພິຕະ ແລະທ່ານພຣະວາສະພະຄາມິກະ ແລະພິກຂຸຊາວເມືອງປາເຖີຍຍະ ອີກ ໔ ອົງ ຄື ທ່ານພຣະເຣວະຕະ ທ່ານພຣະສຳພູຕະສານະວາສີ ທ່ານພຣະຍະສະກາກັນຖະກະບຸດ ແລະທ່ານພຣະສຸມະນະ

ຕໍ່ມາ ທ່ານພຣະເຣວະຕະປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ເມື່ອພວກເຮົາກຳລັງວິນິດໄສອະທິກອນນີ້ຢູ່ມີສຽງຟົດຟື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດແລະບໍ່ມີໃຜຮູ້ຄວາມໝາຍແຫ່ງຄຳເວົ້າທີ່ກ່າວແລ້ວນັ້ນ ຖ້າສົງພ້ອມກັນແລ້ວ ເພິ່ງແຕ່ງຕັ້ງພິກຂຸຊາວປາຈີນ ໔ ອົງ ພິກຂຸຊາວເມືອງປາເຖີຍຍະອີກ ໔ ອົງ ເພື່ອລະງັບອະທິກອນນີ້ ດ້ວຍອຸບພາຫິກະວິທີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພວກເຮົາກຳລັງວິນິດໄສອະທິກອນນີ້ຢູ່ມີສຽງຟົດຟື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດ ແລະບໍ່ມີໃຜຮູ້ຄວາມໝາຍແຫ່ງຄຳເວົ້າທີ່ກ່າວແລ້ວນັ້ນ ສົງແຕ່ງຕັ້ງພິກຂຸຊາວປາຈີນ ໔ ອົງ ພິກຂຸຊາວເມືອງປາເຖີຍຍະອີກ ໔ ອົງ ເພື່ອລະງັບອະທິກອນນີ້ດ້ວຍອຸບພາຫິກະວິທີ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊາວປາຈີນ ໔ ອົງ ພິກຂຸຊາວເມືອງປາເຖີຍຍະອີກ ໔ ອົງ ເພື່ອລະງັບອະທິກອນນີ້ດ້ວຍອຸບພາຫິກະວິທີ ທ່ານອົງນັ້ນ ເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊາວປາຈີນ ໔ ອົງ ພິກຂຸຊາວເມືອງປາເຖີຍຍະອີກ ໔ ອົງ ສົງແຕ່ງຕັ້ງເພື່ອ ລະງັບອະທິກອນດ້ວຍອຸບພາຫິກະວິທີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພຣະອະຊິຕະ

ສະໄໝນັ້ນ ພິກຂຸອະຊິຕະ ມີພັນສາ ໑໐ ເປັນຜູ້ຍົກປາຕິໂມກຂຶ້ນສະແດງແກ່ສົງ ຕໍ່ມາສົງແຕ່ງຕັ້ງທ່ານພຣະອະຊິຕະໃຫ້ເປັນຜູ້ປູອາສະນະເພື່ອພິກຂຸຜູ້ເຖຣະທັງຫຼາຍ

ພິກຂຸຜູ້ເຖຣະທັງຫຼາຍຄິດວ່າ "ພວກເຮົາຈະລະງັບອະທິກອນນີ້ບ່ອນໃດນໍ" ລຳດັບນັ້ນພິກຂຸຜູ້ເຖຣະທັງຫຼາຍໄດ້ເປີກສາກັນຕໍ່ໄປດັ່ງນີ້ວ່າ "ວາລິກາຣາມເປັນທີ່ໜ້າອອນຊອນ ງຽບສະງົບບໍ່ອຶກກະທຶກ ພວກເຮົາມັກຈະລະງັບອະທິກອນນີ້ທີ່ວາລິກາຣາມ"

[໔໕໗] ຄັ້ງນັ້ນ ພິກຂຸຜູ້ເຖຣະທັງຫຼາຍ ປະສົງຈະວິນິດໄສອະທິກອນນັ້ນພາກັນເດີນທາງໄປວາລິກາຣາມ

ລຳດັບນັ້ນ ທ່ານພຣະເຣວະຕະປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ຍັດຕິກຳມະວາຈາ

"ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ຂ້າພະເຈົ້າເພິ່ງຖາມພຣະວິໄນກັບທ່ານພຣະສັບພະກາມີ"

ທ່ານພຣະສັບພະກາມີຈຶ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ຍັດຕິກຳມະວາຈາ

"ທ່ານທັງຫຼາຍ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າອັນທ່ານພຣະເຣວະຕະຖາມພຣະວິໄນ ຈະໄດ້ຕອບຕໍ່ໄປ"

## ຄຳຖາມ-ຄຳຕອບກ່ຽວກັບວັດຖຸ ໑໐ ປະການ

ລຳດັບນັ້ນ ທ່ານພຣະເຣວະຕະຖາມທ່ານພຣະສັບພະກາມີວ່າ "ທ່ານຜູ້ຈະເລີນ ສິງຄິໂລນະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ສິງຄິໂລນະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ການເກັບເກືອໄວ້ໃນເຂົາສັດຍ້ອນຕັ້ງໃຈວ່າຈະ ສັນກັບອາຫານຣົດບໍ່ເຄັມ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ນະຄອນສາວັດຖີ ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງປາຈິດຕີ ຍ້ອນສະສົມໂພຊະນະ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໑ ນີ້ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໑ ນີ້" (໑)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ທະວັງຄຸນະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ທະວັງຄຸນະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ການສັນໂພຊະນະໃນເວລາວິການເມື່ອເງົາ(ຂອງດວງອາທິດ)ເລີຍ(ເວລາທ່ຽງ)ໄປ ໘ ອົງຄຸລີ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ນະຄອນຣາດຊະຄື ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງປາຈິດຕີ ຍ້ອນສັນໂພຊະນະໃນເວລາວິການ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໔ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໔ ນີ້" (໔)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ຄາມັນຕະຣະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ຄາມັນຕະຣະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ພິກຂຸສັນສຳເລັດແລ້ວ ຫ້າມພັດຕາຫານ ແລ້ວຄິດວ່າ ຈະເຂົ້າບໍລິເວນໝູ່ບ້ານ ໃນບັດນີ້ ແລ້ວສັນໂພຊະນະທີ່ບໍ່ເປັນເງື່ອນ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ຢູ່ນະຄອນສາວັດຖີ ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງປາຈິດຕີ ຍ້ອນສັນໂພຊະນະທີ່ບໍ່ເປັນເງື່ອນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໓ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໓ ນີ້" (໓)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ອາວາສະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ອາວາສະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ອາວາດຫຼາຍແຫ່ງທີ່ມີສີມາດຽວກັນຈະແຍກ ກັນເຮັດອຸໂປສົດ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ນະຄອນຣາດຊະຄື ຜາກົດໃນອຸໂປສົດສັງຍຸດ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງອາບັດທຸກກົດ ຍ້ອນລ່ວງພຣະວິໄນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໕ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໕ ນີ້" (໕)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ອະນຸມະຕິກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ອະນຸມະຕິກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ສົງແບ່ງເປັນພວກກັນເຮັດກຳດ້ວຍຕັ້ງໃຈວ່າ ຈະໃຫ້ຜູ້ມາແລ້ວອະນຸມັດ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ຜາກົດໃນເລື້ອງພຣະວິໄນ ໃນຈຳເປີຍຍະຂັນທະກະ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງອາບັດທຸກກົດ ຍ້ອນລະເມີດພຣະວິໄນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໕ ນີ້ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໕ ນີ້" (໕)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ອາຈິນນະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ອາຈິນນະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ການປະພຶດລ່ວງເກີນດ້ວຍເຂົ້າໃຈວ່າ ສິ່ງນີ້ ພຣະອຸປັດຊາຂອງເຮົາປະພຶດມາ ສິ່ງນີ້ພຣະອາຈານຂອງເຮົາປະພຶດມາ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ສິ່ງທີ່ພຣະອຸປັດຊາອາຈານປະພຶດມາບາງຢ່າງຄວນ ບາງຢ່າງບໍ່ຄວນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໖ ນີ້ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໖ ນີ້" (໖)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ອະມະຖິຕະກັບປະຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ອະມະຖິຕະກັບປະນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ນົມສົດທີ່ລະຄວາມເປັນນົມສົດແລ້ວແຕ່ຍັງບໍ່ເຖິງວ່າເປັນນົມສົ້ມ ພິກຂຸສັນສຳເລັດແລ້ວ ຫ້າມພັດຕາຫານແລ້ວ ຈະດື່ມນົມສົດທີ່ບໍ່ເປັນເງື່ອນຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ຢູ່ນະຄອນສາວັດຖີ ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງປາຈິດຕີ ຍ້ອນສັນໂພຊະນະທີ່ບໍ່ເປັນເງື່ອນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ๗ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທໍາ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ๗ ນີ້" (๗)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ການດື່ມຊະໂລຄີ ຄວນບໍ"

ທ່ານພຣະສັບພະກາມີຍ້ອນຖາມວ່າ "ທ່ານ ຊະໂລຄີນັ້ນຄືອັນໃດ"

ທ່ານພຣະເຣວະຕະຕອບວ່າ "ທ່ານຜູ້ຈະເລີນ ການດື່ມສຸຣາຊະນິດອ່ອນທີ່ຍັງບໍ່ປ່ຽນເປັນນ້ຳເມົາ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ຢູ່ເມືອງໂກສໍາພີ ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງປາຈິດຕີ ຍ້ອນດື່ມສຸຣາແລະເມໄຣ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ๘ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທໍາ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ๘ ນີ້" (๘)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ຜ້າປູນັ່ງບໍ່ມີຊາຍ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ຢູ່ນະຄອນສາວັດຖີ ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງອາບັດປາຈິດຕີ ທີ່ຊື່ວ່າເສທະນະກະ"[๑]

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ๙ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທໍາ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ๙ ນີ້" (๙)

ທ່ານພຣະເຣວະຕະຖາມວ່າ "ທ່ານຜູ້ຈະເລີນ ຄໍາແລະເງິນ ຄວນບໍ"

ທ່ານພຣະສັບພະກາມີຕອບວ່າ "ທ່ານ ບໍ່ຄວນ"

ທ່ານພຣະເຣວະຕະຖາມວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໄວ້ຢູ່ໃສ"

ທ່ານພຣະສັບພະກາມີຕອບວ່າ "ນະຄອນຣາດຊະຄື ຜາກົດໃນສຸດຕະວິພັງ"

ທ່ານພຣະເຣວະຕະຖາມວ່າ "ຕ້ອງອາບັດອັນໃດ"

ທ່ານພຣະສັບພະກາມີຕອບວ່າ "ຕ້ອງອາບັດປາຈິດຕີ ຍ້ອນຄໍາແລະເງິນ"

ທ່ານພຣະເຣວະຕະປະກາດວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເລື້ອງທີ ໑໐ ນີ້ ສົງວິນິດໄສແລ້ວວ່າ ເລື້ອງນີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຂ້ານ້ອຍຂໍຈັບສະຫຼາກທີ ໑໐ ນີ້ (໑໐)

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງວິນິດໄສວັດຖຸທັງ ໑໐ ປະການນີ້ແລ້ວວ່າ ເລື້ອງເຫຼົ່ານີ້ນອກທຳ ນອກວິໄນ ຫຼີບສັດຖຸສາດ ຍ້ອນເຫດແນວນີ້

[໔໕໗] ທ່ານພຣະສັບພະກາມີກ່າວຕໍ່ໄປວ່າ "ທ່ານທັງຫຼາຍ ສົງວິນິດໄສອະທິກອນ ນັ້ນ ສຳເລັດຮຽບຮ້ອຍດີແລ້ວ ອັນໜຶ່ງ ທ່ານເພິ່ງຖາມເຖິງວັດຖຸທັງ ໑໐ ປະການນີ້ກັບຂ້າພະເຈົ້າ ທ່າມກາງສົງ ເພື່ອໃຫ້ພິກຂຸເຫຼົ່ານັ້ນຍອມຮັບທົ່ວກັນ"

ຕໍ່ມາ ທ່ານພຣະເຣວະຕະໄດ້ສອບຖາມວັດຖຸ ໑໐ ປະການນີ້ກັບທ່ານພຣະສັບພະກາມີ ໃນ ທ່າມກາງສົງ ທ່ານພຣະສັບພະກາມີເມື່ອຖືກຖາມໄດ້ຕອບແລ້ວ

ໃນເວລາສັງຄາຍະນາພຣະວິໄນຄັ້ງນີ້ ມີພິກຂຸ ៧໐໐ ອົງພໍດີ ດັ່ງນັ້ນ ບັນດິດຈຶ່ງຮຽກ ການສັງຄາຍະນາພຣະວິໄນຄັ້ງນີ້ວ່າ "ສັດຕະສະຕິກະ"

**ສັດຕະສະຕິກະຂັນທະກະທີ ໑໘ ຈົບ**

## ໃນຂັນທະກະນີ້ມີ ໘໕ ເລື້ອງ

## ລວມເລື້ອງທີ່ມີໃນສັດຕະສະຕິກະຂັນທະກະ

ພວກພິກຂຸວັດຊີບຸດສະແດງວັດຖຸ ໑໐ ປະການ
ບັນຈຸນ້ຳໃຫ້ເຕັມຖາດສຳຣິດວາງໄວ້ໃນໂຮງອຸໂປສົດ
ແນະນຳໃຫ້ອຸປາສົກອຸປາສິກາຖວາຍຣູປິຍະ
ເມື່ອພຣະຍະສະກາກັນຖະກະບຸດບໍ່ເຫັນດ້ວຍກໍລົງປະຕິສາຣະນີຍະກຳ
ທ່ານພຣະຍະສະກາກັນຖະກະບຸດພ້ອມດ້ວຍອະນຸທູດເຂົ້າໄປນະຄອນເວສາລີ

ທ່ານພຣະຍະສະກາກັນຖະກະບຸດກ່າວວ່າ
ພຣະຜູ້ມີພຣະພາກເຈົ້າຕັດເຄື່ອງມົວໝອງ ໔ ຢ່າງຂອງສະມະນະພາມ
ປຽບຕືເຄື່ອງມົວໝອງຂອງດວງຈັນດວງອາທິດ
ສະມະນະພາມຮັບຄຳແລະເງີນຍ່ອມເສົ້າໝອງ
ຕໍ່ມາ ທ່ານພຣະຍະສະກາກັນຖະກະບຸດໄປຜາກົດໂຕທີ່ນະຄອນໂກສຳພີ

ພິກຂຸຊາວເມືອງປາເຖີຍຍະ ຊາວອະວັນຕີທັກຂິນາບົດເປີກສາກັນ ສະແຫວງຫາພັກພວກ ໃນຂະນະທີ່ທ່ານພຣະເຣວະຕະພັກຢູ່ທີ່ເມືອງໂສເຣີຍຍະ ຕໍ່ໄປເມືອງສັງກັດສະ ເມືອງກັນນະກຸດຊະ ເມືອງອຸທຸມພຣະ ສະຫະຊາຕີນະຄອນ

ທ່ານພຣະສຳພູຕະສານະວາສີບອກທ່ານພຣະຍະສະກາກັນຖະກະບຸດ ໃຫ້ໄປຖາມບັນຫາກັບທ່ານພຣະເຣວະຕະໃນຂະນະທີ່ທ່ານເຊີນພິກຂຸ ອັນເຕວາສິກໃຫ້ສູດສະຣະພັນຍະຈົບ

ພວກພິກຂຸວັດຊີບຸດຊາວນະຄອນເວສາລີໄດ້ຮູ້ຂ່າວວ່າ ພຣະຍະສະກາກັນຖະກະບຸດຈະວິນິດໄສອະທິກອນ ຈຶ່ງສະແຫວງຫາພັກພວກ ຈັດກຽມສະມະນະບໍຣິຂານມີບາດເປັນຕົ້ນໂດຍສານເຮືອໄປສະຫະຊາຕີນະຄອນ

ພຣະອຸດຕະຣະຮັບຄຳຂອງພວກພິກຂຸວັດຊີບຸດ ຖືກທ່ານພຣະເຣວະຕະຕຳໜິຮ້າຍແຮງ ສົງມຸ້ງຈະວິນິດໄສອະທິກອນໄປນະຄອນເວສາລີ ໃນຂະນະທີ່ທ່ານພຣະເຣວະຕະຕອບທ່ານພຣະສັບພະກາມີວ່າ ໂຕທ່ານເອງຢູ່ດ້ວຍເມດຕາວິຫານທຳ ເມື່ອຈະວິນິດໄສອະທິກອນ ໄດ້ປະກາດໃຫ້ສົງຮູ້ທົ່ວກັນວ່າ ຈະລະງັບອະທິກອນດ້ວຍອຸບພາຫິກະວິທີ

**ສັດຕະສະຕິກະຂັນທະກະ ຈົບ**

**ຈູລະວັກ ຈົບ**